ປື້ມແບບຮຽນ ພາສາເກົາຫຼີ ທີ່ໄດ້ມາດຕະຖານ

# EPS-TOPIK



ປື້ມຕຳລາຮຽນດ້ວຍຕົນເອງ

**ສຳລັບຜູ້ທີ່ໃຊ້ພາສາລາວ**

## 라오스인을 위한

# 한국어 2

## ພາສາເກົາຫຼີ 2




HRDK 한국산업인력공단

ປື້ມແບບຮຽນ ພາສາເກົາຫຼີ ທີ່ໄດ້ມາດຕະຖານ

EPS-TOPIK



ປື້ມຕໍາລາຮຽນດ້ວຍຕົນເອງ

ສໍາລັບຜູ້ທີ່ໃຊ້ພາສາລາວ

라오스인을 위한

# 한국어 2

ພາສາເກົາຫຼີ 2






## 교재 길잡이 ການແນະນຳປຶ້ມຕຳລາ

이 교재는 고용허가제 한국어능력시험을 대비하는 데 도움을 주기 위해 집필된 『한국어 표준교재 개정판』을 집에서 스스로 공부할 수 있도록 개발한 책입니다. 특히 라오스 사람들이 한국어를 쉽고 재미있게 배울 수 있도록 현지의 언어 및 사회·문화적 환경에 맞추어 개발한 자가학습 교재입니다. 이러한 이유로 교재의 앞부분에는 한국어와 라오어의 차이점을 간략히 정리하여 제시하였습니다.

ປຶ້ມແບບຮຽນເຫຼັ້ມນີ້ ແມ່ນຖືກພັດທະນາຂຶ້ນມາ ເພື່ອຊ່ວຍໃນການກະກຽມການສອບເສັງ ວັດລະດັບພາສາເກົາຫຼີ ເພື່ອການຂໍອະນຸຍາດການຈ້າງງານ ປຶ້ມແບບຮຽນພາສາເກົາຫຼີ ມາດຕະຖານສະບັບປັບປຸງ ສາມາດຮຽນດ້ວຍຕົນເອງໄດ້. ປຶ້ມແບບຮຽນເຫຼັ້ມນີ້ເປັນປຶ້ມສຳລັບການຮຽນດ້ວຍຕົນເອງ ໂດຍອີງໃສ່ ພາສາທ້ອງຖິ່ນ ແລະ ສະພາບວັດທະນະທຳ-ສັງຄົມສຳລັບຄົນລາວທັງຫຼາຍ.

이 교재는 현지에 한국어 교육기관과 한국어 교사가 충분하지 않다는 점을 감안하여 참고서의 역할을 하는 친절한 교재가 되도록 애를 썼습니다. 또한 한국어를 연습할 기회가 많지 않은 현지 환경을 고려하여 익힘책의 기능을 하도록 하였으며, 나아가 EPS-TOPIK을 준비할 수 있도록 구성하였습니다. 이렇게 구성된 교재는 가상의 교사를 설정하여 학습 안내를 하도록 하였습니다. 특히 '한글 익히기' 단원과 과마다 수록되어 있는 문법 항목에 대한 설명은 라오어로 녹음을 하여 제시함으로써 이해를 돕고자 하였습니다. 부록에는 어휘 목록 및 동사와 형용사의 활용표를 제시하여 편리함을 더하고자 하였습니다.

ປຶ້ມຕຳລາດັ່ງກ່າວນີ້ ແມ່ນຖືກອອກແບບ ເພື່ອໃຊ້ເປັນເອກະສານອ້າງອີງສຳລັບ ນັກຮຽນທີ່ຢູ່ປະເທດທີ່ຍັງບໍ່ທັນ ມີສະຖາບັນການສຶກສາ ແລະ ອາຈານສອນພາສາເກົາຫຼີທີ່ພຽງພໍ. ອີກປະການໜຶ່ງ ປຶ້ມຕຳລານີ້ຍັງຖືກອອກ ແບບສຳລັບສະພາບແວດລ້ອມ ທີ່ບໍ່ມີໂອກາດຈະເຝິກຊ້ອມພາສາເກົາຫຼີ. ພ້ອມຍັງປະກອບມີພາກ ທີ່ເປັນການກະກຽມ ໃຫ້ແກ່ການສອບເສັງ EPS-TOPIK ນຳ. ໃນໂຄງສ້າງຂອງປຶ້ມແມ່ນໄດ້ມີການອອກແບບ ຄືກັບມີອາຈານແທ້ ແນະນຳໃນການຮຽນແທ້. ໂດຍສະເພາະ ໃນພາກຂອງ 'ຮຽນຕົວອັກສອນເກົາຫຼີ'.




17 휴가 때 제주도에 다녀올 거예요

대화 1

리한 씨는 제주도에 가 봤어요?

네, 가 봤어요.

제주도가 어땠어요? 좋았어요?

네, 정말 좋았어요.

특히 바다가 너무 아름다웠어요.

그래요? 저도 제주도에 가 보고 싶어요.

1. 리한 씨는 어디에 가 봤어요?

2. 제주도가 어때요?

## 01 대화 ບົດສົນທະນາ

본문의 내용을 쉽게 이해할 수 있도록 대화 앞에 대화의 상황을 설명하는 글을 제시하였습니다. 본문은 라오어로 번역하여 제시하였습니다. 학습자들이 본문을 이해하는 데 도움을 주기 위해 본문에 사용된 어휘 및 표현 중 설명이 필요하다고 생각되는 것을 골라 예문과 함께 라오어로 제시하였습니다. 본문 학습 후에는 스스로 본문에 대한 이해 정도를 측정할 수 있도록 내용 확인 문제를 제시하였습니다.

ເພື່ອເຮັດໃຫ້ຜູ້ອ່ານ ສາມາດເຂົ້າໃຈເນື້ອໃນ ຂອງບົດສົນທະນາງ່າຍຂຶ້ນ, ພວກເຮົາໄດ້ເພີ່ມຂໍ້ຄວາມທີ່ອະທິບາຍເຫດການ ທີ່ມີບົດສົນທະນານັ້ນໆຂຶ້ນ ແລະ ເພື່ອເຮັດໃຫ້ຜູ້ອ່ານ ສາມາດເຂົ້າໃຈເນື້ອໃນຂອງຂໍ້ຄວາມໃນບົດສົນທະນານັ້ນງ່າຍຂຶ້ນ, ພວກເຮົາໄດ້ເລືອກບາງຄຳສັບ ແລະ ສຳນວນທີ່ພວກເຮົາຄິດວ່າມີຄວາມສຳຄັນຢູ່ໃນບົດເລື່ອງນັ້ນ ເພື່ອອະທິບາຍ ແລະ ສະແດງໃຫ້ເຫັນເປັນພາສາລາວ; ພ້ອມດ້ວຍ ການຍົກຕົວຢ່າງປະກອບ. ຫຼັງຈາກອ່ານຂໍ້ຄວາມຈາກບົດສົນທະນາ, ຈະມີຄຳຖາມໃຫ້ນັກຮຽນ ເພື່ອເປັນການຢືນຢັນຕື່ມ ກ່ຽວກັບສິ່ງທີ່ໄດ້ຮຽນມາ ແລະ ຍັງເຮັດໃຫ້ນັກຮຽນສາມາດກວດ ສອບລະດັບຄວາມເຂົ້າໃຈ ເນື້ອໃນບົດສົນທະນາໄດ້ ດ້ວຍຕົນເອງນຳອີກ.

## 02 어휘 ຄຳສັບ

교재에 제시된 어휘를 학습을 염두에 두고 어휘의 특성(유사한 의미군, 유의어, 반의어 등)을 고려하여 재배열한 후에 라오어와 함께 제시하였습니다. 교재에 수록된 어휘 연습 문제 외에도 여백이 허락할 경우 추가로 문제를 실었습니다.

ຄຳສັບທີ່ໃຊ້ໃນປຶ້ມຕຳລາເຫຼັ້ມນີ້ ແມ່ນໄດ້ຮັບການຮຽບຮຽງຄືນໃໝ່ໂດຍອີງໃສ່ລັກສະນະພິເສດຂອງຄຳສັບ (ຄວາມໝາຍທີ່ຄ້າຍຄືກັນ, ຄຳສັບ ທີ່ຄ້າຍຄືກັນ, ຄຳສັບກົງກັນຂ້າມກັນ ແລະ ອື່ນໆ) ໂດຍມີການຄິດພິຈາລະນາ ຫຼັງຈາກນັ້ນ ກໍມີພາສາລາວຢູ່ນຳ. ນອກຈາກນັ້ນຍັງມີບົດເຝິກຫັດກ່ຽວກັບຄຳສັບ ແລະ ການສ້າງຄຳຖາມກ່ຽວກັບກໍລະນີຕ່າງໆ.





## 03 문법 ໄວຍາກອນ

문법은 표로 정리하여 제시함으로써 이해를 돕고자 하였습니다. 자가 학습의 능률을 높일 수 있도록 한국어와 라오어의 대조적 정보를 제공하였습니다. 목표 문법 항목을 예문과 함께 제시한 후 기 학습한 유사 문법 항목과 비교함으로써 두 문법 항목 간의 차이점을 이해하기 쉽도록 하였습니다. 또한 본 교재에는 같은 지면에 제시되어 있는 어휘와 문법 연습 문제를 해당 항목 후 바로 연습할 수 있도록 배치하였고 연습 문제를 추가로 구성하여 학습 내용을 내재화할 수 있도록 하였습니다.

ສຳລັບພາກຂອງໄວຍາກອນ ແມ່ນໄດ້ມີການສະເໜີ ເປັນຮູບແບບຂອງຕາຕະລາງ ເພື່ອເຮັດໃຫ້ມີຄວາມເຂົ້າໃຈງ່າຍຂຶ້ນ. ເພື່ອເປັນການເພີ່ມປະສິດທິພາບ ໃນການຮຽນດ້ວຍຕົນເອງໄດ້ມີການສະໜອງຂໍ້ມູນ ເພື່ອປຽບທຽບລະຫວ່າງພາສາລາວ ແລະ ພາສາເກົາຫຼີ. ໃນພາກຂອງໄວຍາກອນ ແມ່ນຈະມີຕົວຢ່າງ ປະກອບສະເໜີ ພ້ອມທັງມີການນຳໃຊ້ໄວຍາກອນ ທີ່ກ່ຽວຂ້ອງກັນ ໃນບົດຜ່ານມາໄປດ້ວຍກັນ ເພື່ອເຮັດໃຫ້ມີຄວາມສາມາດຈື່ຈຳ ແລະ ຈຳແນກຄວາມແຕກຕ່າງງ່າຍຂຶ້ນ. ອີກອັນໜຶ່ງ ໃນປຶ້ມແບບຮຽນນີ້ ຍັງມີພາກເຝິກຫັດ ເຊິ່ງຈະປະກອບມີບັນດາຄຳສັບ ແລະ ໄວຍາກອນອັນດຽວກັບທີ່ຮຽນຜ່ານມາ ໃຫ້ເຝິກຊ້ອມໃນພາກທັດມາ ເຊິ່ງເນື້ອໃນບົດເຝິກຫັດ ກໍແມ່ນມີຄວາມກ່ຽວພັນກັບເນື້ອໃນບົດຮຽນທີ່ຜ່ານມາ.

## 04 활동 ກິດຈະກຳ

자가 학습의 능률을 높일 수 있도록 라오어로 번역하여 제시하였고, 활동에 대한 〈내용 확인〉을 통해 스스로 학습 성취 여부를 판단할 수 있도록 하였습니다. 또한 여백이 허락할 경우 〈퀴즈〉를 통해 학습 동기를 유발하고 학습의 흥미를 유지할 수 있도록 하였습니다.

ເພື່ອເປັນການເພີ່ມປະສິດຕິພາບ ຂອງການຮຽນດ້ວຍຕົນເອງ, ພວກເຮົາໄດ້ແປຄຳສັບ ແລະ ປະໂຫຍກພາສາເກົາຫຼີ ໃຫ້ເປັນພາສາລາວ ເພື່ອເຮັດໃຫ້ນັກຮຽນທຸກຄົນ ສາມາດປະເມີນຜົນສຳເລັດຈາກການຮຽນດ້ວຍຕົນເອງ ໂດຍຜ່ານພາກກິດຈະກຳ <ພາກກວດສອບເນື້ອໃນ>. ນອກຈາກ ນີ້, ຖ້າຫາກວ່າ ມີຊ່ອງຫວ່າງ ພວກເຮົາ ກໍເພີ່ມພາກ <ບົດເຝິກຫັດເພີ່ມເຕີມ> ໄປນຳ ເພື່ອເປັນການເສີມສ້າງການຮຽນຮູ້ ແລະ ຍັງເປັນການດຶງດູດຄວາມສົນໃຈຂອງນັກຮຽນ.








## 05 정보 · 문화 ຂໍ້ມູນທົ່ວໄປ, ວັດທະນາທຳ

정확한 전달을 위해 정보 및 문화 내용을 라오어로 번역하여 제시하였습니다. 또한 〈내용 확인〉 문제를 통해 스스로 내용 이해 여부를 판단할 수 있도록 하였습니다.

ເພື່ອຖ່າຍທອດຄວາມຮູ້-ຂໍ້ມູນຂ່າວສານ ທີ່ຖືກຕ້ອງ ແລະ ໄດ້ນຳສະເໜີເນື້ອໃນ ຂອງວັດທະນະທຳ ເປັນພາສາລາວ, ອີກຢ່າງໜຶ່ງ ເພື່ອໃຫ້ສາມາດຈຳແນກ ແລະ ເຂົ້າໃຈກ່ຽວກັບ ເນື້ອໃນຄຳຖາມ ໄດ້ໃນພາກ <ກວດສອບເນື້ອໃນ> ດ້ວຍຕົນເອງໄດ້.

## 06 EPS-TOPIK



읽기와 듣기에서 다루고 있는 주제에 대해 간략히 라오어로 설명해 줌으로써 한국어 수준이 좀 부족하더라도 한국어를 혼자서 공부하는 데 어려움이 없도록 하고자 하였습니다. 듣기 대본을 한국어와 라오어로 제시해 줌은 물론 정답도 함께 제시해 줌으로써 학습의 효율성을 높이고자 하였습니다. 비슷한 유형의 다른 문제를 연습할 수 있도록 〈확장 연습〉을 제공해 줌으로써 학습 효과를 극대화하고자 하였습니다.

ໃນພາກອ່ານ ແລະ ພາກຟັງ ແມ່ນໄດ້ແຍກອອກຕ່າງຫາກ ພ້ອມທັງໃນແຕ່ ລະຫົວຂໍ້ແນະນຳ ແມ່ນຈະມີພາສາລາວອະທິບາຍໃຫ້ ສະນັ້ນ ຜູ້ທີ່ຄວາມສາມາດ ຂອງພາສາເກົາຫຼີ ບໍ່ທັນສູງ ກໍສາມາດຮຽນດ້ວຍຕົນເອງ ໂດຍທີ່ບໍ່ຍາກ. ເພື່ອເປັນການເພີ່ມປະສິດຕິພາບໃນພາກຟັງ ໄດ້ມີເນື້ອໃນບົດຟັງທັງພາສາເກົາຫຼີ ແລະ ແປເປັນພາສາລາວ ພ້ອມທັງສະແດງໃຫ້ເຫັນຄຳຕອບທີ່ຖືກຕ້ອງ. ເພື່ອເພີ່ມປະສິດທິພາບໃນການຮຽນຂຶ້ນອີກ ຍັງປະກອບມີພາກເຝິກຫັດເພີ່ມເຕີມ ເພື່ອເຮັດໃຫ້ຜູ້ຮຽນໄດ້ມີໂອກາດຫຼາຍຂຶ້ນໃນການ ເຝິກຊ້ອມກ່ຽວກັບບັນຫາ ແລະ ເນື້ອໃນບົດຮຽນທີ່ໄດ້ສະເໜີຜ່ານມານັ້ນ.

## 07 발음 ການອອກສຽງ

교사가 없는 상황에서 발음 연습을 하는 데에는 한계가 있습니다. 따라서 혼자 듣고 따라 읽으면서 발음 연습을 할 수 있도록 하였습니다. 모음, 자음의 발음은 물론 한국어 음운 현상에 대해서도 다루었으며 모두 31개의 항목으로 나누어 구성하였습니다.

ການເຝິກການອອກສຽງ ໂດຍທີ່ບໍ່ມີອາຈານ ຫຼື ຜູ້ແນະນຳຢູ່ນຳນັ້ນ ຖືວ່າຍັງມີຂໍ້ຈຳກັດ. ສະນັ້ນ, ພວກເຮົາໄດ້ເຮັດໃຫ້ນັກຮຽນຟັງ ແລະ ອ່ານຕາມ ເພື່ອເປັນການເຝິກການອອກສຽງ. ແນ່ນອນວ່າມີການອອກສຽງ ທັງພະຍັນຊະນະ ແລະ ສະຫຼະ ທັງໝົດ 31 ຕົວ ພ້ອມທັງການອອກສຽງໃນພາສາເກົາຫຼີອື່ນໆ ທີ່ມີໃນປຶ້ມເຫຼັ້ມນີ້ນຳ.





## 08 유용한 표현 ສຳນວນທີ່ສຳຄັນ

한국 사람들이 일상생활에서 자주 사용하는 유용한 표현을 전형적인 상황 맥락에서의 대화문을 통해 번역문과 함께 곳곳에 제시하였습니다.

ບົດສົນທະນາ ທີ່ເປັນເປັນພາສາລາວ ແມ່ນໄດ້ນຳສະເໜີສະຖານທີ່ຕ່າງໆ ເຊິ່ງມີຄວາມສອດຄ່ອງ, ມີປະໂຫຍດ ແລະ ເໝາະສົມ, ຈະເປັນຄຳສັບທີ່ຄົນເກົາຫຼີ ມັກໃຊ້ເວົ້າໃນການດຳລົງຊີວິດຕົວຈິງ ຫຼື ໃນຊີ ວິດປະຈຳວັນ.



## 듣기 파일 안내
ຄຳແນະນຳ ສຳລັບ ພາກຟັງ

| 파일 | 내용 |
| --- | --- |
| Track 01 – Track 180 | 『한국어 표준교재』에 수록된 듣기 파일<br>ໄຟລບັນທຶກສຽງໃນພາກຟັງ "ປຶ້ມແບບຮຽນ ພາສາເກົາຫຼີ ທີ່ໄດ້ມາດຕະຖານ" |
| LaoKr 1 | 인사말<br>ການທັກທາຍ |
| LaoKr 2 | 라오어와 한국어의 공통점과 차이점<br>ລັກສະນະທີ່ແຕກຕ່າງ ລະຫວ່າງ ພາສາລາວ ແລະ ພາສາເກົາຫຼີ |
| K-1 – K-8 | 한글 익히기 I & II ຮຽນຕົວອັກສອນເກົາຫຼີ I & II |
| G06-1 – G50-2 | 각 과의 문법 포인트 강의<br>예 G30-1 → 30과의 문법 1에 대한 포인트 강의<br>ການອະທິບາຍ ໝວດໄວຍາກອນ ແຕ່ບົດທີ 1-30<br>ຕົວຢ່າງ G30-1 ແມ່ນໄວຍາກອນທີ່ສຳຄັນ 1 ຂອງບົດທີ 30 |
| L-06 – L-58 | 각 과의 듣기 확장 연습<br>예 L-30 → 30과의 듣기 확장 연습<br>ບົດເຝິກຫັດເພີ່ມເຕີມພາກຟັງຂອງບົດທີ 30<br>ຕົວຢ່າງ L-30 - ກວດຄືນບົດເຝິກຫັດພາກຟັງຂອງບົດທີ 30 |
| P01 – P31 | 발음 연습<br>ແບບເຝິກຫັດການອອກສຽງ |

# 목차 ສາລະບານ





## 법령 및 제도 ກົດໝາຍ ແລະ ລະບົບກົດໝາຍ



## 직장생활용어 ພາສາທີ່ໃຊ້ໃນຊີວິດການເຮັດວຽກ



## 부록 ເອກະສານຊ້ອນທ້າຍ

| 주제<br>ຫົວບົດ | 과<br>ບົດທີ່ | 제목<br>ຫົວຂໍ້ | 기능/직무 구조<br>ໜ້າທີ່/ໂຄງສ້າງວຽກ | 어휘<br>ຄຳສັບ | 문법<br>ໄວຍະກອນ | 정보/문화<br>ຂໍ້ມູນທົ່ວໄປ/ວັດທະນາທຳ |
|---|---|---|---|---|---|---|
| 예비편<br>ບົດຮຽນຂັ້ນພື້ນຖານ | 1 | 한글 익히기 I<br>ຮຽນຕົວອັກສອນເກົາຫຼີ I | | | | |
| | 2 | 한글 익히기 II<br>ຮຽນຕົວອັກສອນເກົາຫຼີ II | | | | |
| | 3 | 교실 한국어<br>ພາສາເກົາຫຼີ ທີ່ໃຊ້ໃນຫ້ອງຮຽນ | | | | |
| | 4 | 안녕하세요<br>ສະບາຍດີ | | | | |
| | 5 | 주말 잘 보내세요<br>ຂໍໃຫ້ມີຄວາມສຸກ ໃນວັນທ້າຍອາທິດ | | | | |
| 기본생활<br>ພື້ນຖານການດຳລົງຊີວິດ | 6 | 저는 투안입니다<br>ຂ້ອຍຊື່ວ່າ ຕວນ | 자기소개하기<br>ການແນະນຳໂຕເອງ | 나라<br>ປະເທດ<br>직업<br>ອາຊີບ | 입니다<br>입니까 | 인사 예절<br>ມາລະຍາດການທັກທາຍ |
| | 7 | 여기가 사무실이에요<br>ບ່ອນນີ້ ແມ່ນຫ້ອງການ | 장소 및 물건 묻고 대답하기<br>ການຖາມ ແລະ ຕອບກ່ຽວກັບສະຖານທີ່ ແລະ ວັດຖຸສິ່ງຂອງ | 장소<br>ສະຖານທີ່<br>물건<br>ວັດຖຸສິ່ງຂອງ | 이/가<br>이에요/예요 | 한국의 좌식 문화<br>ວັດທະນາທຳ ການນັ່ງພື້ນຂອງເກົາຫຼີ<br>생활필수품<br>ເຄື່ອງໃຊ້ທີ່ຈຳເປັນໃນຊີວິດປະຈຳວັນ (ເຄື່ອງໃຊ້ອາບນ້ຳ) |
| | 8 | 12시 30분에 점심을 먹어요<br>ຂ້ອຍກິນເຂົ້າທ່ຽງເວລາ 12:30 | 일과 시간 묻고 대답하기<br>ການຖາມ ແລະ ຕອບກ່ຽວກັບກິດຈະວັດປະຈຳວັນ | 일과<br>ກິດຈະວັດປະຈຳວັນ<br>시간<br>ເວລາ | -아요/어요<br>에(시간) | 출근 시간을 지킵시다<br>ໄປວຽກໃຫ້ທັນເວລາກັນເທາະ |
| | 9 | 가족이 몇 명이에요?<br>ຄອບຄົວຂອງເຈົ້າມີຈັກຄົນ? | 가족에 대해 묻고 대답하기<br>ການຖາມ ແລະ ຕອບກ່ຽວກັບຄອບຄົວ | 가족<br>ຄອບຄົວ<br>외모와 성격<br>ຄອບຄົວ, ຮູບຮ່າງ ແລະ ນິໄສ | 하고<br>에(장소) | 높임말과 반말<br>ຄຳເວົ້າສຸພາບ ແລະ ຄຳເວົ້າທຳມະດາ |
| | 10 | 어제 도서관에서 한국어를 공부했어요<br>ມື້ວານ ຂ້ອຍໄດ້ຮຽນພາສາເກົາຫຼີຢູ່ຫໍສະໝຸດ | 날짜와 장소 묻고 대답하기<br>ການຖາມ-ຕອບກ່ຽວກັບສະພາບອາກາດ ແລະ ສະຖານທີ່ | 날짜와 요일<br>ວັນທີ ແລະ ວັນ<br>장소와 동작<br>ສະຖານທີ່ ແລະ ການເຄື່ອນຍ້າຍ | -았/었-<br>에서 | 한국의 공휴일<br>ວັນພັກທາງລັດຖະການຂອງເກົາຫຼີ |
| | 11 | 사과 다섯 개 주세요<br>ເອົາໝາກເອັບເປີ້ນໃຫ້ 5 ໜ່ວຍແດ່ | 물품 구매하기<br>ການຊື້ວັດຖຸສິ່ງຂອງ | 과일과 식료품<br>ໝາກໄມ້ ແລະ ເຄື່ອງບໍລິໂພກ<br>화폐와 물품 구매<br>ເງິນ ແລະ ການຊື້ສິ່ງຂອງ | 주세요<br>-아/어 주세요 | 의류<br>ເສື້ອຜ້າ, ເຄື່ອງນຸ່ງຫົ່ມ |
| | 12 | 병원 옆에 약국이 있어요<br>ຮ້ານຂາຍຢາ ຢູ່ຂ້າງໂຮງໝໍ | 위치와 길 찾기<br>ການຊອກຫາ ທີ່ຕັ້ງ ແລະ ເສັ້ນທາງ | 이동 동사<br>ຄຳກຳມະກ່ຽວກັບການເຄື່ອນໄຫວ<br>위치와 방향<br>ທີ່ຕັ້ງ ແລະ ທິດທາງ | -(으)세요<br>(으)로 | 길거리<br>ເສັ້ນທາງ |
| | 13 | 시청 앞에서 일곱 시에 만나요<br>ພົບກັນເວລາ 7 ໂມງ ຢູ່ຕໍ່ໜ້າສາລາກາງ | 약속 시간과 장소를 정하기<br>ການສ້າງການນັດໝາຍທາງດ້ານເວລາ ແລະ ສະຖານທີ່ | 상태 1<br>ຄຳກຳມະທີ່ສະແດງສະຖານະພາບ 1<br>상태 2<br>ຄຳກຳມະທີ່ສະແດງສະຖານະພາບ 2 | -고 싶다<br>-(으)ㄹ까요 | 한국 사람들이 인사로 하는 약속<br>ຄົນເກົາຫຼີ ຖືວ່າການນັດໝາຍເປັນພາກສ່ວນໜຶ່ງຂອງການທັກທາຍ |
| | 14 | 저는 비빔밥을 먹을래요<br>ຂ້ອຍຈະກິນບິບິມປັບ | 음식 주문하기<br>ການສັ່ງອາຫານ | 식당<br>ຮ້ານອາຫານ<br>음식의 맛<br>ລົດຊາດຂອງອາຫານ | -(으)ㄹ래요<br>안 | 음식 메뉴<br>ເມນູອາຫານ |
| | 15 | 날씨가 맑아서 기분이 좋아요 ຍ້ອນອາກາດແຈ່ມໃສ ຂ້ອຍເລີຍອາລົມດີ | 날씨와 기분 이야기하기<br>ການສົນທະນາກ່ຽວກັບອາກາດ ແລະ ອາລົມ | 날씨와 계절<br>ອາກາດ ແລະ ລະດູການ<br>기분과 감정<br>ອາລົມ ແລະ ຄວາມຮູ້ສຶກ | -네요<br>-아서/어서 | 한국의 사계절<br>4 ລະດູການ ຂອງເກົາຫຼີ |
| | 16 | 시간이 있을 때 주로 테니스를 치러 가요 ເມື່ອມີເວລາປົກກະຕິ ຂ້ອຍໄປຫຼິ້ນກິລາເທນນິດສ໌ | 취미 이야기하기<br>ການເວົ້າກ່ຽວກັບກິດຈະກຳໃນເວລາຫວ່າງ | 취미<br>ກິດຈະກຳໃນເວລາຫວ່າງ<br>운동<br>ການອອກກຳລັງກາຍ | -(으)ㄹ 때<br>-(으)러 가다 | 취미 활동 프로그램<br>ໂປຼແກຣມກິດຈະກຳໃນເວລາຫວ່າງ |
| | 17 | 휴가 때 제주도에 다녀올 거예요<br>ໃນຊ່ວງວັນພັກ ຂ້ອຍຈະໄປເກາະເຈຈູ | 여행 경험 및 계획 이야기하기<br>ເວົ້າກ່ຽວກັບປະສົບການ ແລະ ແຜນການທ່ອງທ່ຽວ | 여행지<br>ສະຖານທີ່ທ່ອງທ່ຽວ<br>여행 준비와 활동<br>ກິດຈະກຳ ແລະ ການກະກຽມການທ່ອງທ່ຽວ. | -아/어 보다<br>-(으)ㄹ 거예요 | 한국의 관광지<br>ສະຖານທີ່ທ່ອງທ່ຽວຂອງເກົາຫຼີ |



| 주제<br>ຫົວບົດ | 과<br>ບົດທີ | 제목<br>ຫົວຂໍ້ | 기능/직무 구조<br>ໜ້າທີ່/ໂຄງສ້າງວຽກ | 어휘<br>ຄຳສັບ | 문법<br>ໄວຍະກອນ | 정보/문화<br>ຂໍ້ມູນທົ່ວໄປ/ວັດທະນະທຳ |
|---|---|---|---|---|---|---|
| 일상 및 여가생활<br>ຊີວິດປະຈຳວັນ ແລະ ໃນເວລາຫວ່າງ | 18 | 버스나 지하철을 타고 가요<br>ຂີ່ລົດເມ ຫຼື ລົດໄຟໃຕ້ດິນໄປ | 교통수단과 소요 시간 말하기<br>ການໂອ້ລົມກ່ຽວວິທີການຂົນສົ່ງ ແລະ ເວລາທີ່ໃຊ້ | 교통<br>ການຈໍລະຈອນ<br>이동<br>ການເດີນທາງ | (이)나<br>에서 까지 | 대중교통 이용 방법<br>ວິທີການນຳໃຊ້ພະຫະນະການຂົນສົ່ງສາທາລະນະ |
| | 19 | 거기 한국가구지요?<br>ນັ້ນແມ່ນ ເຄື່ອງເຟີນີເຈີຂອງເກົາຫຼີບໍ່? | 전화하기<br>ການໂທລະສັບ<br>인터넷에 대해 말하기<br>ການເວົ້າກ່ຽວກັບ ອິນເຕີເນັດ | 전화<br>ການໂທລະສັບ<br>인터넷<br>ອິນເຕີເນັດ | -지요<br>-고 | 생활에 유용한 전화번호<br>ເບີໂທລະສັບ ທີ່ເປັນປະໂຫຍດໃນການດຳລົງຊີວິດ |
| | 20 | 저는 설거지를 할게요<br>ຂ້ອຍຈະລ້າງຖ້ວຍ | 집안일 부탁하기<br>ການຂໍຮ້ອງ ເຮັດວຽກເຮືອນຊ່ວຍ<br>집안일 말하기<br>ການເວົ້າກ່ຽວກັບ ວຽກງານໃນເຮືອນ | 청소<br>ທຳຄວາມສະອາດ<br>집안일<br>ວຽກເຮືອນ | -(으)ㄹ게요<br>-는 것 | 쓰레기 종량제와 분리수거<br>ປະເພດຂີ້ເຫຍື້ອ ແລະ ການແຍກຂີ້ເຫຍື້ອ |
| | 21 | 상 차리는 것을 도와줄까요?<br>ເຈົ້າຕ້ອງການໃຫ້ຊ່ວຍຈັດສະຖານທີ່ບໍ່? | 설명하기<br>ການອະທິບາຍ<br>허락 구하기<br>ການຂໍອະນຸຍາດ | 약속<br>ການນັດໝາຍ<br>초대<br>ການເຊື້ອເຊີນ | -는데/-(으)ㄴ데<br>-(으)ㄹ까요 | 집들이 선물<br>ຂອງຂວັນຂຶ້ນເຮືອນໃໝ່ |
| | 22 | 무단횡단을 하면 안 돼요<br>ຫ້າມຍ່າງຂ້າມທາງທີ່ຜິດກົດຈໍລະຈອນ | 금지하기<br>ການຫ້າມ<br>이유 말하기<br>ການອະທິບາຍເຫດຜົນ | 금지 ຫ້າມ<br>하면 안 되는 행동<br>ການທີ່ບໍ່ອະນຸຍາດໃຫ້ເຮັດຜິດຕໍ່ກຳໃດໜຶ່ງ | -(으)면 안 되다<br>-(으)니까 | 공공장소 표지판<br>ປ້າຍສັນຍາລັກ ໃນສະຖານທີ່ສາທາລະນະ |
| | 23 | 어른께는 두 손으로 물건을 드려야 돼요<br>ເອົາເຄື່ອງໃຫ້ຜູ້ອາວຸໂສກວ່າແມ່ນຕ້ອງຈັບໃຫ້ດ້ວຍສອງມື | 높임말 말하기<br>ການເວົ້າໂດຍໃຊ້ຄຳສັບສຸພາບ<br>조언하기<br>ການແນະນຳ | 어휘 높임<br>ຄຳສັບທີ່ເວົ້າສຸພາບ<br>생활 예절<br>ມາລະຍາດໃນຊີວິດປະຈຳວັນ | -(으)시-<br>-아야/어야 되다/하다 | 한국인들에게 나이란?<br>ຕໍ່ກັບຄົນເກົາຫຼີ ອາຍຸມີຄວາມໝາຍຄືແນວໃດ? |
| | 24 | 한국 영화를 보면서 공부해요<br>ຂ້ອຍເບິ່ງໜັງເກົາຫຼີ ແລະ ຮຽນໄປພ້ອມ | 공부 방법 말하기<br>ການເວົ້າກ່ຽວກັບວິທີການຮຽນໜັງສື<br>신청 방법 설명하기<br>ການອະທິບາຍວິທີການສະໝັກ | 공부<br>ການຮຽນ<br>교육<br>ການສຶກສາ | -(으)면서<br>-기 쉽다/어렵다 | 외국인 근로자 교육 프로그램<br>ໂປຣແກຣມການຝຶກອົບຮົມ ສຳລັບແຮງງານຕ່າງດ້າວ |
| | 25 | 일요일마다 교회에 가요<br>ຂ້ອຍໄປໂບດທຸກວັນທິດ | 빈도 표현하기<br>ການສະແດງຄວາມຖີ່ຂອງພຶດຕິກຳ<br>소원 말하기<br>ການຂໍພອນ | 종교<br>ສາສະໜາ<br>종교 활동<br>ກິດຈະກຳທາງສາສະໜາ | 마다<br>-았으면/었으면 좋겠다 | 종교 행사<br>ພິທີທາງສາສະໜາ |
| 공공기관<br>ອົງການຈັດຕັ້ງສາທາລະນະ | 26 | 밥을 먹은 후에 이 약을 드세요<br>ຫຼັງຈາກກິນເຂົ້າແລ້ວ ຈຶ່ງກິນຢານີ້ | 순서 말하기<br>ການເວົ້າຕາມລຳດັບ<br>금지하기<br>ການຫ້າມ | 신체<br>ຮ່າງກາຍ<br>증상<br>ອາການຂອງພະຍາດ | -(으)ㄴ 후에<br>-지 마세요 | 가정 비상약<br>ຢາສຸກເສີນປະຈຳບ້ານ |
| | 27 | 어디가 아프십니까?<br>ເຈັບບ່ອນໃດ? | 조건 말하기<br>ການເວົ້າກ່ຽວກັບເງື່ອນໄຂ<br>증상 묻고 대답하기<br>ການຖາມອາການ ແລະ ຕອບກ່ຽວກັບອາການ | 병원<br>ໂຮງໝໍ<br>치료<br>ການຮັກສາ | -(으)면<br>-ㅂ/습니까,<br>-ㅂ/습니다 | 외국인 근로자 센터 진료 안내<br>ຂໍ້ມູນສູນການປິ່ນປົວຮັກສາແຮງງານຕ່າງປະເທດ |
| | 28 | 통장을 만들려고 왔어요<br>ຂ້ອຍມາທີ່ນີ້ເພື່ອເປີດບັນຊີທະນາຄານ | 의도 말하기<br>ການເວົ້າກ່ຽວກັບເຈຕະນາ (ຄວາມຕັ້ງໃຈ)<br>방법 표현하기<br>ການເວົ້າກ່ຽວກັບວິທີການ | 은행<br>ທະນາຄານ<br>은행 업무/현금인출기<br>ວຽກງານທະນາຄານ/ຕູ້ເອທີເອັມ | -(으)려고<br>-(으)면 되다 | 외국인 근로자 전용 금융 서비스<br>ການບໍລິການ ທາງທາງການເງິນ ສຳລັບແຮງງານຕ່າງດ້າວ |
| | 29 | 필리핀으로 엽서를 보내고 싶은데요<br>ຂ້ອຍຢາກສົ່ງບັດອວຍພອນນີ້ ໄປຟີລິປິນ | 편지 보내기<br>ການສົ່ງຈົດໝາຍ<br>.요청하기<br>ການຮ້ອງຂໍ | 우편물<br>ການສົ່ງໄປສະນີ<br>소포/택배<br>ວັດສະດຸ/ການສົ່ງເຄື່ອງ | (으)로<br>-(으)십시오 | 국제 특급 우편 서비스<br>ບໍລິການສົ່ງດ່ວນລະຫວ່າງປະເທດ |
| | 30 | 거기에서 태권도를 배울 수 있어요?<br>ຢູ່ບ່ອນນີ້ ສາມາດຮຽນເທຄວນໂດໄດ້ບໍ່? | 이용 문의하기<br>ການສອບຖາມການໃຊ້ບໍລິການ<br>교육 신청하기<br>ການລົງທະບຽນການຝຶກອົບຮົມ | 교육 및 서비스<br>ການສຶກສາ ແລະ ການບໍລິການ<br>외국인력 지원 센터 이용<br>ການນຳໃຊ້ ສູນສົ່ງເສີມສິດແຮງງານຕ່າງດ້າວ | -(으)ㄹ 수 있다/없다<br>-(으)려면 | 외국인 근로자를 위한 지원 기관<br>ສະຖາບັນການຊ່ວຍເຫຼືອແຮງງານຕ່າງປະເທດ |

| 주제<br>ຫົວບົດ | 과<br>ບົດທີ່ | 제목<br>ຫົວຂໍ້ | 기능/직무 구조<br>ໜ້າທີ່/ໂຄງສ້າງວຽກ | 어휘<br>ຄໍາສັບ | 문법<br>ໄວຍະກອນ | 정보/문화<br>ຂໍ້ມູນທົ່ວໄປ/ວັດທະນາທໍາ |
|---|---|---|---|---|---|---|
| 한국에 대한 이해<br>ທໍາຄວາມເຂົ້າໃຈກ່ຽວກັບເກົາຫຼີ | 31 | 우리 고향은 서울보다 공기가 맑아요<br>ອາກາດຢູ່ບ້ານເກີດຂອງຂ້ອຍແມ່ນແຈ່ມໃສຫຼາຍກວ່າເຊອນ | 날씨 표현하기<br>ສໍານວນກ່ຽວກັບອາກາດ<br>비교하기<br>ການປຽບທຽບ | 날씨<br>ອາກາດ<br>도시의 특성<br>ລັກສະນະສະເພາະຂອງຕົວເມືອງ | -지만<br>보다 | 한국의 행정구역<br>ໜ່ວຍງານບໍລິຫານ ຕົວເມືອງຂອງເກົາຫຼີ |
| | 32 | 복날에는 삼계탕을 먹어요<br>ໃນມື້ທີ່ອາກາດຮ້ອນ ພວກເຮົາກິນອາຫານສໍາເກັດຕັງ | 한국의 음식 문화 알기<br>ຮຽນຮູ້ກ່ຽວກັບວັດທະນະທໍາທາງດ້ານອາຫານ<br>조리법 설명하기<br>ອະທິບາຍວິທີການປຸງແຕ່ງອາຫານເກົາຫຼີ | 계절 음식<br>ອາຫານປະຈໍາລະດູ<br>재료 및 조리법<br>ສ່ວນປະກອບ ແລະ ວິທີການປຸງແຕ່ງ | -(으)ㄴ<br>-아서/어서 | 특별한 날 먹는 음식<br>ອາຫານທີ່ຮັບປະທານ ໃນວັນທີ່ສໍາຄັນຕ່າງໆ |
| | 33 | 송편을 만드는 체험도 할 수 있어요<br>ເຈົ້າສາມາດລອງເຮັດເຂົ້າໜົມຊົງປີຍອນ | 추측하기<br>ການຄາດເດົາ<br>계획 말하기<br>ການເວົ້າກ່ຽວກັບແຜນການ | 설날<br>ວັນປີໃໝ່ເກົາຫຼີ<br>추석<br>ຈູຊອກ | -겠-<br>-는 | 한국의 명절<br>ບຸນປະເພນີຂອງເກົາຫຼີ |
| | 34 | 아기 옷을 선물하는 게 어때요?<br>ການໃຫ້ເສື້ອຜ້າເດັກນ້ອຍ ເປັນຂອງຂວັນເດ ຄິດວ່າແນວໃດ? | 추천하기<br>ການແນະນໍາ<br>순서 말하기<br>ການເວົ້າກ່ຽວກັບຂັ້ນຕອນ | 특별한 날<br>ວັນພິເສດ<br>결혼 문화<br>ວັດທະນະທໍາ ການແຕ່ງງານ | -는 게 어때요<br>-고 나서 | 한국인의 경조사<br>ຂ່າວຮ້າຍ ແລະ ຂ່າວຂອງຄົນເກົາຫຼີ |
| | 35 | 한국 드라마가 재미있잖아요<br>ລະຄອນເກົາຫຼີ ກໍມ່ວນ ບໍ່ແມ່ນຫວ່າ | 이유 말하기<br>ການເວົ້າເຖິງສາເຫດ<br>추측하기<br>ການຄາດເດົາ | 한류<br>ກະແສເກົາຫຼີ<br>경제 및 산업<br>ເສດຖະກິດ ແລະ ອຸດສາຫະກໍາ | -잖아요<br>-는/(으)ㄴ 것 같다 | 한류 여행<br>ການທ່ອງທ່ຽວຕາມກະແສເກົາຫຼີ |
| 직장문화<br>ວັດທະນະທໍາບ່ອນເຮັດວຽກ | 36 | 단정한 모습이 좋아 보여요<br>ລັກສະນະເປັນລະບຽບຮຽບຮ້ອຍແມ່ນເບິ່ງຈີບງາມດີ | 복장 설명하기<br>ການອະທິບາຍ ກ່ຽວກັບການນຸ່ງຖື<br>충고하기<br>ການໃຫ້ຄໍາແນະນໍາ | 복장<br>ຊຸດເຄື່ອງນຸ່ງ<br>태도<br>ກະລະທສະ | -아/어 보이다<br>-게 | 작업 현장의 복장<br>ຊຸດເຄື່ອງນຸ່ງສໍາລັບ ສະຖານທີ່ເຮັດວຽກ |
| | 37 | 출입문을 꼭 닫읍시다<br>ຈົ່ງອັດປະຕູ ເວລາອອກໄປນອກ | 기숙사 주의사항 알리기<br>ການແຈ້ງການກ່ຽວກັບ ກົດລະບຽບຂອງຫໍພັກ | 기숙사<br>ຫໍພັກ<br>냉난방기<br>ເຄື່ອງທໍາຄວາມເຢັນ-ຮ້ອນ | -(으)ㅂ시다<br>-는 동안 | 한국의 주거 형태<br>ແບບທີ່ຢູ່ອາໄສຂອງເກົາຫຼີ |
| | 38 | 일할 맛이 나요<br>ມີຄວາມມ່ວນຊື່ນ ກັບການເຮັດວຽກ | 직장의 분위기 소개하기<br>ການແນະນໍາບັນຍາກາດຂອງສະຖານທີ່ເຮັດວຽກ,<br>동료와의 갈등 표현하기<br>ການອະທິບາຍກ່ຽວກັບ ຂໍ້ຂັດແຍ້ງຂອງເພື່ອນຮ່ວມງານ | 직장의 분위기<br>ບັນຍາກາດຂອງສະຖານທີ່ເຮັດວຽກ<br>동료와의 갈등<br>ຂໍ້ຂັດແຍ້ງຂອງເພື່ອນຮ່ວມງານ | -는/-(으)ㄴ 편이다<br>-다고 하다 | 직장 내에서의 호칭<br>ຄໍາເວົ້າກ່ຽວກັບຊັ້ນຕໍາແໜ່ງຢູ່ບ່ອນເຮັດວຽກ |
| | 39 | 오늘 회식을 하자고 해요<br>ມື້ນີ້ ຂ້ອຍໄດ້ຮັບແຈ້ງວ່າ ພວກເຮົາຈະມີງານລ້ຽງຫ້ອງການ | 회식 일정 공지하기<br>ການປະກາດກ່ຽວກັບວັນເວລາງານລ້ຽງຫ້ອງການ<br>새 직원 소개하<br>ການນໍາສະເໜີ ພະນັກງານໃໝ່ | 회식<br>ງານລ້ຽງຫ້ອງການ<br>직장에서의 모임<br>ການປະຊຸມ ຢູ່ບ່ອນເຮັດວຽກ | -자고 하다<br>-(으)라고 하다 | 한국의 회식 문화<br>ວັດທະນາທໍາງານລ້ຽງຫ້ອງການຂອງເກົາຫຼີ |
| | 40 | 불쾌감을 느꼈다면 그건 성희롱이에요<br>ຖ້າຫາກວ່າຮູ້ສຶກບໍ່ເພິ່ງພໍໃຈສະແດງວ່າ ແມ່ນການຄຸກຄາມທາງເພດ | 성희롱 예방 조언하기<br>ການແນະນໍາ ກ່ຽວກັບການປ້ອງກັນການລ່ວງລະເມີດທາງເພດ<br>성추행에 대한 강의 듣기<br>ເຂົ້າຮ່ວມການຝຶກອົບຮົມປ້ອງກັນການກົດຂີ່ທາງເພດ | 성희롱<br>ການຄຸກຄາມທາງເພດ<br>성희롱 대처 방법<br>ວິທີການປ້ອງກັນການຖືກຄຸກຄາມທາງເພດ | -냐고 하다<br>간접화법의 축약형 | 성희롱의 개념과 처벌<br>ຄວາມໝາຍ ຂອງການຖືກຄຸກຄາມທາງເພດ ແລະ ການລົງໂທດ |
| | 41 | 드라이버로 해 보세요<br>ຈົ່ງລອງໃຊ້ ໄຂຂວງເບິ່ງ | 작업 도구 제안하기<br>ການນໍາສະເໜີ ກ່ຽວກັບເຄື່ອງມືການເຮັດວຽກ,<br>작업 상황 설명하기<br>ການອະທິບາຍ ກ່ຽວກັບສະພາບການຂອງວຽກ | 제조업 수공구<br>ເຄື່ອງມືການຜະລິດ<br>제조업 기계<br>ເຄື່ອງມືອຸດສາຫະກໍາ ການຜະລິດ | (으)로<br>-고 있다 | 작업에 필요한 도구<br>ເຄື່ອງມືທີ່ຈໍາເປັນໃນການເຮັດວຽກ |
| | 42 | 이 기계 어떻게 작동하는지 알아요?<br>ເຄື່ອງຈັກນີ້ ນໍາໃຊ້ແນວໃດຮູ້ບໍ່? | 기계 작동법 설명하기<br>ການອະທິບາຍ ກ່ຽວກັບການໃຊ້ເຄື່ອງຈັກ<br>작업 보고하기<br>ການລາຍງານໜ້າວຽກ | 기계 작동<br>ການຄວບຄຸມເຄື່ອງຈັກ<br>포장 작업<br>ວຽກງານການຫຸ້ມຫໍ່ | -는지 알다/모르다<br>-(으)ㄹ 것 같다 | 안전한 도구 및 기계 사용법<br>ເຄື່ອງມືຄວາມປອດໄພ ແລະ ວິທີການນໍາໃຊ້ເຄື່ອງຈັກ |



| 주제<br>ຫົວບົດ | 과<br>ບົດທີ່ | 제목<br>ຫົວຂໍ້ | 기능/직무 구조<br>ໜ້າທີ່/ໂຄງສ້າງວຽກ | 어휘<br>ຄຳສັບ | 문법<br>ໄວຍະກອນ | 정보/문화<br>ຂໍ້ມູນທົ່ວໄປ/ວັດທະນາທຳ |
|---|---|---|---|---|---|---|
| 직장생활<br>ຊີວິດການເຮັດວຽກ | 43 | 철근을 옮겨 놓으세요<br>ຈົ່ງຍ້າຍເຫຼັກເສັ້ນ | 작업 지시하기<br>ການປະຕິບັດວຽກ<br>작업 확인하기<br>ການກວດວຽກ | 건설 현장<br>ສະຖານທີ່ກໍ່ສ້າງ<br>유통업 포장<br>ການຫຸ້ມຫໍ່ ແລະ ການແຈກຢາຍ | -아/어 놓다<br>-지요 | 건설 현장의 중장비<br>ວັດຖຸອຸປະກອນໜັກ ຢູ່ສະຖານທີ່ກໍ່ສ້າງ |
| | 44 | 페인트 작업을 했거든요<br>ເພາະວ່າ ຂ້ອຍທາສີທາແລ້ວ | 작업장 환경 묘사하기<br>ການອະທິບາຍກ່ຽວກັບສະພາບແວດລ້ອມໃນບ່ອນເຮັດວຽກ<br>정리 정돈 말하기<br>ເວົ້າກ່ຽວກັບການເກັບມ້ຽນ | 작업장 환경<br>ສະພາບແວດລ້ອມ ໃນບ່ອນເຮັດວຽກ<br>폐기물과 정리 도구<br>ສິ່ງເສດເຫຼືອ ແລະ ເຄື່ອງມື | -거든요<br>-아지다/어지다 | 작업 도구 정리 정돈<br>ການບໍລິຫານຈັດການ ເຄື່ອງມືການເຮັດວຽກ |
| | 45 | 호미를 챙겼는데요<br>ຂ້ອຍໄດ້ກະກຽມຈົກສັ້ນພ້ອມແລ້ວ | 작업 변경 요구하기<br>ການຮ້ອງຂໍປ່ຽນວຽກ<br>작업 요청하기<br>ການຮ້ອງຂວຽກເຮັດ | 농업 1<br>ກະສິກຳ 1<br>농업 2<br>ກະສິກຳ 2 | -는데요<br>-기 전에 | 한국 농촌의 사계절<br>ສີ່ລະດູການ ການຜະລິດກະສິກຳ ຂອງເກົາຫຼີ. |
| | 46 | 더 신경 쓰도록 하자<br>ພວກເຮົາ ມາເອົາໃຈໃສ່ຕື່ມກັນເທາະ | 문제 원인 찾기<br>ການຊອກຫາຕົ້ນເຫດຂອງບັນຫາ<br>해결 방안 말하기<br>ການເວົ້າກ່ຽວກັບມາດຕະການໃນການແກ້ໄຂ | 축산업<br>ອຸດສາຫະກຳການລ້ຽງສັດ<br>어업<br>ການປະມົງ | -도록 하다<br>-게 되다 | 축산업과 어업 현장의 직업<br>ວຽກຢູ່ສະຖານທີ່ ເຮັດວຽກຂອງອຸດສາຫະກຳລ້ຽງສັດ ແລະ ການປະມົງ |
| | 47 | 재고를 파악하는 것이 중요해요<br>ສິ່ງສຳຄັນທີ່ສຸດ ກໍຄືຮູ້ວ່າຈຳນວນສິນຄ້າທີ່ຄ້າງຢູ່ໃນໂຮງງານ | 업무 관리하기<br>ການບໍລິຫານ ໜ້າວຽກ<br>업무 실수 말하기<br>ການເວົ້າກ່ຽວກັບ ທຸລະກິດທີ່ຜິດພາດ | 창고 관리<br>ການຈັດການ ສາງເກັບເຄື່ອງ<br>가구 제조<br>ການຜະລິດເຟີນີເຈີ | -는 것이 중요하다<br>-(으)ㄹ 것이다 | 직장에서의 칭찬 노하우<br>ການສະແດງຄວາມຍ້ອງຍໍ-ຊົມເຊີຍ ຢູ່ບ່ອນເຮັດວຽກ |
| | 48 | 다치지 않도록 조심하세요<br>ຈົ່ງລະມັດລະວັງ ເພື່ອບໍ່ໃຫ້ໄດ້ຮັບບາດເຈັບ | 기계 작업 시 주의사항 말하기<br>ການເວົ້າກ່ຽວກັບ ຂໍ້ຄວນລະວັງໃນເວລາເຮັດວຽກກັບເຄື່ອງຈັກ<br>위험 상황 대처하기<br>ການບໍລິຫານຈັດການກັບສະຖານະການ ທີ່ອັນຕະລາຍ | 기계 작업<br>ອຸປະກອນ ໃນການເຮັດວຽກ<br>재해<br>ໄພພິບັດ | -(으)ㄴ 적이 있다/없다<br>-지 않도록 조심하다 | 작업장 사고<br>ອຸບັດຕິເຫດ ຢູ່ບ່ອນເຮັດວຽກ |
| | 49 | 안전화를 안 신으면 다칠 수 있어요<br>ຖ້າເຈົ້າບໍ່ໃສ່ເກີບປ້ອງກັນຄວາມປອດໄພ ເຈົ້າອາດຈະໄດ້ຮັບບາດເຈັບ | 위험 상황 예방하기<br>ການປ້ອງກັນ ອັນຕະລາຍ<br>위험 가능성 경고하기<br>ການເຕືອນ ກ່ຽວກັບຄວາມເປັນໄປໄດ້ຂອງອັນຕະລາຍ | 보호구<br>ອຸປະກອນປ້ອງກັນ ຄວາມປອດໄພ<br>작업장 사고<br>ອຸປະຕິເຫດແຮງງານ | -(으)ㄹ 수 있다<br>-기 때문에 | 신체 기관과 보호구<br>ການກວດສຸຂະພາບ, ອະໄວຍະວະ ແລະ ການປ້ອງກັນ |
| | 50 | 열심히 해 준 덕분이에요<br>ມັນກໍຍ້ອນວ່າ ເຈົ້າຊ່ວຍເຮັດຢ່າງຕັ້ງໃຈ | 업무 평가하기<br>ການປະເມີນ ການເຮັດວຽກ<br>건강 말하기<br>ເວົ້າກ່ຽວກັບສຸຂະພາບ | 안전 수칙<br>ກົດລະບຽບ ເພື່ອຄວາມປອດໄພ<br>건강 증진<br>ການສົ່ງເສີມສຸຂະພາບ | -(으)ㄴ 덕분에<br>-기로 하다 | 건강을 위한 스트레칭<br>ການຍືດເສັ້ນຍືດສາຍ ເພື່ອສຸຂະພາບ |

| 주제<br>ຫົວບົດ | 과<br>ບົດທີ່ | 제목<br>ຫົວຂໍ້ | 기능/직무 구조<br>ໜ້າທີ່/ໂຄງສ້າງວຽກ | 어휘<br>ຄຳສັບ | 활동<br>ກິດຈະກຳ | 정보/문화<br>ຂໍ້ມູນທົ່ວໄປ/ວັດທະນາທຳ |
|---|---|---|---|---|---|---|
| 법령 및 제도<br>ກົດໝາຍ ແລະ ລະບົບກົດໝາຍ | 51 | 한국에 가서 일을 하고 싶은데요<br>ຂ້ອຍຕ້ອງການໄປເຮັດວຽກຢູ່ເກົາຫຼີ | 고용허가제에 대해 묻고 답하기 ການຖາມ-ຕອບກ່ຽວກັບ ລະບົບການອະນຸຍາດການຈ້າງງານ<br>EPS-TOPIK에 대해 문의하기<br>ການສອບຖາມ ກ່ຽວກັບ EPS-TOPIK | 고용허가제<br>ລະບົບການອະນຸຍາດ ການຈ້າງງານ<br>한국어능력시험<br>ການສອບເສັງວັດລະດັບ ພາສາເກົາຫຼີ | EPS-TOPIK 신청서 작성하기<br>ການຂຽນ ຟອມສະໝັກ EPS-TOPIK | 고용허가제 이해하기<br>ຄວາມເຂົ້າໃຈກ່ຽວກັບ ລະບົບການອະນຸຍາດ ການຈ້າງງານ |
| | 52 | 근로 조건이 좋은 편이에요<br>ຂ້ອຍໄດ້ຮັບສະພາບເງື່ອນໄຂການເຮັດວຽກທີ່ດີ | 근로계약서 내용 문의하기<br>ການຖາມກ່ຽວກັບເນື້ອໃນສັນຍາການຈ້າງງານ<br>근로 계약 체결하기<br>ການເຊັນສັນຍາ ການເປັນແຮງງານ | 근로 조건<br>ສະພາບເງື່ອນໄຂ ການເຮັດວຽກ<br>취업 절차<br>ຂັ້ນຕອນການຫາງານ | 표준근로계약서 작성하기<br>ມາດຕະຖານ ການຂຽນ ໃບສັນຍາການຈ້າງແຮງງານ | 표준근로계약서<br>ມາດຕະຖານ ສັນຍາການຈ້າງງານ |



| | | | | | | |
|---|---|---|---|---|---|---|
| 법령 및 제도<br>ກົດໝາຍ ແລະ ລະບົບກົດໝາຍ | 53 | 외국인 등록을 하러 가요<br>ໄປເຮັດບັດປະຈຳຕົວ ຄົນຕ່າງດ້າວ | 입국 심사 받기<br>ການຮັບການກວດສອບ ການເຂົ້າປະເທດ<br>외국인 등록하기<br>ການຂຶ້ນທະບຽນ ຄົນຕ່າງດ້າວ | 입국 절차<br>ຂັ້ນຕອນ ຂອງການເຂົ້າປະເທດ<br>외국인 등록<br>ການລົງທະບຽນ ຄົນຕ່າງດ້າວ | 취업 교육 이해하기<br>ທຳຄວາມເຂົ້າໃຈ ກ່ຽວກັບການຝຶກອົບຮົມ ສີມືແຮງງານ | 외국인 등록<br>ບັດປະຊາຊົນ ຄົນຕ່າງດ້າວ |
| | 54 | 보험금을 신청하려고요<br>ຂ້ອຍຈະລົງທະບຽນຈ່າຍຄ່າປະກັນໄພ | 보험 가입하기<br>ການສະໝັກ ປະກັນໄພ<br>보험금 청구하기<br>ການທວງເອົາເງິນ ປະກັນໄພຄືນ | 보험 가입<br>ການສະໝັກ ປະກັນໄພ<br>보험금 청구<br>ການທວງເງິນ ປະກັນໄພຄືນ | 보험 안내 이해하기<br>ຄວາມເຂົ້າໃຈ ກ່ຽວກັບປະກັນໄພ | 외국인 근로자 보험<br>ປະກັນໄພສຳລັບ ແຮງງານຕ່າງດ້າວ |
| | 55 | 급여 명세서를 확인해 보세요<br>ຈົ່ງລອງກວດເບິ່ງ ໃບເບີກເງິນເດືອນ | 급여 명세서 확인하기<br>ກວດຄືນເບິ່ງ ລາຍລະອຽດ ຂອງຄ່າຕອບແທນ<br>수당 확인하기<br>ການກວດສອບໃບບິນ | 급여와 세금<br>ໃບເບີກເງິນ ແລະ ພາສີ<br>수당<br>ເງິນຊ່ວຍເຫຼືອ | 급여 명세서 읽기<br>ການອ່ານ ໃບແຈ້ງຄ່າແຮງງານ | 월급<br>ເງິນເດືອນ |
| | 56 | 이번 여름 휴가 계획은 세웠어?<br>ສ້າງແຜນການທ່ອງທ່ຽວ ໃນຊ່ວງລະດູແລ້ງນີ້ບໍ່? | 휴가 알아보기<br>ການຮັບຮູ້ກ່ຽວກັບ ວັນພັກວຽກ<br>병가 신청하기<br>ການຮ້ອງຂໍ ເພື່ອພັກປິ່ນປົວສຸຂະພາບ | 휴가<br>ການລາພັກຮ້ອນ<br>병가<br>ການລາວຽກ (ເວລາເຈັບເປັນ) | 휴가 신청서 이해하기<br>ທຳຄວາມເຂົ້າໃຈ ກ່ຽວກັບການສະໝັກຂໍລາພັກ | 휴가에 대한 근로 기준법의 이해<br>ຮູ້ກ່ຽວກັບກົດໝາຍແຮງງານ ມາດຕະຖານໃນການລາພັກ |
| | 57 | 사업장을 변경하고 싶은데<br>ຂ້ອຍຕ້ອງການປ່ຽນ ບ່ອນເຮັດວຽກ | 사업장 변경 절차 알아보기<br>ຮຽນຮູ້ກ່ຽວກັບຂັ້ນຕອນ ຂອງການປ່ຽນບ່ອນເຮັດວຽກ<br>일시 출국 절차 확인하기<br>ກວດກາເບິ່ງຂັ້ນຕອນ ການອອກນອກປະເທດ | 사업장 변경<br>ການປ່ຽນບ່ອນເຮັດວຽກ<br>조기 귀국과 일시 출국<br>ການອອກຈາກປະເທດຊົ່ວຄາວ ແລະ ກັບປະເທດໄວກ່ອນກຳນົດ | 재입국 허가 동의서 이해하기<br>ເຂົ້າໃຈກ່ຽວກັບ ການອະນຸຍາດເຂົ້າປະເທດ | 사업장 변경<br>ການປ່ຽນບ່ອນເຮັດວຽກ |
| | 58 | 체류 기간을 연장한 후에 꼭 신고해야 해<br>ຕ້ອງໄດ້ລາຍງານ ໃຫ້ກັບຫ້ອງການທີ່ກ່ຽວຂ້ອງ ຫຼັງຈາກໄດ້ຕໍ່ໄລຍະເວລາການພັກເຊົາ | 체류 연장 절차 알아보기<br>ຮຽນຮູ້ເຂົ້າໃຈກ່ຽວກັບຂັ້ນຕອນການຕໍ່ທີ່ຢູ່ອາໄສ<br>체류 자격 변경 이해하기<br>ຄວາມເຂົ້າໃຈກ່ຽວກັບ ການປ່ຽນແປງສະຖານະພາບການພັກເຊົາ | 체류 기간 연장<br>ການຕໍ່ໄລຍະເວລາ ການພັກເຊົາ<br>체류 자격<br>ຄຸນສົມບັດການຢູ່ອາໄສ | 체류 기간 연장 신청서 작성하기<br>ການຂຽນ ໃບສະໝັກ ຕໍ່ອາຍຸໄລຍະເວລາການພັກເຊົາ | 체류 기간 연장 신청<br>ການຂຽນໃບສະໝັກ ຕໍ່ອາຍຸໄລຍະເວລາການພັກເຊົາ |
| 직장생활용어<br>ພາສາທີ່ໃຊ້ໃນຊີວິດການເຮັດວຽກ | 59 | 산업 안전 I<br>ຄວາມປອດໄພ ທາງອຸດສາຫະກຳ I | 산업 안전표지 익히기<br>ທຳຄວາມຄຸ້ນເຄີຍກັບ ສັນຍາລັກຄວາມປອດໄພ ໃນອຸດສາຫະກຳ<br>제조업 관련 안전 수칙 익히기<br>ການທຳຄວາມຄຸ້ນເຄີຍກັບ ກົດລະບຽບ ຂອງອຸດສາຫະກຳການຜະລິດ | 산업 안전 표지<br>ປ້າຍ ແລະ ສັນຍາລັກ ຂອງຄວາມປອດໄພ ອຸດສາຫະກຳ<br>제조업 관련 안전 수칙<br>ລະບຽບທາງຄວາມປອດໄພ ໃນອຸດສາຫະກຳການຜະລິດ | | 직업병<br>ພະຍາດທີ່ເກີດຈາກ ການເຮັດວຽກ |
| | 60 | 산업 안전 II<br>ຄວາມປອດໄພ ທາງອຸດສາຫະກຳ II | 건축업 관련 안전 수칙 익히기<br>ທຳຄວາມຄຸ້ນເຄີຍກັບ ການເຕືອນອັນຕະລາຍ ໃນອຸສາຫະກຳການກໍ່ສ້າງ | 건축업 관련 안전 수칙<br>ຄວາມປອດໄພ ກ່ຽວກັບວຽກກໍ່ສ້າງ | | 직업병 예방<br>ການປ້ອງກັນ ການເປັນໂລກທີ່ຕິດພັນກັບວຽກງານ |

# 등장 인물 ຕົວລະຄອນ





선생님 ອາຈານ



리한 ຣີຮັນ
ປາກິດສະຖານ



투안 ຕວນ
ຫວຽດນາມ



바루 ບາຣຸ
ອິນໂດເນເຊຍ



아딧 ອາດິດ
ໄທ



카림 ຄາລິມ
ອຸດສະເບກິດສະຖານ



바트 ບັດ
ມົງໂກນ



칸 ຄານ
ກຳປູເຈຍ



타타 ຕ້າຕ້າ
ອິນໂດເນເຊຍ



이반 ອິບັນ
ອຸດສະເບກິດສະຖານ



인디카 ອິນດິກາ
ສີລັງກາ



리리 ລີລີ
ຈີນ



수피카 ຊຸພີກາ
ໄທ



흐엉 ເຮືອງ
ຫວຽດນາມ



모니카 ໂມນິກກາ
ສີລັງກາ



수루 ຊຸຣຸ
ຈີນ



박지훈 ພັກຈິຮຸນ
ເກົາຫຼີ



김건우 ຄິມ ກອນອຸ
ເກົາຫຼີ



이미영 ລີ ມີຍອງ
ເກົາຫຼີ



정소희 ຈອງໂຊຮີ
ເກົາຫຼີ



이민우 ລີ ມິນອຸ
ເກົາຫຼີ



## 1 ຕະກູນພາສາ

LaoKr 2

ພາສາລາວແມ່ນນອນຢູ່ໃນກຸ່ມພາສາຕະກູນໄຕ-ກະໄດ (ເປັນກຸ່ມພາສາຄຳໂດດ, ບໍ່ປ່ຽນຮູບຄຳ) ສ່ວນພາສາ ເກົາຫຼີແມ່ນນອນຢູ່ໃນກຸ່ມພາສາຕະກູນອັນໄຕ. ໃນພາສາລາວມີສຽງວັນນະຍຸດແຕ່ພາສາເກົາຫຼີແມ່ນບໍ່ມີສຽງວັນນະຍຸດ.

| | ຕະກູນພາສາ | ພາສາໃກ້ຄຽງ |
|---|---|---|
| ລາວ | ຕະກູນພາສາໄຕ(ເຂດທິເບດ-ຈີນ) | ພາສາໄທ |
| ເກົາຫຼີ | ຕະກູນພາສາອັນໄຕ | ຕຸລາກີ, ອຸສເບກິສຖານ, ຄາຊັສຖານ |

## 2 ການອອກສຽງ

① ພະຍັນຊະນະໃນພາສາລາວມີທັງໝົດ 27 ຕົວ (ລວມທັງຕົວ ຣ) ເຊິ່ງປະກອບມີຄື: ສຽງອັດ (ຜື່ວ/ບໍ່ຜື່ວ/ສຽງອອກທາງດັງ), ສຽງຖູ (ບໍ່ກ້ອງ/ກ້ອງ/ຂ້າງລີ້ນ), ສຽງສັ່ນ, ສຽງເຄິ່ງສະຫຼະເຄິ່ງພະຍັນຊະນະ. ແຕ່ສຽງພະຍັນຊະນະໃນພາສາເກົາຫຼີແມ່ນແບ່ງອອກຕາມຄວາມແຮງຂອງລົມທີ່ທັ່ງອອກມາຄື: ສຽງອັດ (ບໍ່ຜື່ວກ້ອງ) ㄱ ㄷ ㅂ ㅅ ㅈ, ສຽງອັດ (ຜື່ວ) ㅋ ㅌ ㅍ ㅊ, ສຽງອັດ (ບໍ່ຜື່ວບໍ່ກ້ອງ) ㄲ ㄸ ㅆ ㅉ.

② ໃນພາສາລາວມີພະຍັນຊະນະ ຕົວ ຟ [f] ສຽງຖູບໍ່ກ້ອງ(ຈຸດເກີດສຽງແມ່ນບໍລິເວນຮີບສົບລະຫວ່າງແຂ້ວເທິງກັບລຸ່ມ) ແຕ່ໃນພາສາເກົາຫລີແມ່ນບໍ່ມີ. ນອກນີ້ ໃນພາສາລາວຍັງມີທັງພະຍັນຊະນະຕົວ ລ [ l ] ແລະ ຕົວ ຣ [ r ] ແຕ່ພາສາເກົາຫລີມີແຕ່ຕົວດຽວ ຄື ລ [ l ], ເຊິ່ງວ່າພະຍັນຊະນະຕົວ ຣ [ r ] ໃນພາສາລາວບໍ່ສາມາດເຮັດໜ້າທີ່ເປັນຕົວສະກົດຄືກັບຕົວ ລ [ l ] ໃນພາສາເກົາຫລີໄດ້. ຕົວຢ່າງ: '달, 말, 딸'.

| | |
|---|---|
| ລາວ | [f], [l], [r] |
| ເກົາຫຼີ | [l] |

③ ເພິ່ນແບ່ງສຽງສະຫຼະໃນພາສາລາວໂດຍອີງໃສ່ 3 ດ້ານຄື: ທີ່ຕັ້ງຂອງລີ້ນ (ສ່ວນປາຍລີ້ນ, ສ່ວນກົກລີ້ນ), ລະດັບອ້າຂອງປາກ (ປາກແຄບ, ແຄບແດ່, ກວ້າງ, ກວ້າງແດ່), ຮູບຊົງຂອງສົບ (ມົນ, ບໍ່ມົນ). ເຊິ່ງສະຫຼະທັງໝົດແບ່ງອອກຕາມສຽງສັ້ນສຽງຍາວ.

| | |
|---|---|
| ລາວ | ສ - sao (ສາວ), ຊ - s'ao (ຊາວ) |
| ເກົາຫຼີ | ㅅ - sal (살), ㅆ - s'al (쌀) |



④ ພະຍາງໃນພາສາລາວຕ້ອງປະກອບດ້ວຍສະຫລະສະເໝີ ແລະ ປະສົມກັບພະຍັນຊະນະຕົວແກນ 2 ຕົວໄດ້ ແຕ່ຕົວສະກົດຕ້ອງມີພຽງແຕ່ຕົວດຽວເທົ່ານັ້ນ. ກົງກັນຂ້າມກັບພະຍາງໃນພາສາເກົາຫລີ, ພະຍາງໜຶ່ງພະຍາງໃນພາສາເກົາຫລີແມ່ນຕ້ອງປະກອບດ້ວຍສະຫລະສະເໝີ ແລະ ຈະມີພຽງພະຍັນຊະນະຕົວແກນ ແລະ ຕົວສະກົດຕົວດຽວເທົ່ານັ້ນ.

| ລາວ | ສວ - ສວາຍ [swuai], ກວ - ກວ້າງ [kwuang] |
|---|---|
| ເກົາຫຼີ | 삶[sum], 땀[tum] |

⑤ ສຽງຕົວສະກົດໃນພາສາລາວ ແລະ ພາສາເກົາຫລີແມ່ນມີສຽງບໍ່ກ້ອງ. ໃນທ້າຍຂອງພະຍາງທັງສອງພາສາແມ່ນຈະຜັນໄດ້ແຕ່ສຽງອັດບໍ່ຜື່ວກັບສຽງອອກທາງດັງ ຄື ບ, ດ, ກ, ມ, ນ, ງ ເທົ່ານັ້ນ. ແຕ່ພາສາເກົາຫລີຍັງມີສຽງຕົວ [ l ] ທີ່ຜັນສຽງຢູ່ລີ້ນລວມທັງໝົດເປັນ 7 ຕົວ. ສ່ວນພາສາລາວບໍ່ມີຕົວສະກົດຕົວ ລ [ l ] ແຕ່ມີຕົວສະກົດຕົວ ຍ [y] ແລະ ຕົວ ວ [v] ລວມເປັນ 8 ຕົວ.

| ລາວ | ບ, ດ, ກ, ມ, ນ, ງ, ວ, ຍ |
|---|---|
| ເກົາຫຼີ | ㄱ, ㄴ, ㄷ, ㄹ, ㅁ, ㅂ, ㅇ |

⑥ ສຽງຂອງພະຍາງໃນພາສາລາວແມ່ນຈະເປັນເອກະລາດຂອງໃຜລາວບໍ່ຄືກັນກັບພາສາເກົາຫຼີ, ເຊິ່ງໃນພາ ສາເກົາຫຼີສຽງຂອງຕົວສະກົດໃນພະຍາງໜ້າຈະຍ້າຍໄປຢູ່ແທນທີ່ຫາກຕົວແກນຂອງພະຍາງຕໍ່ໄປຂຶ້ນຕົ້ນ ດ້ວຍສຽງສະຫຼະ.

ຕົວຢ່າງ ລາວ : ກິນເຂົ້າ [ກິນ ເຂົ້າ] → [ກິນ ເຂົ້າ]

ເກົາຫຼີ : 밥을 [ພັບ ອຶລ] → 바 블 [ພາ ພຶລ]

먹어요 [[ມອກ ອໍ ໂຢ] → 머 거 요 [ມໍ ກໍ ໂຢ]

| 밥 을 → 밥 을 | [바블] |
|---|---|
| 먹 어 요 → 먹 어 요 | [머거요] |

⑦ ເນື່ອງຈາກສຽງຂອງພະຍາງໃນພາສາລາວແມ່ນຈະເປັນເອກະລາດຂອງໃຜມັນບໍ່ຄືກັນກັບພາສາເກົາຫລີ ໃນເວລາທີ່ພະຍັນຊະນະທັງ 2 ພະຍາງມາພົບກັນ, ສຽງຂອງທັງສອງພະຍາງຈະບໍ່ປ່ຽນ. ແຕ່ໃນພາສາເກົາຫລີສຽງຂອງຕົວສະກົດໃນພະຍາງໜ້າຈະຍ້າຍໄປແທນທີ່ຂອງສຽງໃນພະຍາງຫລັງຫາກໃນພະຍາງຫລັງຂຶ້ນຕົ້ນດ້ວຍສຽງສະຫລະ.

ຕົວຢ່າງ: ລາວ: 'ຕົກນ້ຳ [똑남] '물에 빠지다'

'ຈັບມື [짭므] '손을 잡다'

ເກົາຫຼີ: 막내 [ມັກ ແນ] → [ມັງ ແນ] 'ລູກຫລ້າ'

밥물 [ພັບ ມຸລ] → [ພໍາ ມຸລ] 'ນ້ຳເຂົ້າ'

| 막 내 → 막 내 | [망 내] |
|---|---|
| 밥 물 → 밥 물 | [밤 물] |

## 3 ໄວຍະກອນ

### 3.1 ຕຳແໜ່ງຄຳໃນປະໂຫຍກ

① ຕຳແໜ່ງພາກສ່ວນຫຼັກຂອງປະໂຫຍກ

ໂຄງສ້າງຂອງປະໂຫຍກໃນພາສາລາວປະກອບດ້ວຍ SVO (ຄຳຕົວຕັ້ງ+ຄຳກຳມະ+ຄຳປະກອບ) ແຕ່ໃນພາສາເກົາຫຼີແມ່ນປະກອບດ້ວຍ SOV (ຄຳຕົວຕັ້ງ+ຄຳປະກອບ+ຄຳກີຣິຍາ).




② ກົລະນີຂອງຄຳຂະຫຍາຍ, ໂດຍທົ່ວໄປແລ້ວ ໃນພາສາລາວຄຳຄຸນນາມທີ່ໃຊ້ມາຂະຫຍາຍແມ່ນຈະຢູ່ດ້ານຫຼັງຂອງຄຳນາມ, ຄຳຄຸນນາມສະເໝີເຊິ່ງກົງກັນຂ້າມກັນກັບພາສາເກົາຫຼີຄຳຂະຫຍາຍຈະຢູ່ດ້ານໜ້າຂອງຄຳນາມ, ຄຳຄຸນນາມ.




③ ໃນພາສາລາວແມ່ນຈະໃຊ້ຄຳວ່າ 'ທີ່' ຫຼື 'ຕອນ/ເວລາ' ໃສ່ດ້ານໜ້າຂອງຄຳນາມສະຖານທີ່ກັບເວລາຄ້າຍຄືກັນກັບ 'at' ຫຼື 'in' ໃນພາສາອັງກິດ. ແຕ່ໃນພາສາເກົາຫຼີແມ່ນຈະຢູ່ດ້າຍທ້າຍຂອງຄຳນາມສະເໝີ. ສະຫຼຸບແລ້ວ ພາສາລາວແມ່ນກຸ່ມພາສາທີ່ໃຊ້ຄຳບຸບພະບົດ (ຄຳທີ່ໃຊ້ຕື່ມໜ້າຄຳນາມ) ແຕ່ໃນພາສາເກົາຫຼີແມ່ນກຸ່ມພາສາທີ່ໃຊ້ຕື່ມທ້າຍຄຳນາມ.





④ ກໍລະນີຂອງຄຳເຊື່ອມ 'ຂອງ' ທີ່ໃຊ້ເພື່ອສະແດງຄວາມເປັນເຈົ້າຂອງ, ໃນພາສາລາວສິ່ງຂອງຈະຢູ່ດ້ານໜ້າ ແລະ ຄຳນາມທີ່ສະແດງຄວາມເປັນເຈົ້າຂອງຈະຢູ່ດ້ານຫຼັງ ເຊັ່ນວ່າ 'ກະເປົາ' ຈະຢູ່ດ້ານໜ້າ ແລະ ຄຳນາມ 'ໝູ່' ຈະຢູ່ດ້ານຫຼັງ, ແຕ່ໃນພາສາເກົາຫຼີແມ່ນກົງກັນຂ້າມກັນ.



| | | | | | |
|---|---|---|---|---|---|
| ລາວ | ຄຳນາມ | + | ຄຳເຊື່ອມສະແດງຄວາມເປັນເຈົ້າຂອງ | → | ກະເປົາຂອງໝູ່ |
| ເກົາຫຼີ | ຄຳເຊື່ອມສະແດງຄວາມເປັນເຈົ້າຂອງ | + | ຄຳນາມ | → | 친구의 가방<br>ໝູ່ຂອງກະເປົາ |

⑤ ໃນພາສາລາວຄຳກຳມະຊ່ວຍແມ່ນຈະຢູ່ດ້ານໜ້າຂອງຄຳກຳມະຫຼັກຄ້າຍຄືກັນກັບພາສາອັງກິດ 'must go', 'would like to go' 'ຢາກນອນ' ແຕ່ໃນພາສາເກົາຫຼີແມ່ນກົງກັນຂ້າມກັນ, ຄຳກຳມະຊ່ວຍຈະຢູ່ ດ້ານຫຼັງຂອງຄຳກຳມະຫຼັກ.



| | | | | | |
|---|---|---|---|---|---|
| ລາວ | ຄຳກຳມະຊ່ວຍ | + | ຄຳກຳມະຫຼັກ | → | ຢາກ ນອນ |
| ເກົາຫຼີ | ຄຳກຳມະຫຼັກ | + | ຄຳກຳມະຊ່ວຍ | → | 자고 싶다<br>ນອນ ຢາກ |

⑥ ປະໂຫຍກປະຕິເສດໃນພາສາລາວແມ່ນຄ້າຍຄືກັນກັບພາສາອັງກິດ ຄຳປະຕິເສດແມ່ນຈະຢູ່ແຕ່ດ້ານໜ້າ ຂອງຄຳກຳມະເຊັ່ນ: 'ຢ່າໄປ', 'ບໍ່ກິນ'. ແຕ່ໃນພາສາເກົາຫຼີຄຳປະຕິເສດແມ່ນມີຢູ່ສອງແບບຄື: ຮູບຄຳປະຕິ ເສດທີ່ຢູ່ດ້ານໜ້າຄຳກຳມະ ແລະ ຮູບຄຳປະຕິເສດທີ່ຢູ່ດ້ານຫຼັງຄຳກຳມະ.



| | | | | | |
|---|---|---|---|---|---|
| ລາວ | ຄຳປະຕິເສດ | + | ຄຳກຳມະ | → | ບໍ່ ໄປ |
| ເກົາຫຼີ | ຄຳກຳມະ | + | ຄຳປະຕິເສດ | → | 가지 않는다<br>ໄປ ບໍ່ |
| | ຄຳປະຕິເສດ | + | ຄຳກຳມະ | → | 안 간다<br>ບໍ່ ໄປ |

### 3.2 ໄວຍະກອນ ແລະ ຮູບແບບການໃຊ້

① ເວລາເອົາຄຳຕ່າງໆມາສ້າງປະໂຫຍກ, ຄຳໃນພາສາລາວຈະບໍ່ມີການປ່ຽນຮູບ, ເຖິງຈະເປັນຄຳອັນດຽວກັນກໍ່ເຮັດໜ້າທີ່ແຕກຕ່າງກັນໂດຍອີງຕາມທີ່ຕັ້ງຂອງຄຳໃນປະໂຫຍກ. ແຕ່ໃນພາສາເກົາຫຼີເປັນກຸ່ມຄຳທີ່ມີ ການປ່ຽນຮູບ ແລະ ເວລາທີ່ນຳມາໃຊ້ຮູບຮ່າງຂອງຄຳເຫຼົ່ານັ້ນຈະປ່ຽນໄປຕາມພາລະໜ້າທີ່ຂອງຄຳໆນັ້ນ.

| | |
|---|---|
| ລາວ | ລາວ ເປັນ ຄົນ ດີ.<br>그는 이다 사람 좋다 |
| ເກົາຫຼີ | 그는 좋은 사람이다.<br>ລາວ ດີ ຄົນເປັນ |
| ລາວ | ອາກາດ ດີ.<br>날씨 좋다 |
| ເກົາຫຼີ | 날씨가 좋다.<br>ອາກາດ ດີ |

② ໃນພາສາລາວແມ່ນໃຊ້ ຄຳວິເສດ 'ແລ້ວ' ຫລື ຄຳນາມທີ່ຊີ້ບອກເຖິງກາລະອະດີດໃສ່ທ້າຍປະໂຫຍກ ແຕ່ພາສາເກົາຫລີແມ່ນມີການປ່ຽນຮູບຄຳເພື່ອຊີ້ບອກເຖິງກາລະອະດີດ.

ພາສາລາວ: ດຽວນີ້ ຂອ້ຍ ກິນ ເຂົ້າ (지금 나는 밥을 먹는다.)
ມື້ວານນີ້ ຂ້ອຍກິນເຂົ້າ (어제 나는 밥을 먹는다.)
ຂ້ອຍ ກິນ ເຂົ້າ ແລ້ວ (나는 밥을 먹었다.)

ພາສາເກົາຫຼີ: 나는 밥을 먹는다. (ກາລະປັດຈຸບັນ)
나는 밥을 먹었다. (ກາລະອະດີດ)

③ ຮູບແບບການກ່າວຢ່າງສຸພາບໃນພາສາລາວ

ເນື່ອງຈາກວ່າພາສາລາວເປັນພາສາບໍ່ປ່ຽນຮູບ,ເວລາທີ່ຕ້ອງການກ່າວຢ່າງສຸພາບແມ່ນຈະໃຊ້ຄຳສັບສຸພາບມາໃຊ້ແທນ, ຕ່າງຈາກພາສາເກົາຫຼີທີ່ໃຊ້ທັງຄຳສັບສຸພາບ ແລະ ປ່ຽນຮູບໃນທ້າຍປະໂຫຍກ.

| | |
|---|---|
| ລາວ | ອາຈານ ຮັບປະທານອາຫານ |
| ເກົາຫຼີ | 선생님께서 잡수십니다 |



④ ຮູບແບບການຂຽນໃນພາສາລາວແມ່ນເລີ່ມຈາກນ້ອຍໄປຫາໃຫຍ່ແຕ່ພາສາເກົາຫຼີແມ່ນເລີ່ມແຕ່ໃຫຍ່ໄປຫາ ນ້ອຍ.

| | |
|---|---|
| ລາວ | ຖະໜົນສຸພານຸວົງ, ບ້ານ ອຸບມຸງ ເມືອງ ສີໂຄດຕະບອງ, ນະຄອນຫຼວງວຽງຈັນ, ສປປ ລາວ. |
| | ເຮືອນເລກທີ < ຊື່ຖະໜົນ < ບ້ານ < ເມືອງ < ແຂວງ < ຊື່ປະເທດ |

| | |
|---|---|
| ເກົາຫຼີ | 대한민국 울산광역시 중구 종가로 345<br>ສ.ເກົາຫລີ ແຂວງອູລຊານ ເມືອງຈົງກູ ຖະໜົນຈົງກາ ຕຶກເລກທີ 345 |
| | 나라명 > 도시 > 구 > 도로명 > 번지<br>ຊື່ປະເທດ > ແຂວງ > ເມືອງ > ຊື່ຖະໜົນ > ເຮືອນເລກທີ |

ຮູບແບບການຂຽນວັນ ເວລາໃນພາສາລາວແມ່ນຈະຂຽນລຽງຕາມລຳດັບ ຄື 'ວັນທີ ເດືອນ ປີ' ແຕ່ພາສາເກົາຫລີແມ່ນຂຽນກົງກັນຂ້າມກັນ ຄື 'ປີ ເດືອນ ວັນທີ' ຕາມລຳດັບ.



| | |
|---|---|
| ລາວ | ວັນທີ 8 ເດືອນ 5 ປີ 2019 |
| | ວັນທີ < ເດືອນ < ປີ |
| ເກົາຫຼີ | 2019년 5월 8일 |
| | ປີ < ເດືອນ < ວັນທີ |

## 3.3 ເພີ່ມເຕີມ

① ຕຳແໜ່ງທີ່ຕັ້ງຂອງສະຫຼະໃນພາສາລາວແມ່ນມີຢູ່ຫຼາຍບ່ອນດ້ວຍກັນຄື: ດ້ານໜ້າ, ດ້ານຫຼັງ, ດ້ານເທິງ ຫຼື ດ້ານລຸ່ມຂອງພະຍັນຊະນະຕົວແກນ. ແຕ່ສະຫຼະໃນພາສາເກົາຫຼີແມ່ນຈະຢູ່ແຕ່ດ້ານລຸ່ມ ຫຼື ດ້ານຂວາຂອງພະຍັນຊະນະຕົວແກນເທົ່ານັ້ນ.

| | |
|---|---|
| ລາວ | ມາ, ມີ, ໝູ່, ແມ່, ເຂົ້າ |
| ເກົາຫຼີ | 마, 모 |

② ໃນພາສາລາວແມ່ນຈະບໍ່ຍະວ່າງລະຫວ່າງຄຳຢູ່ໃນປະໂຫຍກຄືກັບພາສາເກົາຫຼີແຕ່ຈະຍະວ່າງ ລະຫວ່າງປະໂຫຍກໜ້າກັບປະໂຫຍກຫຼັງອອກຈາກກັນ. ໃນພາສາລາວກໍລະນີທີ່ຢາກຈະຍະວ່າງແມ່ນຈະໃຊ້ເຄື່ອງໝາຍ '?' ເຄື່ອງໝາຍຖາມ, '.' ເຄື່ອງໝາຍຈ້ຳ, '!' ເຄື່ອງໝາຍຢືນ, ໆລໆ ເປັນຕົ້ນ ມານຳໃຊ້ຄືກັນກັບພາສາເກົາຫຼີ.



# 31 우리 고향은 서울보다 공기가 맑아요

ອາກາດຢູ່ບ້ານເກີດຂອງຂ້ອຍ ແມ່ນແຈ່ມໃສຫຼາຍກວ່າເຊອູນ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ສຳນວນກ່ຽວກັບອາກາດ, ການປຽບທຽບ |
| □ ໄວຍາກອນ | –지만, 보다 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ອາກາດ, ລັກສະນະພິເສດຂອງເມືອງ |
| □ ຂໍ້ມູນກ່ຽວກັບວັດທະນະທຳ | ໜ່ວຍງານບໍລິຫານ ຕົວເມືອງຂອງເກົາຫຼີ |



## 대화 1 ບົດສົນທະນາ 1






ບາຣູ ແລະ ຈອນມິນ ກຳລັງສົນທະນາກັນໃນຂະນະ ທີ່ເບິ່ງອອກໄປທາງນອກຫ້ອງຢູ່. ທັງສອງຄົນກຳລັງສົນທະນາຫຍັງກັນຢູ່? ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

**바루** 철민 씨, 밖을 보세요. 지금 눈이 와요. 우와, 신기해요.
ຈອນມິນ, ເບິ່ງໄປທາງນອກແມ້. ຕອນນີ້ ຫິມະກຳລັງຕົກ. ວ້າວ, ໜ້າອັດສະຈັນເນາະ.

**철민** 바루 씨는 눈을 처음 봐요?
ບາຣູ ເຫັນຫິມະຕົກເທື່ອທຳອິດບໍ?

**바루** 네, 우리 고향은 일 년 내내 더워요. 12월에도 최저기온이 20도 정도라서 바닷가에 가서 수영도 할 수 있어요.
ແມ່ນແລ້ວ, ຢູ່ບ້ານເກີດຂອງຂ້ອຍ ແມ່ນອາກາດຮ້ອນໝົດປີ.

**철민** 정말요? 바루 씨 고향에 여행 가고 싶네요.
ແທ້ບໍ? ຂ້ອຍຢາກໄປທ່ຽວຢູ່ບ້ານເກີດຂອງ ບາຣູ ເດ.

**바루** 겨울에는 비가 많이 와서 습해요. 여행을 하려면 여름에 가세요. 기온은 높지만 비가 오지 않아서 여행가기 좋아요.
ໃນລະດູໜາວ ແມ່ນມີຝົນຕົກຫຼາຍ ແລະ ມີຄວາມຊຸ່ມ. ຖ້າຢາກທ່ອງທ່ຽວ ແມ່ນຄວນໄປຊ່ວງລະດູຮ້ອນ. ເຖິງແມ່ນວ່າ ອຸນຫະພູມຈະສູງ ແຕ່ວ່າ ບໍ່ມີຝົນຕົກຈຶ່ງເຮັດໃຫ້ການທ່ອງທ່ຽວໃນຊ່ວງນີ້ແມ່ນດີ.

**정도** ປະມານ
ສາມາດໃຊ້ຄືກັບ ຄຳວ່າ '쯤' ໄດ້.
- 집에서 회사까지 30분 정도 걸려요.
  ແຕ່ເຮືອນຂອງຂ້ອຍ ຫາຫ້ອງການແມ່ນໃຊ້ເວລາ 30 ນາທີ.
- 한국에서 산 지 1년 정도 됐어요.
  ຂ້ອຍອາໄສຢູ່ເກົາຫຼີເປັນເວລາປະມານ 1 ປີແລ້ວ.

**신기하다** ມະຫັດສະຈັນ, ປະຫຼາດໃຈ
- 외국인인데 한국 사람처럼 한국말을 하니까 정말 신기해요.
  ເຖິງວ່າ ຈະເປັນຄົນຕ່າງດ້າວ ແຕ່ເວົ້າພາສາເກົາຫຼີໄດ້ຄືກັບຄົນເກົາຫຼີ ເລີຍ, ເປັນໜ້າມະຫັດສະຈັນແທ້ໆ.
- TV에서 마술을 하는 것을 봤는데 아주 신기했어요.
  ຂ້ອຍໄດ້ເບິ່ງມາຍາກົນຢູ່ໂທລະພາບ ເຊິ່ງມັນເປັນຕາມະຫັດສະຈັນແທ້ໆ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 두 사람은 지금 무엇을 보고 있어요? ທັງສອງຄົນ ແມ່ນກຳລັງເບິ່ງຫຍັງ?
2. 바루 씨의 고향은 날씨가 어때요? ອາກາດຢູ່ບ້ານເກີດຂອງ ບາຣູ ແມ່ນເປັນຄືແນວໃດ?

정답 1. 눈 오는 것을 보고 있어요. 2. 일 년 내내 더워요.



## 어휘 1 ຄຳສັບ 1   날씨 ອາກາດ

ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ດິນຟ້າອາກາດ. ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່ບໍ?

| | | | |
|---|---|---|---|
| 기온<br>ອຸນຫະພູມ | 영상<br>ສູງກວ່າສູນ | 영하<br>ຕໍ່າກວ່າສູນລົງມາ(ອາກາດຕິດລົບ) | 습도<br>ລະດັບຄວາມຊຸ່ມ |
| 최고기온<br>ອຸນຫະພູມສູງສຸດ | 최저기온<br>ອຸນຫະພູມຕໍ່າສຸດ | 기온이 높다<br>ອຸນຫະພູມສູງ | 기온이 낮다<br>ອຸນຫະພູມຕໍ່າ |
| 기온이 올라가다<br>ອຸນຫະພູມສູງ | 기온이 내려가다<br>ອຸນຫະພູມຕໍ່າລົງ | 습하다<br>ມີຄວາມຊຸ່ມ | 건조하다<br>ແຫ້ງ |



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.



① ② ③ ④ ⑤

㉠ 영상   ㉡ 최고기온   ㉢ 습도   ㉣ 최저기온   ㉤ 영하

정답 ①㉡ ②㉢ ③㉣ ④㉤ ⑤㉠

## 문법 1 ໄວຍາກອນ 1 -지만


G31-1

'-지만' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມເພື່ອເຊື່ອມຕໍ່ສອງປະໂຫຍກເຂົ້າກັນເຊິ່ງເນື້ອໃນຂອງປະໂຫຍກຫຼັງກົງກັນຂ້າມກັບປະໂຫຍກໜ້າ. ໃນກໍລະນີ ຖ້າເປັນຄຳນາມເຮົາໃຊ້ '(이)지만'.

- 가: 수루 씨 고향의 여름 날씨는 어때요? ອາກາດຂອງລະດູຮ້ອນຢູ່ບ້ານເກີດຊູລູ ເປັນແນວໃດ?
  나: 30도까지 기온이 **올라가지만** 습도가 낮아서 많이 덥지 않아요.
  ອຸນນະພູມສູງຮອດ 30 ອົງສາ ແຕ່ຍ້ອນມີຄວາມຊຸ່ມຊື່ນຕໍ່າ ເລີຍບໍ່ຮ້ອນຫຼາຍ.
- 가: 인디카 씨 고향은 서울하고 비슷해요? ບ້ານເກີດຂອງອິນດິຄາແມ່ນຄ້າຍຄືກັນກັບຊໍອຸລບໍ່?
  나: 아니요, 서울에는 사람이 **많지만** 우리 고향에는 사람이 별로 없어요.
  ບໍ່, ຢູ່ຊໍອຸລມີຄົນຫລາຍ ແຕ່ຢູ່ບ້ານເກີດຂອງຂ້ອຍມີຄົນໜ້ອຍ.



### 대조적 정보 ການປຽບທຽບ

'-지만/(이)지만' ມີຄວາມໝາຍວ່າ 'ແຕ່' ທັງສອງແມ່ນໃຊ້ເຊື່ອມຕໍ່ສອງປະໂຫຍກທີ່ມີເນື້ອໃນກົງກັນຂ້າມກັນ. ກໍລະນີ ເປັນຄຳນາມເຮົາໃຊ້ '(이)지만' ສ່ວນພາສາລາວແມ່ນຕື່ມພຽງແຕ່ຄຳວ່າ 'ແຕ່' ໃສ່ລະຫວ່າງກາງປະໂຫຍກໜ້າ ແລະ ປະໂຫຍກຫຼັງ, ໂດຍບໍ່ຈຳແນກວ່າຄຳເຫຼົ່ານັ້ນແມ່ນຄຳກຳມະ, ຄຳຄຸນນາມ, ຄຳນາມ ຫຼືບໍ່.

- 제 아빠는 **크지만** 엄마는 작아요. ພໍ່ຂ້ອຍສູງ ແຕ່ແມ່ຂ້ອຍເຕ້ຍ.
- 영어는 **재미있지만** 수학은 어려워요. ຂ້ອຍບໍ່ເກັ່ງພາສາເກົາຫຼີ ແຕ່ມັກລະຄອນເກົາຫຼີ.



ເຂົ້າໃຈການໃຊ້ '-지만' ແລ້ວບໍ? ສະນັ້ນ, ຈົ່ງເບິ່ງຮູບພາບ ແລ້ວຕື່ມຄຳເວົ້າທີ່ເໝາະສົມ ໃສ່ບ່ອນຫວ່າງ ເພື່ອເຮັດໃຫ້ບົດສົນທະນາຄົບຖ້ວນ.

**2. 그림을 보고 '-지만'을 사용해서 대화를 완성하세요.** ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ '-지만'.

1) 여름 겨울

가: 한국은 겨울에도 습해요? ໃນລະດູໜາວ ຢູ່ເກົາຫຼີ ອາກາດກໍຊຸ່ມບໍ?
나: 아니요, 여름에는 ______________ 겨울에는 ______________.
ບໍ່, ໃນລະດູຮ້ອນ ແມ່ນມີອາກາດຊຸ່ມ ແຕ່ວ່າ ໃນລະດູໜາວອາກາດບໍ່ຊຸ່ມ.

2) 낮 밤

가: 투안 씨 고향 날씨는 어때요? ຕວນ, ອາກາດຢູ່ບ້ານເກີດຂອງເຈົ້າ ເປັນແນວໃດ?
나: 낮에는 ______________ 밤에는 ______________.
ເຖິງວ່າອາກາດຮ້ອນ ຕອນກາງເວັນ, ແຕ່ວ່າ ຕອນກາງຄືນ ອາກາດແມ່ນເຢັນສະບາຍ.

정답 1. 습하지만, 습하지 않아요 2. 덥지만, 시원해요



ພວກເຮົາ ລອງມາຮຽນເພີ່ມເຕີມອີກໜ້ອຍໜຶ່ງບໍ? ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ '-지만'.

1. 운동화는 ___________ 구두는 불편해요.
2. 오전에는 비가 ___________ 지금은 안 와요.
3. 시장은 ___________ 공원은 가까워요.
4. 저는 기타를 못 ___________ 피아노는 칠 수 있어요.

정답 1. 편하지만 2. 왔지만 3. 멀지만 4. 치지만



## 대화 2 ບົດສົນທະນາ 2

Track 98



ຄານ ໄດ້ຂີ່ລົດແທັກຊີ. ລາວເວົ້າຫຍັງກັບລຸງຄົນຂັບລົດແທັກຊີ? ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ.

**택시 기사** 어서 오세요.
ສະບາຍດີ(ຍິນດີຕ້ອນຮັບ).

**칸** 신도림으로 가 주세요.
ໄປ ຊິນໂດຣິມເດີ.

**택시 기사** 네, 알겠습니다. 그런데 어디에서 오셨어요?
ເຈົ້າ, ເຂົ້າໃຈແລ້ວ. ແຕ່ວ່າ ເຈົ້າມາຈາກໃສ?

**칸** 캄보디아에서 왔어요.
ຂ້ອຍມາຈາກປະເທດ ກໍາປູເຈຍ.

**택시 기사** 아, 캄보디아요? 저도 한 번 여행을 가 봤는데 정말 좋았어요. 공기도 맑고 시끄럽지 않고요.
ອ່າ, ປະເທດ ກໍາປູເຈຍບໍ? ຂ້ອຍ ກໍເຄີຍໄປທ່ຽວເທື່ອໜຶ່ງ ເຊິ່ງມັນດີຫຼາຍ. ອາກາດກໍແຈ່ມໃສ ແລະ ບໍ່ຟົດນັນ.

**칸** 네, 우리 고향은 서울보다 인구도 적고 조용해요. 그래서 처음 서울에 왔을 때는 사람이 너무 많아서 깜짝 놀랐어요.
ເຈົ້າ, ບ້ານເກີດຂອງຂ້ອຍ ແມ່ນມີປະຊາກອນໜ້ອຍກ່ວານະຄອນຫຼວງເຊອູນ ແລະ ກໍມິດງຽບ. ສະນັ້ນ, ເວລາທີ່ຂ້ອຍມານະຄອນຫຼວງເຊອູນ ເທື່ອທໍາອິດກໍຕົກໃຈຫຼາຍ ຍ້ອນວ່າມີຄົນຫຼາຍ.

> 어디에서 오셨어요?
> ເຈົ້າ ມາຈາກໃສ?
> - 가: 어디에서 오셨어요?
>   ເຈົ້າ ມາຈາກໃສ?
>   나: 라오스에서 왔어요.
>   ຂ້ອຍມາຈາກ ປະເທດລາວ.

> 깜짝 놀라다 ຕົກໃຈຫຼາຍ, ຕົກໃຈແຮງ
> ສິ່ງປະຫຼາດໃຈ ທີ່ເກີດຂຶ້ນ ທີ່ບໍ່ເຄີຍຄາດຄິດໄວ້.
> - 한국에서 일하는 친구가 한국어를 너무 잘해서 깜짝 놀랐어요.
>   ຍ້ອນໝູ່ຂອງຂ້ອຍ ທີ່ເຮັດວຽກຢູ່ເກົາຫຼີ ເວົ້າພາສາເກົາຫຼີ ໄດ້ດີຫຼາຍຂ້ອຍເລີຍຕົກໃຈແຮງ.
> - 노이 씨가 갑자기 고향으로 돌아간다고 해서 깜짝 놀랐어요.
>   ນ້ອຍ ຢູ່ດີໆກໍກັບບ້ານເກີດຂອງລາວ ເຮັດໃຫ້ຂ້ອຍຕົກໃຈຫຼາຍ.

ຄັ້ງນີ້ ລອງສວມບົດບາດເປັນ ຄານ ແລະ ໂຊເຟີລົດແທັກຊີ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄໍາຖາມຕໍ່ໄປນີ້.

1. 칸 씨는 어디에서 왔어요? ຄານ ມາຈາກໃສ?
2. 칸 씨의 고향은 어때요? ບ້ານເກີດຂອງ ຄານ ແມ່ນຢູ່ໃສ?

정답 1. 캄보디아에서 왔어요. 2. 서울보다 인구가 적고 조용해요.



## 어휘 2 ຄຳສັບ 2 — 도시의 특성 ລັກສະນະພິເສດ ຂອງຕົວເມືອງ



ສຳນວນທີ່ກ່ຽວຂ້ອງກັບ ຈຸດພິເສດຂອງຕົວເມືອງ ມີຫຍັງແດ່ ລອງໄປເບິ່ງນຳກັນບໍ?



인구가 많다
ປະຊາກອນຫຼາຍ



인구가 적다
ປະຊາກອນໜ້ອຍ



복잡하다
ສັບສົນ, ວຸ້ນວາຍ



한적하다
ງຽບສະຫງົບ

교통이 편리하다
ການຄົມມະນາຄົມ ສະດວກສະບາຍ

교통이 불편하다
ການຄົມມະນາຄົມ ບໍ່ສະດວກສະບາຍ, ການຄົມມະນາຄົມ ມີຄວາມຫຍຸ້ງຍາກ



시끄럽다
ສຽງດັງ, ຟົດບັນ



조용하다
ມິດງຽບ





공기가 맑다
ອາກາດ ປອດໂປ່ງແຈ່ມໃສ



유명하다
ມີຊື່ສຽງ



친절하다
ໃຈດີ

- 출퇴근 시간에는 항상 교통이 **복잡해요**. ເວລາເຂົ້າ-ເລີກການ ການຄົມມະນາຄົມ ແມ່ນມີຄວາມສັບສົນວຸ້ນວາຍຕະຫຼອດ.
- 지금 살고 있는 집은 지하철역에서 가까워서 교통이 **편리해요**.
  ບ້ານທີ່ອາໄສຢູ່ປະຈຸບັນ ແມ່ນຢູ່ໃກ້ກັບສະຖານີລົດໄຟຟ້າໃຕ້ດິນ ເຮັດໃຫ້ການຄົມມະນາຄົມ ສະດວກສະບາຍ.



ຈົ່ງຄຶດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요. ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.



1) ______



2) ______




3) ______



4) ______



5) ______





6) ______





7) ______



8) ______



보기: 한적하다 / 시끄럽다 / 인구가 적다 / 교통이 편리하다 / 복잡하다 / 교통이 불편하다 / 인구가 많다 / 친절하다

정답 1) 인구가 많다 2) 복잡하다 3) 교통이 편리하다 4) 시끄럽다
5) 인구가 적다 6) 한적하다 7) 교통이 불편하다 8) 친절하다

## 문법 2 ໄວຍາກອນ 2　보다

 G31-2

'보다' ມັນຖືກໃຊ້ຕື່ມທ້າຍຄຳນາມ ເພື່ອນຳມາເປັນຕົວປຽບທຽບກັບຄຳນາມທາງໜ້າເຊິ່ງມີຄວາມໝາຍວ່າ 'ກວ່າ'.

- 가: 모니카 씨의 고향은 **서울보다** 커요? ບ້ານເກີດຂອງໂມນິຄາໃຫຍ່ກວ່າຊໍອຸລບໍ?
  나: 아니요, **서울보다** 작아요. ບໍ່, ນ້ອຍກວ່າຊໍອຸລ.
- 가: 오늘 날씨가 참 춥네요. ມື້ນີ້ ອາກາດ(ຈັ່ງແມ່ນ)ໜາວເນາະ.
  나: 네, **어제보다** 기온이 내려갔어요. ແມ່ນແລ້ວ, ອຸນນະພູມຫຼຸດລົງກວ່າມື້ວານນີ້.



### 대조적 정보 ການປຽບທຽບ

ໃນພາສາລາວທີ່ຕັ້ງຂອງຄຳນາມທັງສອງຄຳທີ່ນຳມາປຽບທຽບແມ່ນຈະບໍ່ຄືກັນ. ໃນພາສາເກົາຫລີຄຳນາມ A ແລະ ຄຳນາມ B ຈະຢູ່ ທາງໜ້າ 'ຄຳນາມ A ຄຳນາມ B보다 + V' ໝົດ ແຕ່ໃນພາສາລາວຄຳນາມ A ແມ່ນຢູ່ທາງໜ້າຂອງ'ກວ່າ ແລະຄຳນາມ B ຈະຢູ່ທີ່ທາງຫລັງ 'ຄຳນາມ A + V ກວ່າ + ຄຳນາມ B' ໂຄງສ້າງ.

A + ຄຳຄຸນນາມ + ກວ່າ + B

- 수박이 **사과보다** 커요. ໝາກໂມໃຫຍ່ກວ່າໝາກແອັບເປີ້ນ.
- 기차가 **버스보다** 빨라요. ລົດໄຟໄວກວ່າລົດເມ.



ເຂົ້າໃຈການໃຊ້ '보다' ແລ້ວບໍ? ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

2. 그림을 보고 대화를 완성하세요. ຈົ່ງເບິ່ງຮູບພາບ ແລ້ວເຮັດໃຫ້ບົດສົນທະນາຄົບຖ້ວນ.

1)


고향


서울

가: 투안 씨 고향은 인구가 많아요? ຢູ່ບ້ານເກີດ ຂອງຕວນ ແມ່ນມີປະຊາກອນຫຼາຍບໍ?
나: 아니요, 서울보다 ______________________.
ບໍ່, ໜ້ອຍກວ່າຢູ່ ນະຄອນຫຼວງເຊອູນ.

2)



어제



오늘

가: 오늘은 날씨가 어때요? ມື້ນີ້ ອາກາດເປັນແນວໃດ?
나: 어제보다 ______________________.
ເຢັນສະບາຍກວ່າມື້ວານ.

정답 1) 적어요 2) 시원해요



ພວກເຮົາລອງມາຮຽນເພີ່ມເຕີມອີກໜ້ອຍໜຶ່ງບໍ? ຈົ່ງຕອບຄຳຖາມ ໂດຍການໃຊ້ '보다'.

1. 봄이 좋아요, 가을이 좋아요?
2. 라오스가 커요, 한국이 커요?
3. 백화점 물건이 비싸요, 시장 물건이 비싸요?
4. 운동을 잘해요, 노래를 잘해요?

## 활동 ກິດຈະກຳ

〈보기〉처럼 메모를 한 후에 고향을 소개해 보세요.

ຈົ່ງຈົດບັນທຶກສະຫຼຸບແລ້ວ ແນະນຳກ່ຽວກັບບ້ານເກີດຂອງຕົນເອງ ຄືດັ່ງຕົວຢ່າງ.

보기 ຕົວຢ່າງ

| 필리핀 보라카이<br>ໂບຣາຄາຍ, ຟີລິບປິນ | |
|---|---|
| 최고기온<br>ອຸນຫະພູມສູງສຸດ | 38도<br>38 ອົງສາ |
| 최저기온<br>ອຸນຫະພູມຕ່ຳສຸດ | 20도<br>20 ອົງສາ |
| 습도<br>ຄວາມຊຸ່ມ | 높다<br>ສູງ |
| 특징<br>ລັກສະນະພິເສດ,<br>ລັກສະນະສະເພາະ | 인구가 적다<br>ປະຊາກອນໜ້ອຍ<br>조용하다<br>ມິດງຽບ<br>바다가 유명하다<br>ທະເລທີ່ມີຊື່ສຽງ |

가: 고향이 어디예요?
ບ້ານເກີດຂອງເຈົ້າຢູ່ໃສ?

나: 제 고향은 필리핀 보라카이예요.
ບ້ານເກີດຂອງຂ້ອຍຢູ່ ໂບຣາຄາຍ ປະເທດ ຟີລິບປິນ.

가: 보라카이 날씨는 어때요?
ອາກາດຢູ່ ໂບຣາຄາຍ ເປັນແນວໃດ?

나: 서울보다 더워요. 최고기온은 38도 정도이고 최저기온은 20도 정도예요.
ຮ້ອນກວ່າ ນະຄອນຫຼວງເຊອຸນ. ອຸນຫະພູມສູງສຸດ ແມ່ນປະມານ 38 ອົງສາ ແລະ ອຸນຫະພູມຕ່ຳສຸດແມ່ນປະມານ 20 ອົງສາ.

가: 습도도 높아요?
ຄວາມຊຸ່ມກໍສູງບໍ?

나: 네, 서울보다 습도가 높아요.
ເຈົ້າ, ມີຄວາມຊຸ່ມສູງກວ່າ ນະຄອນຫຼວງເຊອູນ.

가: 보라카이는 어떤 곳이에요?
ໂບຣາຄາຍແມ່ນສະຖານທີ່ແບບໃດ?

나: 제 고향은 서울보다 인구도 적고 조용해요. 그리고 바다가 유명해서 관광객이 많이 와요.
ບ້ານເກີດຂອງຂ້ອຍ ແມ່ນມີປະຊາກອນໜ້ອຍກວ່ານະຄອນຫຼວງເຊອຸນ ແລະ ທະເລກໍມີຊື່ສຽງ ສະນັ້ນ ນັກທອງທ່ຽວຈຶ່ງມາທ່ຽວຫຼາຍ.

| 고향 | |
|---|---|
| 최고기온 | |
| 최저기온 | |
| 습도 | |
| 특징 | |

# 한국의 행정구역

ເຂດການປົກຄອງຂອງເກົາຫຼີ

한국은 1개의 특별시(서울), 6개의 광역시(부산, 인천, 대구, 광주, 대전, 울산), 8개의 도(경기도, 강원도, 충청북도, 충청남도, 전라북도, 전라남도, 경상북도, 경상남도), 1개의 특별자치시(세종시), 1개의 특별자치도(제주도)로 이루어져 있습니다.

ປະເທດເກົາຫຼີ ປະກອບດ້ວຍ 1 ເມືອງ ພິເສດ(ນະຄອນຫຼວງເຊອູນ), ເມືອງໃຫຍ່ 6 ເມືອງ(ບູຊານ, ອິນຊອນ, ແດກູ, ກວາງຈູ, ແດຈອນ, ອຸລຊານ), 8 ແຂວງ(ແຂວງ ກຶຢອງກິ, ແຂວງ ຄັງວອນ, ແຂວງ ຈຸງຈອນເໜືອ, ແຂວງ ຈຸງຈອນໃຕ້, ແຂວງ ຈອນລາ ເໜືອ, ແຂວງ ຈອນລາໃຕ້, ແຂວງ ກຶຢອງຊັງເໜືອ, ແຂວງ ກຶຢອງຊັງໃຕ້), 1 ເມືອງ ປົກຄອງຕົນເອງ(ເມືອງເຊຈົງ)ແລະ 1 ແຂວງປົກ ຄອງຕົນເອງພິເສດ(ເກາະເຈຈູ).

경기도와 인천광역시는 서울과 함께 '수도권'으로 불리는데, 이곳에는 대한민국 인구의 절반을 넘는 사람들이 살고 있습니다. 강원도는 80%가 산지이고 바다도 있어 관광객들이 많이 찾는 곳입니다. 충청도는 중부 지방과 남부 지방을 이어 주는 역할을 하는 곳으로 교통이 편리하고 과학과 행정의 중심지입니다. 전라도는 한국의 최대 쌀 생산지로 전주, 광주 등의 도시가 유명합니다. 이곳에는 맛있는 음식이 많은 것으로도 유명해 관광객들이 많이 찾습니다. 경상도는 대구, 울산, 부산 등의 광역시가 모여 있어 바다를 중심으로 공업이 많이 발달했습니다. 경주는 신라의 수도였던 곳으로 전통 문화가 많이 남아 있어 세계 문화유산으로 지정되었습니다. 한국의 대표적인 관광지인 제주도는 독특한 자연환경과 문화를 간직한 곳으로 국제 자유 도시로 지정해 한국뿐만 아니라 외국에서도 많이 찾는 관광지로 거듭나고 있습니다.

ແຂວງ ກຶຢອງກິ ແລະ ເມືອງ ອິນຊອນ ແມ່ນຖືກແບ່ງຢູ່ໃນກຸ່ມ ເຂດນະຄອນຫຼວງດຽວກັບ ນະຄອນຫຼວງເຊອູນ ເຊິ່ງມີປະຊາ ກອນຫຼາຍກວ່າເຄິ່ງໜຶ່ງ ຂອງປະຊາກອນທັງໝົດອາໄສຢູ່ນີ້. 80%ຂອງແຂວງຄັງວອນ ເປັນເຂດພູ ແລະ ມີທັງທະເລ ຈຶ່ງເຮັດໃຫ້ມີນັກທ່ອງທ່ຽວໄປທ່ຽວຫຼາຍ. ແຂວງ ຈຸງຈອນ ແມ່ນເຮັດບົດບາດໃນການເຊື່ອມຕໍ່ ເຂດຕອນກາງ ແລະ ຕອນໃຕ້ຂອງເກົາຫຼີ ເຊິ່ງມີການຄົມມະນາຄົມທີ່ສະດວກສະບາຍ ແລະ ເປັນສູນກາງທາງວິທະຍາສາດ ແລະ ການບໍລິຫານ. ສຳລັບ ແຂວງຈອນລາແມ່ນເປັນ ເຂດຜະລິດເຂົ້າທີ່ຫຼາຍທີ່ສຸດ, ສ່ວນຈອນຈູ ແລະ ກວາງຈູ ກໍເປັນເມືອງທີ່ມີຊື່ສຽງ. ຢູ່ເຂດ ນີ້ແມ່ນ ແມ່ນມີຊື່ສຽງ ດ້ານອາຫານທີ່ແຊບ ເຮັດໃຫ້ມີນັກທ່ອງທ່ຽວ ໄປທ່ຽວຫຼາຍ. ແຂວງກຶຢອງຊັງ ລວມ ມີນະຄອນແດກູ, ອຸລ ຊານ ແລະ ບູຊານຢູ່ ເຊິ່ງ ເປັນເມືອງທີ່ໃກ້ກັບທະເລ ແລະ ມີການພັດທະນາດ້ານອຸດສະຫະກຳຫຼາຍ. ສຳລັບເມືອງກຶຢອງ ຈູ ແມ່ນເຄີຍເປັນເມືອງຫຼວງໃນຍຸກ ຊິນລາ ເຮັດໃຫ້ ມີວັດທະນະທຳ ແລະ ປະເພນີຫຼົງເຫຼືອຢູ່ຫຼາຍ ແລະ ຖືກຂະໜານນາມ ໃຫ້ເປັນມໍລະດົກ ດ້ານວັດທະນະທຳ ຂອງໂລກ. ເກາະເຈຈູ ແມ່ນມີຄວາມ ພິເສດດ້ານ ສະພາບແວດລ້ອມທີ່ເປັນທຳມະຊາດແລະ ວັດທະ ນະທຳ ເຊິ່ງມີການເປີດໃຫ້ຕ່າງຊາດເຂົ້າມາແບບບໍ່ໃຊ້ວີຊ່າກໍໄດ້ ເຮັດໃຫ້ບໍ່ມີພຽງແຕ່ຄົນເກົາຫຼີແຕ່ຄົນຕ່າງ ຊາດຈຳນວນຫຼາຍກໍນິຍົມໄປທ່ອງທ່ຽວ.





## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງຟັງໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~3] 잘 듣고 내용과 관계있는 그림을 고르십시오.

ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງກັບເນື້ອໃນ.

Track 99

1. 

① 

②  

③ 

④ 

2. ① 

② 

③ 

④ 

3. ① 

② 

③ 

④ 




ຕໍ່ໄປນີ້ ເປັນການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນຈະຟັງບົດສົນທະນາ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບອີກຄັ້ງໜຶ່ງກ່ອນ.

[4~5] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

4. ① 오늘은 덥고 습해요.
   ② 30도까지 올라갈 거예요.
   ③ 어제가 오늘보다 추웠어요.
   ④ 기온이 높지만 바람이 많이 불어요.

5. ① 네, 인구가 적고 조용해요.
   ② 네, 바다가 아주 유명해요.
   ③ 아니요, 서울보다 한적해요.
   ④ 아니요, 복잡하지만 공기가 맑아요.



### 듣기 대본 ເນື້ອໃນບົດຟັງ

1. 남: 오늘 날씨는 어때요? ມື້ນີ້ອາກາດເປັນແນວໃດ?
   여: 건조해요. ອາກາດແຫ້ງ.
2. 여: 투안 씨 고향은 서울하고 비슷해요? ຕວນ, ບ້ານເກີດຂອງເຈົ້າ ກັບ ນະຄອນຫຼວງເຊອູນ ແມ່ນຄ້າຍຄືກັນບໍ?
   남: 아니요, 서울보다 인구가 적어서 훨씬 조용해요.
   ບໍ່, ມີປະຊາກອນໜ້ອຍກ່ວາ ນະຄອນຫຼວງເຊອູນ ຈຶ່ງເຮັດໃຫ້ມັນງຽບກ່ວາຫຼາຍ.
3. 남: 서울은 교통이 편리해서 버스나 지하철을 타면 어디든지 갈 수 있습니다.
   ການຄົມມະນາຄົມຢູ່ ນະຄອນຫຼວງເຊອູນ ແມ່ນມີຄວາມສະດວກສະບາຍ, ພຽງແຕ່ຂີ່ລົດເມ ຫຼື ລົດໄຟຟ້າໃຕ້ດິນ ກໍເຮັດໃຫ້ສາມາດໄປທຸກບ່ອນທີ່ຕ້ອງການໄປໄດ້.
4. 여: 오늘 최고기온은 몇 도예요? ອຸນຫະພູມສູງສຸດ ຂອງມື້ນີ້ແມ່ນຈັກອົງສາ?
5. 남: 모니카 씨 고향은 복잡해요? ໂມນິກາ, ບ້ານເກີດຂອງເຈົ້າມີຄວາມສັບສົນວຸ້ນວາຍບໍ?

정답 1. ② 2. ③ 3. ④ 4. ② 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

L-31

1. 질문을 듣고 알맞은 대답을 고르십시오. ຈົ່ງຟັງ ແລະ ເລືອກເອົາຄຳຕອບທີ່ເໝາະສົມ.

   ① 저는 눈을 처음 봐요.
   ② 따뜻하게 입어야겠어요.
   ③ 일 년 내내 더운가 봐요.
   ④ 우산을 가지고 나가세요.

2. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລະ ເລືອກເອົາຄຳຕອບ ທີ່ຖືກຕ້ອງກັບຄຳຖາມ.

   여자의 고향 날씨는 어떻습니까? ອາກາດຢູ່ບ້ານເກີດ ຂອງຜູ້ຍິງຄົນນັ້ນ ແມ່ນເປັນແນວໃດ?

   ① 추워요.
   ② 시원해요.
   ③ 비가 자주 와요.
   ④ 눈이 많이 와요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 내일은 기온이 영하로 내려갈 거예요. ມື້ອື່ນ ອຸນຫະພູມຈະຫຼຸດລົງຕ່ຳກ່ວາສູນອົງສາ.
2. 남: 모니카 씨 고향은 날씨가 어때요? ໂມນິກາ, ອາກາດຢູ່ບ້ານເກີດຂອງເຈົ້າເປັນແນວໃດ?
   여: 일 년 내내 덥고 아주 습해요. 비가 자주 내리거든요. 눈은 한국에 와서 처음 봤어요.
   ອາກາດຮ້ອນ ແລະ ຊຸ່ມຕະຫຼອດປີ. ຍ້ອນວ່າມີຝົນຕົກຫຼາຍ. ຂ້ອຍມາ ເກົາຫຼີ ຈຶ່ງເຫັນຫິມະ ເປັນຄັ້ງທຳອິດ.
   남: 그래요? 제 고향은 여름에는 덥고 습하지만 겨울에는 눈이 많이 와요.
   ແມ່ນບໍ? ບ້ານເກີດຂອງຂ້ອຍ ເຖິງວ່າຈະມີອາກາດຮ້ອນ ແລະ ຊຸ່ມ ໃນລະດູແລ້ງ, ແຕ່ລະດູໜາວ ແມ່ນມີຝົນຕົກຫຼາຍ.

정답 1. ② 2. ③



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 3 ແມ່ນເປັນການເລືອກເອົາຄຳສັບ ທີ່ເໝາະສົມ ຕື່ມໃສ່ບ່ອນຫວ່າງ. ຈົ່ງເລືອກເອົາຄຳສັບທີ່ເໝາະສົມກັບເນື້ອໃນ.

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 우리 고향은 일 년 내내 따뜻합니다. 평균 기온은 보통 25도 정도이고 ________로 내려가는 날이 없어서 눈이 오지 않습니다.
ບ້ານເກີດຂອງຂ້ອຍ ແມ່ນມີອາກາດອົບອຸ່ນຕະຫຼອດປີ. ອຸຫະພູມສະເລ່ຍ ໂດຍປົກກະຕິແມ່ນ ປະມານ 25 ອົງສາ ແລະ ບໍ່ມີອາກາດທີ່ຫຼຸດລົງຕ່ຳກ່ວາສູນ ຈຶ່ງເຮັດໃຫ້ບໍ່ມີຫິມະຕົກ.

① 날씨 ② 영하 ③ 온도 ④ 습도

2. 가: 가장 기온이 낮을 때는 몇 도까지 내려가요?
ເວລາທີ່ອຸນຫະພູມຕ່ຳທີ່ສຸດ ແມ່ນປະມານຈັກອົງສາ?
나: 우리 고향의 ________은/는 15도 정도예요.
ອຸນຫະພູມຕ່ຳສຸດ ຢູ່ບ້ານເກີດຂອງຂ້ອຍແມ່ນປະມານ 15 ອົງສາ.

① 습도 ② 영상 ③ 최고기온 ④ 최저기온

3. 가: 한국은 여름에 비가 많이 와요? ລະດູຮ້ອນຢູ່ປະເທດເກົາຫຼີ ແມ່ນມີຝົນຕົກຫຼາຍບໍ?
나: 네, 비가 많이 와서 ________이/가 높아요. ເຈົ້າ, ມີຝົນຕົກຫຼາຍ ເຮັດໃຫ້ມີ ຄວາມຊຸ່ມສູງ.

① 습도 ② 날씨 ③ 최고기온 ④ 최저기온



ຕໍ່ໄປແມ່ນການອ່ານບົດເລື່ອງໜຶ່ງ ແລ້ວຕອບຄຳຖາມສອງຂໍ້. ຈົ່ງຄິດທົບທວນບົດຮຽນ ທີ່ຮຽນຜ່ານມາ ແລ້ວຕອບຄຳຖາມລອງເບິ່ງ.

[4~5] 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວຕອບຄຳຖາມ.

제 고향은 필리핀 보라카이입니다. 보라카이는 제주도보다 작은 섬인데 연평균 기온이 27도 정도로 일 년 내내 따뜻합니다. 그런데 6월부터 10월까지는 비가 많이 와서 습도가 높습니다. 그러니까 여행을 가고 싶으면 11월에서 5월에 가는 것이 좋습니다. 이 때에는 기온은 높지만 습도가 낮아서 여행하기 좋습니다. 보라카이는 연평균 최고기온이 34도이고 최저기온이 20도라서 일 년 내내 바다에 가서 수영할 수 있습니다. 보라카이는 작지만 아주 아름다워서 관광객이 많이 옵니다. 그리고 바다가 아주 유명하니까 보라카이에 오면 바다에 꼭 가 보십시오.

ບ້ານເກີດຂອງຂ້ອຍ ແມ່ນຢູ່ ໂບຣາຄາຍ ປະເທດຟີລິບປິນ. ໂບຣາຄາຍ ແມ່ນເກາະທີ່ນ້ອຍກ່ວາເກາະເຈຈູ ເຊິ່ງເປັນເກາະທີ່ມີອາກາດອົບອຸ່ນຕະຫຼອດປີ, ມີອຸນຫະພູມສະເລ່ຍໝົດປີປະມານ 27 ອົງສາ. ແຕ່ວ່າ ແຕ່ເດືອນ 6 ຫາ ເດືອນ 10 ແມ່ນຝົນຕົກຫຼາຍ ເຮັດໃຫ້ມີຄວາມຊຸ່ມສູງ. ສະນັ້ນ, ຖ້າຕ້ອງການໄປທ່ຽວ ແມ່ນ ການໄປຊ່ວງ ເດືອນ 11 ຫາ ເດືອນ 5 ແມ່ນດີ. ໃນຊ່ວງນີ້ ມີອຸນຫະພູມສູງ ແຕ່ວ່າຄວາມຊຸມຕ່ຳ ຈຶ່ງເໝາະສົມກັບທ່ອງທ່ຽວ. ຢູ່ໂບຣາຄາຍ ມີອຸນຫະພູມສູງສຸດສະເລ່ຍ 34ອົງສາ ແລະ ອຸນຫະພູມຕ່ຳສຸດສະເລ່ຍ 20 ອົງສາ ເຮັດໃຫ້ສາມາດໄປລອຍນ້ຳຢູ່ທະເລ ໄດ້ຕະຫຼອດປີ. ເຖິງວ່າ ໂບຣາຄາຍ ຈະນ້ອຍແຕ່ວ່າມີຄວາມງົດງາມ ເຮັດໃຫ້ມີນັກທ່ອງທ່ຽວຫຼາຍ. ນອກຈາກນີ້, ທະເລແມ່ນມີຊື່ສຽງຫຼາຍ, ໃຜທີ່ໄປທ່ຽວ ໂບຣາຄາຍ ແມ່ນຕ້ອງລອງໄປທະເລ.



4. 이 글은 무엇에 대한 글입니까? ບົດເລື່ອງນີ້ແມ່ນບົດເລື່ອງກ່ຽວກັບຫຍັງ?

① 고향 음식　　② 고향 날씨　　③ 휴가 계획　　④ 여행 경험

5. 보라카이에 대한 설명으로 알맞지 않은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ບໍ່ຖືກຕ້ອງກັບຄຳອະທິບາຍກ່ຽວກັບ ໂບຣາຄາຍນັ້ນ.

① 제주도보다 큽니다.　　② 11월에는 습도가 낮습니다.
③ 1월에도 수영을 할 수 있습니다.　　④ 7월과 8월에는 비가 많이 옵니다.

정답 1. ② 2. ④ 3. ① 4. ② 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ

1. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

> 제 고향은 일 년 내내 춥지 않습니다. 여름에는 평균 32도로 조금 덥습니다. 겨울에는 평균 20도로 따뜻합니다.
>
> ຢູ່ບ້ານເກີດຂອງຂ້ອຍ ແມ່ນອາກາດບໍ່ໜາວ ຕະຫຼອດປີເລີຍ.ໃນລະດູຮ້ອນ ອຸນຫະພູມສະເລ່ຍ 32 ອົງສາ ຂ້ອນຂ້າງ ຮ້ອນໜ້ອຍໜຶ່ງ. ໃນລະດູໜາວ ອຸນຫະພູມປະມານ 20 ອົງສາ ແມ່ນອົບອຸ່ນ.

① 기온　　② 날짜
③ 시간　　④ 요일

2. 다음 글을 읽고 내용과 같은 것을 고르십시오.
ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ກ່ຽວຂ້ອງກັບເນື້ອໃນ.

> 한국에는 사계절이 있습니다. 봄은 따뜻하고 꽃이 많이 핍니다. 여름은 덥고 습도가 높습니다. 그래서 바다에 가서 수영하는 사람이 많습니다. 가을은 바람이 상쾌합니다. 그리고 제일 아름다운 계절이라서 여행하기 좋습니다. 겨울은 날씨가 매우 춥고 눈이 많이 옵니다.
>
> ຢູ່ເກົາຫຼີ ແມ່ນມີ 4 ລະດູ. ລະດູໃບໄມ້ປົ່ງມີອາກາດອົບອຸ່ນ ແລະ ດອກໄມ້ບານ. ລະດູຮ້ອນ ແມ່ນຮ້ອນ ແລະ ມີຄວາມຊຸ່ມສູງ. ສະນັ້ນ ມີຫຼາຍຄົນທີ່ໄປລອຍນ້ຳ ຢູ່ທະເລ. ລະດູໃບໄມ້ຫຼົ່ນ ແມ່ນມີລົມພັດເຢັນດີ ແລະ ເປັນລະດູທີ່ງາມ ທີ່ສຸດ ເຮັດໃຫ້ການທ່ອງທ່ຽວໃນຊ່ວງນີ້ດີ. ລະດູໜາວ ແມ່ນອາກາດໜາວຫຼາຍ ແລະ ມີຫິມະຕົກ.

① 한국의 계절은 날씨가 모두 같습니다.
② 한국에는 봄, 여름, 가을, 겨울이 있습니다.
③ 한국의 여름은 시원해서 사람들이 바다에 갑니다.
④ 한국의 겨울은 사계절 중에서 가장 아름답습니다.

정답 1. ① 2. ②



# 복날에는 삼계탕을 먹어요

ໃນມື້ທີ່ອາກາດຮ້ອນ ພວກເຮົາກິນອາຫານສຳເກັດຕັງ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| ☐ ຈຸດປະສົງໃນການຮຽນ | ຮຽນຮູ້ກ່ຽວກັບວັດທະນະທຳ ທາງດ້ານອາຫານ, ອະທິບາຍວິທີການປຸງແຕ່ງອາຫານເກົາຫຼີ |
| ☐ ໄວຍາກອນ | –(으)ㄴ, –아서/어서 |
| ☐ ຄຳສັບ ແລະ ສຳນວນຄຳເວົ້າ | ອາຫານປະຈຳລະດູ, ສ່ວນປະກອບ ແລະ ວິທີການປຸງແຕ່ງ |
| ☐ ຂໍ້ມູນກ່ຽວກັບວັດທະນາທຳ | ອາຫານທີ່ຮັບປະທານ ໃນວັນທີ່ສຳຄັນຕ່າງໆ |



## 대화 1 ບົດສົນທະນາ 1



Track 100



ຕໍ່ໄປ ແມ່ນບົດສົນທະນາຂອງ ຣີຮັນ ກັບ ຈີຮຸນ; ກ່ອນອື່ນ ຈົ່ງຟັງບົດສົນທະນາ 2 ຄັ້ງ ແລ້ວເວົ້າຕາມ.

리한 오늘 점심 메뉴는 삼계탕이네요.
ເມນູອາຫານສວາຍມື້ນີ້ ແມ່ນ "ຊຳແກທັງ".

지훈 리한 씨, 오늘은 복날이에요. 한국 사람들은 복날에 삼계탕을 먹어요.
ຣີຮັນ ມື້ນີ້ເປັນມື້ທີ່ໂຊກດີ, ຄົນເກົາຫຼີຈະກິນຕົ້ມ "ຊຳແກທັງ" ໃນມື້ທີ່ໂຊກດີ.

리한 정말요? 날씨가 더운데 왜 뜨거운 삼계탕을 먹어요?
ແທ້ບໍ? ອາກາດກໍຮ້ອນ ແຕ່ເປັນຫຍັງຈຶ່ງກິນຕົ້ມ "ຊຳແກທັງ" ຮ້ອນໆ?

지훈 여름에 뜨거운 음식을 먹으면 몸이 따뜻해져서 더위를 이길 수 있어요.
ໃນລະດູຮ້ອນ ຖ້າເຮົາກິນອາຫານຮ້ອນໆ ຈະເຮັດໃຫ້ຮ່າງກາຍເຮົາອົບອຸ່ນ ສາມາດເອົາຊະນະຄວາມຮ້ອນໄດ້.

리한 그래요? 요즘 저도 너무 더워서 힘이 없었는데 잘됐네요.
ແມ່ນບໍ? ຊ່ວງນີ້ອາກາດຮ້ອນຫຼາຍ ຂ້ອຍຮູ້ສຶກວ່າ ບໍ່ມີແຮງປານໃດ ຊັ້ນກໍດີເລີຍເນາະ.

**더위** ຄວາມຮ້ອນ
ອຸນຫະພູມ ທີ່ຮ້ອນໃນຍາມຮ້ອນ.
- 한국은 8월에 더위가 가장 심해요.
  ໃນປະເທດເກົາຫຼີ ຈະຮ້ອນຫຼາຍທີ່ສຸດ ຢູ່ໃນເດືອນ 8.
- 한국에서는 여름에 더위를 잘 견디기 위해서 뜨거운 음식을 먹어요.
  ຢູ່ໃນປະເທດເກົາຫຼີ ມັກຈະກິນອາຫານຮ້ອນໆ ເພື່ອໃຫ້ທົນກັບສະພາບອາກາດຮ້ອນ ໃນລະດູຮ້ອນ.

**잘됐다** ພໍດີເລີຍ, ເຮັດດີແລ້ວ.
ໃຊ້ໃນເວລາ ທີ່ເຮົາສະແດງຄວາມດີໃຈ ແລະ ພໍໃຈເມື່ອການເຮັດວຽກໃດໜຶ່ງດຳເນີນໄປດ້ວຍດີ.
- 가: 시험에 합격해서 한국에서 일할 수 있게 됐어요.
  ສອບເສັງຜ່ານແລ້ວ ສະນັ້ນ ຈະໄດ້ໄປເຮັດວຽກ ຢູ່ປະເທດເກົາຫຼີແລ້ວ.
  나: 잘됐네요. 축하해요.
  ເຮັດດີແລ້ວ, ຂໍສະແດງຄວາມຍິນດີນຳເດີ.
- 가: 다음 달에 고향에 갔다올 거예요. 휴가를 받았거든요.
  ເດືອນໜ້າຈະເມືອຢາມ ບ້ານກ່ອນ, ເພາະວ່າ ໄດ້ເຮັດໃບລາພັກແລ້ວ.
  나: 고향에 다녀온 지 오래 됐는데 잘됐네요.
  ໄປຢາມບ້ານເກີດແຕ່ດົນແລ້ວ ພໍດີເລີຍ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 두 사람은 점심에 뭘 먹어요? ສອງຄົນນີ້ໄດ້ກິນຫຍັງ ໃນຕອນສວຍ?
2. 오늘은 무슨 날이에요? ມື້ນີ້ແມ່ນວັນຫຍັງ?

정답 1. 삼계탕을 먹어요. 2. 복날이에요.





## 어휘 1 ຄຳສັບ 1　　계절 음식 ອາຫານປະຈຳລະດູ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ອາຫານຕາມລະດູການ.ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່ບໍ?



뜨겁다
ຮ້ອນ

**여름 음식** ອາຫານໃນລະດູຮ້ອນ





삼계탕
ຊຳແກທັງ

냉면
ໝີ່ເຢັນ (ແນັງມຢອນ)

**겨울 음식** ອາຫານ ໃນລະດູໜາວ





팥죽
ເຂົ້າຕົ້ມຖົ່ວ

군고구마
ປີ້ງມັນດ້າງ



차다/차갑다
ເຢືອກເຢັນ/ເຢັນ



콩국수
ແກງຖົ່ວ



팥빙수
ພັດບິງຊຸ



찐빵
ໝັ່ງເຂົ້າຈີ່



호떡
ໂຮ່ຕ໊ອກ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 사진에 맞는 표현을 〈보기〉에서 골라 넣으세요. ຈົ່ງເລືອກສຳນວນ ທີ່ຖືກຕ້ອງກັບຮູບພາບ ຄືກັບຕົວຢ່າງ.



1)



2)



3)



4)



5)



6)



7)



8)



보기

| | | | |
|---|---|---|---|
| 팥빙수 | 삼계탕 | 군고구마 | 팥죽 |
| 콩국수 | 찐빵 | 냉면 | 호떡 |

정답 1) 군고구마 2) 팥빙수 3) 삼계탕 4) 찐빵 5) 냉면 6) 호떡 7) 콩국수 8) 팥죽



## 문법 1 ໄວຍາກອນ 1 -(으)ㄴ

G32-1

'-(으)ㄴ' ມັນຖືກໃຊ້ຕື່ມທ້າຍຄຳຄຸນນາມ, ເຮັດໜ້າທີ່ເປັນຄຳຂະຫຍາຍໃຫ້ກັບຄຳນາມທີ່ຢູ່ຫຼັງ. ກໍລະນີເປັນ '있-' ກັບ '없-' ແມ່ນໃຊ້ກັບ '-는'.

| 자음(ພະຍັນຊະນະ) → -은 | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → -ㄴ |
|---|---|
| 작다 → 작은 | 크다 → 큰 |

- 가: 리한 씨, 배가 많이 아파요? ລີຮັນ, (ເຈົ້າ) ເຈັບທ້ອງຫຼາຍບໍ?
  나: 네, 아까 **찬** 것을 많이 먹어서 그런 것 같아요. ເຈົ້າ, ເມື່ອກີ້ນີ້ ຂ້ອຍກິນຂອງເຢັນຫຼາຍ ເບິ່ງຄືວ່າຊິເປັນຄືແນວນັ້ນ.
- 가: 누가 지민 씨예요? ໃຜແມ່ນຈີມິນ?
  나: 저기 키가 **작은** 사람이에요. ແມ່ນຜູ້ທີ່ຮູບຮ່າງເຕ້ຍ ຫັ້ນເດ.
- 가: 이 근처에 **맛있는** 식당이 없어요? ຢູ່ແຖວນີ້ ມີຮ້ານອາຫານແຊບບໍ?
  나: 서울 식당에 가 보세요. 불고기가 아주 맛있어요. ລອງໄປຮ້ານອາຫານຊໍອຸລເບິ່ງ. ບູລໂກກິແຊບຫລາຍ.
- 집이 **먼** 곳에 있는 사람부터 출발하세요. ອອກເດີນທາງໄປເຮືອນຄົນທີ່ຢູ່ໄກກ່ອນ.



ເຂົ້າໃຈການໃຊ້ '-(으)ㄴ' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນ ໂດຍການ ໃຊ້ສຳນວນຂ້າງເທິງນັ້ນ.

2. 빈칸에 맞는 표현을 〈보기〉에서 골라 '-(으)ㄴ'을 사용해서 대화를 완성하세요.
ຈົ່ງຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນ ໂດຍການໃຊ້ '-(으)ㄴ' ແລະ ສຳນວນຈາກ < ກອບ > ເພື່ອຕື່ມໃສ່ບ່ອນຫວ່າງ.

1) 가: 어느 식당에 갈까요? ຈະໄປຮ້ານອາຫານໃດ?
   나: 저기 사람이 ________ 식당에 들어가요. ຂ້ອຍ ໄປຮ້ານອາຫານຢູ່ພຸ້ນ ບ່ອນທີ່ມີຄົນຫຼາຍ.
2) 가: 무슨 음식을 먹을까요? ຈະກິນອາຫານຫຍັງ?
   나: 오늘은 추우니까 ________ 음식을 먹고 싶어요.
   ເພາະວ່າ ມື້ນີ້ອາກາດໜາວເຢັນ ຈຶ່ງຢາກກິນອາຫານທີ່ອຸ່ນໆ.
3) 가: 어디 아파요? ເຈັບຢູ່ບ່ອນໃດ?
   나: 아까 ________ 음식을 먹어서 배탈이 났어요. ກິນອາຫານ ເຢັນມື້ກີ້ ກໍເລີຍເປັນທ້ອງ.

**보기**
따뜻하다
차다
많다

정답 1) 많은 2) 따뜻한 3) 찬



ຮຽນຕື່ມອີກໜ້ອຍໜຶ່ງບໍ? ຈົ່ງນຳໃຊ້ '-(으)ㄴ' ສ້າງປະໂຫຍກໃຫ້ສົມບູນ.

1. (시원하다, 물, 마시다) ________________.
2. (맛있다, 불고기, 먹다) ________________.
3. (친절하다, 사람, 만나다) ________________.

정답 1. 시원한 물을 마셔요 2. 맛있는 불고기를 먹어요 3. 친절한 사람을 만나요



### 유용한 표현 ສຳນວນທີ່ສຳຄັນ

**푹 쉬세요.** ຈົ່ງພັກຜ່ອນໃຫ້ຫຼາຍໆເດີ.

가: 그럼 주말 잘 보내고 월요일에 봅시다. ຂໍໃຫ້ເປັນທ້າຍອາທິດ ທີ່ມີແຕ່ຄວາມສຸກແລ້ວ ຄ່ອຍພົບກັນວັນຈັນ.
나: 네, 반장님. 주말 동안 푹 쉬세요. ເຈົ້າ, ຫົວໜ້າຫ້ອງ, ທ້າຍອາທິດພັກຜ່ອນໃຫ້ຫຼາຍໆເດີ.



## 대화 2 ບົດສົນທະນາ 2





ກອນອູ ກັບ ຕວນ ກຳລັງສົນທະນາກ່ຽວກັບ ດາດຊີ້ນໝູສາມຊັ້ນ (ສາມກ້ອນຊັລ), ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງກ່ອນ.

건우 **투안 씨, 삼겹살을 좋아해요?**
ຕວນ, ເຈົ້າມັກກິນ ດາດຊີ້ນໝູສາມຊັ້ນບໍ?

투안 **네, 저는 한국 음식 중에서 삼겹살을 제일 좋아해요. 그런데 처음에는 식탁에서 고기를 구워서 먹는 것이 좀 신기했어요.**
ເຈົ້າ, ຕອນຢູ່ເກົາຫຼີ ຂ້ອຍ ມັກກິນ ດາດຊີ້ນໝູສາມຊັ້ນຫຼາຍກວ່າໝູ່, ແຕ່ໃນຕອນທຳອິດ ຂ້ອຍຄິດວ່າ ແປກໜ້ອຍໜຶ່ງ ທີ່ດາດຊີ້ນຢູ່ເທິງໂຕະ.

건우 **그래요? 한국에서는 이렇게 먹는 음식이 많아요.**
ແມ່ນບໍ? ຢູ່ໃນປະເທດເກົາຫຼີ ມີອາຫານ ທີ່ກິນແບບນີ້ຫຼາຍ.

투안 **우리 나라에서는 식탁 위에서 직접 요리를 하지 않아요. 그래서 한국에서 처음 고기를 먹을 때 식탁 위에 불이 있어서 너무 무서웠어요.**
ຢູ່ໃນປະເທດຂອງພວກຂ້ອຍ ຈະບໍ່ດາດຊີ້ນ ຢູ່ເທິງໂຕະ ກິນເຂົ້າ, ສະນັ້ນ ໃນເວລາກິນຊີ້ນປີ້ງຄັ້ງທຳອິດ ຢູ່ເກົາຫຼີ ຈຶ່ງຮູ້ສຶກຢ້ານຫຼາຍ ທີ່ມີໄຟຢູ່ເທິງໂຕະກິນເຂົ້າ.

**중에서** ໜຶ່ງໃນນັ້ນ
ເປັນຄວາມໝາຍກວມລວມເອົາທັງໝົດ ສິ່ງຕ່າງໆ ທີ່ເວົ້າມາໃນປະໂຫຍກກ່ອນໜ້ານີ້.
- 저는 과일 중에서 딸기를 제일 좋아해요.
  ໃນໝາກໄມ້ທັງໝົດນັ້ນ ຂ້ອຍມັກໝາກສະຕໍເບີຣີກວ່າໝູ່.
- 투안 씨는 제 친구 중에서 키가 제일 커요.
  ຕວນ ສູງກວ່າໝູ່ໝົດໃນໝູ່ຂອງຂ້ອຍ.

**직접** ໂດຍກົງ
- 환전을 하려면 직접 은행에 가야 해요.
  ຖ້າຈະປ່ຽນເງິນຕ້ອງໄປທະນາຄານໂດຍກົງ.
- 저는 음식을 사 먹지 않고 직접 요리해서 먹어요.
  ຂ້ອຍ ບໍ່ຊື້ອາຫານກິນ ຂ້ອຍແຕ່ງກິນເອງໂດຍກົງ.



ຄັ້ງນີ້ ລອງສວມບົດບາດເປັນ ກອນອູ ແລະ ຕວນ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງ ໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 두 사람은 지금 어디에 있어요? ສອງຄົນນີ້, ດຽວນີ້ຢູ່ໃສ?
2. 투안 씨가 한국에서 제일 좋아하는 음식은 뭐예요?
   ອາຫານ ທີ່ມັກທີ່ສຸດຂອງ ຕວນ ຢູ່ໃນເກົາຫຼີ ແມ່ນຫຍັງ?

정답 1. 식당에 있어요. 2. 삼겹살이에요.



## 어휘 2 ຄຳສັບ 2 재료 및 조리법 ສ່ວນປະກອບ ແລະ ວິທີປຸງແຕ່ງ



ສຳນວນທີ່ກ່ຽວຂ້ອງກັບ ສ່ວນປະກອບ ແລະ ວິທີການປຸງແຕ່ງອາຫານ ມີຫຍັງແດ່ ລອງໄປ ເບິ່ງນຳກັນບໍ?






ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 문장을 읽고 알맞은 그림을 연결하세요. ຈົ່ງອ່ານປະໂຫຍກ ແລ້ວເຊື່ອມຕໍ່ໃສ່ຮູບພາບທີ່ເໝາະສົມ.

① 감자를 튀기세요. ② 생선을 구우세요. ③ 당근을 볶으세요. ④ 돼지고기를 삶으세요.




정답 ① ㉠ ⓓ ② ㉢ ⓒ ③ ㉣ ⓑ ④ ㉡ ⓐ

## 문법 2 ໄວຍາກອນ 2 -아서/어서



ມັນຖືກໃຊ້ຕື່ມທ້າຍຄຳກຳມະເພື່ອຊີ້ບອກໃຫ້ກະທຳໃນປະໂຫຍກໜ້າກ່ອນ ແລ້ວຈຶ່ງລົງມືກະທຳໃນປະໂຫຍກຫຼັງຕາມ ລຳດັບ.

| ㅏ, ㅗ → **-아서** | ㅓ, ㅜ, ㅣ ເປັນຕົ້ນ → **-어서** | 하다 → **해서** |
|---|---|---|
| 가다 → **가서**<br>만나다 → 만**나서** | 찍다 → 찍**어서**<br>내리다 → 내**려서** | 하다 → **해서**<br>요리하다 → 요리**해서** |

- 가: 오늘 저녁은 밖에 **나가서** 먹을까요? ມື້ນີ້ ເຈົ້າອອກໄປກິນເຂົ້າຢູ່ນອກບໍ?
  나: 아니요, 그냥 집에서 먹어요. ບໍ່, ຂ້ອຍກິນຢູ່ເຮືອນນີ້ແຫຼະ.
- 가: 가족들에게 선물을 보냈어요? ເຈົ້າຝາກຂອງຂວັນໃຫ້ຄອບຄົວແລ້ວບໍ?
  나: 네, 옷을 **사서** 보냈어요. ເຈົ້າ, ຂ້ອຍຊື້ເສື້ອສົ່ງໃຫ້ແລ້ວ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

**✔ '-아서/어서' ກັບ '-고'**

'-아서/어서' ກັບ '-고' ທັງສອງຮູບນີ້ ແມ່ນໃຊ້ຊີ້ບອກລຳດັບເວລາໃນການກະທຳຄືກັນ. '-아서/어서' ມັນໃຊ້ໃນກໍລະນີທີ່ການກະທຳທັງສອງມີຄວາມກ່ຽວຂ້ອງກັນ ແລະ ຄຳກຳມະທີ່ຢູ່ໃນປະໂຫຍກໜ້າແມ່ນໃຊ້ໄດ້ທັງຄຳກຳມະຄົບ ແລະ ກຳມະຂາດ. ສ່ວນ '-고' ການກະທຳທັງສອງແມ່ນພຽງແຕ່ຊີ້ບອກລຳດັບຂອງເວລາເທົ່ານັ້ນ ແຕ່ບໍ່ຄ່ອຍໃຊ້ໃນກໍລະນີທີ່ການກະທຳທັງສອງມີຄວາມກ່ຽວຂ້ອງກັນ, ສ່ວນຫລາຍມັກໄປກັບຄຳກຳມະຂາດ.

- 밥을 먹어서 이를 닦아요.(X) — 밥을 **먹고** 이를 닦아요.(O)
- 책을 **사서** 읽었어요.(O) — 책을 사고 읽었어요.(X)
- 회사에 **가서** 일을 해요.(O) — 회사에 가고 일을 해요.(X)



ເຂົ້າໃຈການໃຊ້ '-아서/어서' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນໂດຍ ການໃຊ້ສຳນວນຂ້າງເທິງນັ້ນ.

2. 그림을 보고 '-아서/어서'를 사용해서 대화를 완성하세요.
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນ ໂດຍການໃຊ້ '-아서/어서'.

1) 가: 양파는 어떻게 해요 ? ຈະເຮັດແນວໃດ ກັບຫົວຜັກບົ່ວໃຫຍ່ນີ້?
나: ______________ 넣으세요.



2) 가: 이 음식은 어떻게 먹어요 ? ອາຫານນີ້ ກິນແນວໃດ?
나: ______________ 먹으면 돼요.

정답 1) 볶아서 2) 끓여서



### 유용한 표현 ສຳນວນທີ່ສຳຄັນ

기가 막히게 맛있어요. ແຊບຈົນຫູດັບ.

가: 불고기 맛이 어때요? ລົດຊາດອາຫານ ພຸລໂກກີ້ເປັນແນວໃດ?
나: **기가 막히게 맛있어요.** ແຊບຈົນຫູດັບ.



## 활동 ກິດຈະກຳ

어제 저녁에 무슨 음식을 먹었어요? 〈보기〉처럼 이야기해 보세요.
ຕອນແລງວານນີ້ ໄດ້ກິນອາຫານຫຍັງແດ່? ຈົ່ງສົນທະນາກັນຄືກັບຕົວຢ່າງ.

보기 ຕົວຢ່າງ




가: 모니카 씨, 어제 저녁에 뭐 먹었어요?
ໂມນິຄາ, ແລງວານນີ້ ໄດ້ກິນຫຍັງແດ່?
나: 집에서 고기를 구워서 먹었어요.
ໄດ້ປີ້ງຊີ້ນ ກິນຢູ່ເຮືອນ.
가: 맛있었어요?
ແຊບບໍ?
가: 네, 정말 맛있었어요.
ເຈົ້າ, ແຊບແທ້ໆ.

〈재료 ສ່ວນປະກອບ〉



〈조리법 ວິທີການປຸງແຕ່ງ〉







# 특별한 날 먹는 음식

ອາຫານ ທີ່ຮັບປະທານ ໃນວັນທີ່ສຳຄັນຕ່າງໆ



여름철 중 가장 더운 때를 '복날'이라고 하는데 한국 사람들은 이때 삼계탕을 먹습니다. 여름에는 땀을 많이 흘려서 기운이 없는데 인삼, 밤, 마늘 같은 좋은 재료가 많이 들어간 삼계탕을 먹으면 힘이 나기 때문입니다. 여러분도 힘이 없는 여름날 삼계탕을 드셔 보세요.

ໃນລະດູຮ້ອນ ຊ່ວງທີ່ຮ້ອນທີ່ສຸດເພິ່ນຈະເອີ້ນວ່າ: '복날(ມື້ໂຊກດີ)' ຊ່ວງເວລາດັ່ງກ່າວຄົນເກົາຫຼີມັກຈະກິນຕົ້ມ ຊຳແກທັງ; ເພາະວ່າ ໃນລະຮ້ອນເຫື່ອອອກຫຼາຍ ເຮັດໃຫ້ ເຮົາບໍ່ມີແຮງ ແຕ່ວ່າຖ້າກິນຕົ້ມຊຳແກທັງ ທີ່ມີສ່ວນປະກອບຂອງໂສມ, ໝາກພ້າ, ຫົວຜັກທຽມແລ້ວ ຈະເຮັດໃຫ້ເຮົາມີແຮງຫຼາຍຂຶ້ນຕື່ມ; ສະນັ້ນ ບັນດາທ່ານ ກໍເຊັ່ນ ດຽວກັນຖ້າຮູ້ສຶກບໍ່ມີແຮງ ໃນຍາມຮ້ອນ ລອງກິນຕົ້ມຊຳແກທັງເບິ່ງ.



한국 사람들은 생일에 무슨 음식을 먹을까요? 케이크도 먹고 맛있는 음식도 많이 먹습니다. 그런데 생일날 꼭 빠지지 않는 음식이 있습니다. 그것은 바로 미역국입니다. 미역국은 산모가 아기를 낳은 후 먹는 음식입니다. 그래서 생일에 미역국을 먹는 것은 낳아 주신 어머니의 은혜를 기억하고 감사한다는 의미가 있습니다.

ຄົນເກົາຫຼີ ຈະກິນຫຍັງ ໃນງານວັນເກີດ? ຈະກິນເຄັກ ແລະ ຈະກິນອາຫານແຊບໆ ຫຼາຍຢ່າງ ແລະ ຍັງ ມີອາຫານ ທີ່ຂາດບໍ່ໄດ້ໃນງານວັນເກີດ, ນັ້ນກໍຄື ມີຢ້ອກກຸກ; ມີຢອກກຸກ ແມ່ນອາຫານສຳລັບແມ່ມານທີ່ກິນ ພາຍຫຼັງອອກລູກແລ້ວ. ສະນັ້ນ, ການກິນແກງມີຢ້ອກກຸກຈຶ່ງມີຄວາມໝາຍອີກວ່າ ການຂອບໃຈ ແລະ ການລະນຶກເຖິງ ບຸນຄຸນຂອງແມ່ຜູ້ໃຫ້ກຳເນີດເຮົາມາ.

## 함께 먹는 음식 ອາຫານ ທີ່ກິນຮ່ວມກັນ

한국에서는 밥과 국을 제외하고는 반찬이나 찌개와 같은 음식은 식탁 위에 놓고 밥을 먹는 사람들과 같이 먹습니다. 식탁 위에서 고기를 구워 먹거나 찌개를 끓여 먹을 때에는 각자의 접시에 덜어서 먹으면 됩니다.

ຢູ່ໃນປະເທດເກົາຫຼີ ນອກຈາກເຂົ້າກັບແກງແລ້ວ ຍັງມີຂອງກິນກັບເຂົ້າ ເປັນຕົ້ນແມ່ນ ແກງອ່ອມຮ້ອນໆ ມາວາງໄວ້ເທິງໂຕະກິນເຂົ້າ ແລ້ວຫຼາຍຄົນກິນນຳກັນ. ເວລາກິນຊີ້ນປີ້ງແກງອ່ອມ ໃຫ້ຕັກອອກມາໃສ່ຈານ ຂອງຕົນເອງເທື່ອລະໜ້ອຍ.





## EPS-TOPIK 듣기 ພາກຟັງ **EPS-TOPIK**



ຂໍ້ 1 ຫາ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ. ຈົ່ງຟັງໃຫ້ດີແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງ.

[1~2] 다음 그림을 보고 알맞은 대답을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 102

1. 이것은 무엇입니까? ອັນນີ້ ແມ່ນຫຍັງ?

① ② ③ ④

2. 지금 무엇을 합니까? ດຽວນີ້ ເຮັດຫຍັງ?

① ② ③ ④



ຕໍ່ໄປ ເປັນການຟັງບົດສົນທະນາ ແລະ ເລືອກເອົາຄຳຕອບທີ່ເໝາະສົມສຳລັບແຕ່ລະຄຳຖາມ. ກ່ອນທີ່ຈະໄປຟັງບົດສົນທະນາ ຈົ່ງລອງກວດເບິ່ງເນື້ອໃນຂອງຄຳຖາມກ່ອນ.

[3~5] 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

3. 이 사람은 왜 한국 음식을 좋아합니까? ເປັນຫຍັງຄົນນີ້ ຈຶ່ງມັກອາຫານເກົາຫຼີ?
① 한국 음식은 시고 답니다. ② 한국 음식은 맵지 않습니다.
③ 한국 음식은 맵지만 맛있습니다. ④ 한국 음식은 싱겁지만 맛있습니다.

4. 무슨 음식에 대한 설명입니까? ອະທິບາຍ ກ່ຽວກັບອາຫານຫຍັງ?
① 불고기 ② 비빔밥
③ 김치찌개 ④ 된장찌개

5. 이 사람이 여름에 먹는 음식이 <u>아닌</u> 것은 무엇입니까?
ແມ່ນຫຍັງ ທີ່ບໍ່ແມ່ນອາຫານ ທີ່ກິນໃນລະດູຮ້ອນ ຂອງຄົນຜູ້ນີ້?
① 냉면 ② 삼계탕
③ 삼겹살 ④ 콩국수



## 듣기 대본 ເນື້ອໃນບົດຟັງ

1. ① 남: 양파입니다. ມັນ ແມ່ນຫົວຜັກບົ່ວໃຫຍ່.
   ② 남: 당근입니다. ມັນ ແມ່ນຫົວກະລົດ.
   ③ 남: 감자입니다. ມັນ ແມ່ນມັນຝຣັ່ງ.
   ④ 남: 생선입니다. ມັນ ແມ່ນປາ.

2. ① 여: 생선을 굽습니다. ມັນ ປີ້ງປາ.
   ② 여: 생선을 튀깁니다. ມັນ ຈືນປາ.
   ③ 여: 생선을 삶습니다. ມັນ ໜຶ້ງປາ.
   ④ 여: 생선을 볶습니다. ມັນ ຂົ້ວປາ.

3. 남: 수피카 씨는 한국 음식을 좋아해요? ສຸພິກາ ມັກອາຫານເກົາຫຼີບໍ?
   여: 네, 정말 좋아해요. 한국 음식은 맵지만 맛있어요.
   ເຈົ້າ, ມັກແທ້ ອາຫານເກົາຫຼີເຜັດແຕ່ວ່າແຊບ.

4. 여: 김치찌개는 어떻게 만들어요? ແກງອ່ອມ ຄິມຈິ ເຮັດແນວໃດແຕ່ງກິນ?
   남: 먼저 김치를 볶으세요. 그리고 물을 넣고 끓이면 돼요.
   ທຳອິດໃຫ້ຂົ້ວຄິມຈິກ່ອນ ແລ້ວເອົານ້ຳໃສ່ ແກງໃຫ້ຟົດຖືວ່າແລ້ວ.

5. 남: 수진 씨는 요즘처럼 더운 여름에 보통 뭘 먹어요?
   ສຸຈິນ ປົກກະຕິຍາມຮ້ອນທີ່ຮ້ອນຄືປະຈຸບັນນີ້ ກິນຫຍັງບໍ?
   여: 저는 시원한 냉면이나 콩국수를 자주 먹어요. 그리고 힘이 없을 때는 삼계탕도 먹어요.
   ຂ້ອຍກິນເລື້ອຍໆ ແມ່ນແກງໝາກຖົ່ວ ຫຼືວ່າ ຕົ້ມໝີ່ເຢັນ ແລະ ເວລາບໍ່ມີແຮງກໍກິນຕົ້ມຊຳແກທັງ.

정답 1. ② 2. ① 3. ③ 4. ③ 5. ③

## 확장 연습 ແບບຝຶກຫັດເສີມ


L-32

1. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   다음 중 들은 내용과 같은 것은 무엇입니까? ຄຳຕອບທີ່ຖືກຕ້ອງກັບເນື້ອໃນ ທີ່ໄດ້ຟັງນັ້ນ ແມ່ນຫຍັງ?

   ① 여름에는 삼계탕이 인기가 없습니다.
   ② 두 사람은 오늘 시원한 음식을 먹을 겁니다.
   ③ 복날에는 삼계탕을 먹는 사람들이 많습니다.
   ④ 삼계탕은 뜨겁지 않아서 사람들이 좋아합니다.

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 오늘이 복날이라서 삼계탕을 먹으러 온 사람이 많네요. 좀 기다려야겠어요.
   ເພາະວ່າມື້ນີ້ ແມ່ນວັນທີ່ອາກາດຮ້ອນທີ່ສຸດ ຜູ້ຄົນທັງຫຼາຍມາກິນແກງໄກ່ໃສ່ໂສມ(ສາມແກທັງ). ຈະຕ້ອງໄດ້ນັ່ງລໍຖ້າບຶດໜຶ່ງ?
   여: 이렇게 더운 날씨에 왜 뜨거운 음식을 먹어요?
   ອາກາດຮ້ອນແບບນີ້ ເປັນຫຍັງຈະຕ້ອງກິນອາຫານຮ້ອນໃສ່ອີກ?
   남: 여름에 뜨거운 음식을 먹으면 땀을 더 많이 흘리잖아요. 땀이 나면 체온이 낮아져서 오히려 시원해지거든요.
   ໃນລະດູຮ້ອນ ຖ້າຫາກກິນອາຫານຮ້ອນໃສ່ແລ້ວ ເຫື່ອຈະອອກມາຫຼາຍ, ຖ້າຫາກວ່າ ມີເຫືອກອອກມາແລ້ວ ເພາະຈະ ເຮັດໃຫ້ອຸນຫະພູມ ຮ່າງ ກາຍລຸດລົງແລ້ວ ເຮັດໃຫ້ເຢັນສະບາຍ.


정답 1. ③



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ແມ່ນເປັນເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ. ຂໍ້ 3 ແມ່ນ ເປັນການອ່ານບົດເລື່ອງ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງກັບເນື້ອໃນບົດເລື່ອງນັ້ນ; ຈົ່ງອ່ານບົດເລື່ອງໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1. 

① 식탁이 큽니다. ② 컵이 필요합니다.
③ 그릇이 많습니다. ④ 음식이 뜨겁습니다.

2. 

① 당근을 볶고 있습니다. ② 계란을 삶고 있습니다.
③ 감자를 튀기고 있습니다. ④ 라면을 끓이고 있습니다.

3. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

한국 사람들은 식사를 할 때 밥과 함께 국이나 찌개, 그리고 여러 가지 반찬을 같이 먹어요. 이때 밥하고 국, 찌개는 숟가락으로 먹고 반찬은 젓가락으로 먹어요.

ຄົນເກົາຫຼີ ເວລາຮັບປະທານອາຫານ ຈະມີເຂົ້າກັບແກງ ຫຼື ແກງອ່ອມ ແລະ ຂອງກັບເຂົ້າອີກຫຼາຍຢ່າງ, ເວລາກິນເຂົ້າ, ແກງ ຫຼື ແກງອ່ອມ ຈະໃຊ້ບ່ວງ. ສ່ວນເວລາກິນຂອງແກ້ມອື່ນໆ ແມ່ນຈະໃຊ້ໄມ້ຖູ.

위 글의 내용과 같은 것을 고르십시오. ຈົ່ງເລືອກຄຳ ທີ່ຄືກັບເນື້ອໃນບົດເລື່ອງ ຂ້າງເທິງນີ້.

① 한국 사람들은 보통 빵과 우유를 먹어요.
② 한국 사람들은 국을 먹을 때 숟가락을 사용하지 않아요.
③ 한국 사람들은 식사할 때 숟가락과 젓가락을 모두 사용해요.
④ 한국 사람들은 숟가락과 젓가락을 한 손에 같이 잡고 밥을 먹어요.



ຕໍ່ໄປນີ້ ແມ່ນເປັນການອ່ານບົດເລື່ອງ ແລ້ວຕອບຄຳຖາມ. ຈົ່ງຄິດທວນຄືນບັນດາບົດຮຽນ ທີ່ໄດ້ຮຽນມາ ເພື່ອຕອບຄຳຖາມ.

[4~5] 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວຕອບຄຳຖາມ.

〈재료 ສ່ວນປະກອບ〉
김치 300g, 돼지고기 100g, 양파 1개, 파 조금, 식용유 조금
ຄິມຈີ 300 ກຼາມ, ຊີ້ນໝູ 100 ກຼາມ, ຫົວຜັກບົ່ວໃຫຍ່ 1 ຫົວ, ຜັກບົ່ວໃບ ແລະ ນ້ຳມັນພືດ ເລັກໜ້ອຍ

〈조리 방법 ວິທີການປຸງແຕ່ງ〉
1. 김치하고 돼지고기를 적당하게 써세요. ໃຊ້ຄິມຈີ ແລະ ຊີ້ນໝູໃຫ້ພໍເໝາະພໍດີ.
2. 김치하고 돼지고기를 냄비에 넣고 식용유를 조금 넣어서 볶으세요.
ເອົານ້ຳມັນພືດ ໃສ່ໜໍ້ເລັກໜ້ອຍ ແລ້ວເອົາຄິມຈີ ກັບຊີ້ນໝູຂົ້ວ.
3. 냄비에 물을 넣고 끓이세요. ເອົານ້ຳໃສ່ແລ້ວຕົ້ມ.
4. 물이 끓으면 양파와 파를 넣으세요. ນ້ຳຮ້ອນແລ້ວ ໃຫ້ເອົາຫົວຜັກບົ່ວໃຫຍ່ ແລະ ຜັກບົ່ວໃບລົງໃສ່.



4. 이 음식에 들어가지 않는 재료는 무엇입니까? ເມນູອາຫານນີ້ ບໍ່ໄດ້ໃສ່ສ່ວນປະກອບ ຫຍັງແດ່?

①  ②  ③  ④ 

5. 읽은 내용과 같은 것을 고르십시오. ຈົ່ງເລືອກເອົາ ສິ່ງທີ່ຄືກັນກັບເນື້ອໃນຂອງບົດເລື່ອງ.

① 물과 김치를 같이 넣고 끓여야 돼요.
② 김치하고 돼지고기는 따로 볶아야 돼요.
③ 양파하고 파는 돼지고기하고 같이 넣어요.
④ 김치하고 돼지고기를 볶은 후에 물을 넣으면 돼요.

정답 1. ④ 2. ① 3. ③ 4. ③ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

1.

> 한국 사람들은 계절마다 즐겨 먹는 음식이 있습니다. 여름에는 차갑고 시원한 냉면, 콩국수, 팥빙수 등을 많이 먹습니다. 겨울에는 뜨거운 국이나 따뜻한 팥죽, 군고구마, 호떡 등을 자주 먹습니다.
>
> ຄົນເກົາຫຼີ ຈະມີອາຫານກິນພິເສດ ໃນແຕ່ລະດູ, ໃນລະດູຮ້ອນ ອາຫານ ທີ່ເຢັນ ແລະ ເຢັນສະບາຍ ຈະມີໝີ່ເຢັນ, ນ້ຳໝາກຖົ່ວເຫຼືອງ, ກິນຜັດບິງຊູ ແລະ ອື່ນໆ. ໃນລະດູໜາວ ສ່ວນໃຫຍ່ ຈະມັກກິນ ນ້ຳແກງທີ່ຮ້ອນ ຫຼືວ່າ ເຂົ້າໜົມ ໄສ້ໝາກຖົ່ວ ມັດດ້າງເຜົາ, ຂະໜົມອົບແປ້ງປີ້ງ ແລະ ອື່ນໆ.

① 음식 재료 ② 계절 음식 ③ 조리 도구 ④ 조리 시기

2.

> 한국 사람들은 여름에 더위를 이기기 위해 삼계탕을 먹습니다. 삼계탕을 만드는 방법은 어렵지 않습니다. 먼저 냄비에 물을 붓고 닭과 마늘, 대추, 인삼 등을 넣은 후 오래 끓이면 됩니다.
>
> ໃນລະດູຮ້ອນ ຄົນເກົາຫຼີ ເພື່ອເຮັດໃຫ້ຮ້ອນຂຶ້ນອີກ ແມ່ນກິນແກງໄກ່ໃສ່ໂສມ (ສາມແກທັງ) ວິທີເຮັດແກງໄກ່ໃສ່ໂສມ ກໍບໍ່ໄດ້ຍາກ. ກ່ອນອື່ນ ແມ່ນຖອກນ້ຳໃສ່ໝໍ້ ແລ້ວກໍເອົາໄກ່, ກະທຽມ, ແທຈູ (ໄມ້ຊະນິດໜຶ່ງເປັນຢາ), ໂສມ ແລະ ອື່ນໆ ເອົາວາງໃສ່ໃນໝໍ້ ຫຼັງຈາກນັ້ນ ກໍຕົ້ມມັນເປັນເວລາດົນນານກວ່າຈະສຸກ.

① 계절 소개 ② 날씨 정보 ③ 음식 주문 ④ 조리 방법

정답 1. ② 2. ④



# 송편을 만드는 체험도 할 수 있어요

ເຈົ້າສາມາດລອງເຮັດເຂົ້າໜົມ ຊົງປັຍອນ

**학습 안내**
ຄຳແນະນຳ ໃນການຮຽນ

- ☐ ຈຸດປະສົງໃນການຮຽນ — ການຄາດເດົາ, ການເວົ້າກ່ຽວກັບການວາງແຜນ
- ☐ ໄວຍາກອນ — -겠-, -는
- ☐ ຄຳສັບ ແລະ ສຳນວນຄຳເວົ້າ — ວັນປີໃໝ່ເກົາຫຼີ, ຈູຊອກ
- ☐ ຂໍ້ມູນກ່ຽວກັບວັດທະນາທຳ — ບຸນປະເພນີຂອງເກົາຫຼີ



## 대화 1 ບົດສົນທະນາ 1






ຕໍ່ໄປ ເປັນບົດສົນທະນາລະຫວ່າງ ຣີຮັນ ແລະ ຈີຮຸນ. ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

투안 지훈 씨, 설날에 고향에 잘 다녀왔어요?
ຈີຮຸນ ເຈົ້າມ່ວນກັບ ການທີ່ໄດ້ກັບໄປຢາມບ້ານເກີດໃນຊ່ວງປີໃໝ່ບໍ?

지훈 네, 오랜만에 가족들을 봐서 정말 좋았어요. 리한 씨는 설날에 뭐 했어요?
ເຈົ້າ, ເປັນເວລາດົນ ຫາກໍໄດ້ມີໂອກາດພົບກັບຄອບຄົວ ແມ່ນຮູ້ສຶກດີຫຼາຍ. ຣີຮັນ ຊ່ວງປີໃໝ່ ໄດ້ເຮັດຫຍັງ?

리한 한국 친구 집에 가서 떡국도 먹고 윷놀이도 했어요.
ຂ້ອຍ ໄດ້ໄປຢາມເຮືອນໝູ່ຄົນເກົາຫຼີ ແລ້ວກໍໄດ້ກິນ ແກງຕ່ອກ ແລະ ໄດ້ຫຼິ້ນເກມຢັດ (*Yut*) ນຳ.

지훈 재미있었겠어요.
ຄືຊິມ່ວນເນາະ.

리한 네, 정말 재미있었어요. 그리고 친구 부모님께 세배도 하고 세뱃돈도 받았어요.
ແມ່ນແລ້ວ, ມ່ວນຫຼາຍ. ພ້ອມນັ້ນ ກໍໄດ້ຂໍຂະມາພໍ່ແມ່ໝູ່ນຳໃນປີໃໝ່ ພ້ອມທັງໄດ້ຮັບເງິນຂອງຂວັນປີໃໝ່ ຈາກພວກເຂົານຳ.

지훈 우와, 정말 특별한 경험을 했네요. 정말 좋았겠어요.
ວາວ. ເປັນປະສົບການ ທີ່ພິເສດແທ້ເນາະ. ເປັນຊ່ວງເວລາທີ່ດີຫຼາຍ.



> **오랜만** ເປັນເວລາດົນ, ດົນ
> ເປັນສິ່ງທີ່ເຄີຍເກີດຂຶ້ນດົນແລ້ວ ແລະ ເກີດຂຶ້ນອີກເປັນເທື່ອທຳອິດ ຫຼັງຈາກເວລາຜ່ານໄປດົນນານມາແລ້ວ.
> - 오랜만에 초등학교 때 친구를 만났어요.
>   ເປັນເວລາດົນຫາກໍໄດ້ພົບໝູ່ຕອນສະໄໝຮຽນ ມັດທະຍົມຕອນຕົ້ນ.
> - 가: 투안 씨, 오랜만이에요.
>   ຕວນ, ບໍ່ໄດ້ເຫັນດົນເນາະ.
>   나: 네, 2년 만에 뵙네요.
>   ແມ່ນແລ້ວ, ບໍ່ໄດ້ເຫັນກັນຮອດ 2 ປີແລ້ວ.

> **경험** ປະສົບການ
> - 이 회사에서 일한 것은 저에게 좋은 경험이었어요.
>   ການທີ່ໄດ້ເຮັດວຽກ ຢູ່ບໍລິສັດນີ້ ແມ່ນໄດ້ກາຍເປັນປະສົບການທີ່ດີສຳລັບຂ້ອຍ.
> - 여행을 하면 많은 경험을 할 수 있어요.
>   ຖ້າຫາກໄດ້ທ່ອງທ່ຽວ ແມ່ນສາມາດຫາປະສົບການດີໆຫຼາຍຢ່າງ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 지훈 씨는 설날에 어디에 갔어요? ຈີຮຸນ ໃນຊ່ວງປີໃໝ່ເກົາຫຼີ ເຈົ້າໄດ້ໄປໃສບໍ?
2. 리한 씨는 설날에 무엇을 했어요? ຣີຮັນ ໃນຊ່ວງປີໃໝ່ ເຈົ້າໄດ້ເຮັດຫຍັງ?

정답 1. 고향에 갔어요. 2. 한국 친구 집에 가서 떡국도 먹고 윷놀이도 했어요.



## 어휘 1 ຄຳສັບ 1 — 설날 ປີໃໝ່ ເກົາຫຼີ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ປີໃໝ່ເກົາຫຼີ. ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່ບໍ?



한복을 입다
ນຸ່ງຊຸດປະຈຳຊາດເກົາຫຼີ



세배하다
ໄຫວ້, ຂໍຄະມາ



덕담을 하다
ອວຍພອນ, ໃຫ້ພອນ



덕담을 듣다
ຮັບຄຳອວຍພອນ



세뱃돈을 주다
ໃຫ້ເງິນ ຂອງຂວັນປີໃໝ່



세뱃돈을 받다
ຮັບເງິນ ຂອງຂວັນປີໃໝ່



떡국을 먹다
ກິນແກງຕ່ອກ



윷놀이를 하다
ຫຼິ້ນເກມຢັດ *(Yut)*



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງ ພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.

| | |
|---|---|
| ① | ㉠ 윷놀이를 하다 |
| ② | ㉡ 세배하다 |
| ③ | ㉢ 한복을 입다 |
| ④ | ㉣ 세뱃돈을 받다 |
| ⑤ | ㉤ 떡국을 먹다 |

정답 ① ㉢ ② ㉣ ③ ㉤ ④ ㉡ ⑤ ㉠



## 문법 1 ໄວຍາກອນ 1 -겠-

G33-1

'-겠-' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ ເພື່ອໃຊ້ເວົ້າໃນຂະນະທີ່ເຮົາເບິ່ງສະພາບການ ຫຼື ສະຖານະການແລ້ວ ກໍນຳມາຄາດຄະເນ. (ກໍລະນີຄາດຄະເນເຖິງສິ່ງທີ່ເກີດຂຶ້ນໃນອະດີດແມ່ນຕ້ອງຕື່ມ '-았/었-' ໃສ່ໜ້າຂອງ '-겠-')

- 가: 설날에 한국 친구 집에 초대를 받았어요. ໃນວັນຂຶ້ນປີໃໝ່ ຂ້ອຍໄດ້ຮັບການເຊື້ອເຊີນໄປເຮືອນໝູ່ຄົນເກົາຫຼີ.
  나: 정말 **좋겠어요**. ໂອ້, ດີເນາະ.
- 가: 요즘 일이 많아서 너무 바빠요. ປັດຈຸບັດນີ້ ຂ້ອຍຄາວຽກຫຼາຍ ເພາະມີວຽກຫຼາຍໆ.
  나: 일이 많아서 **힘들겠어요**. ເຈົ້າຄືຊິເມື່ອຍເນາະ ເພາະມີວຽກຫຼາຍ.
- 가: 어제 우리 팀 회식이 있었는데 노래방에도 갔어요.
  ມື້ວານນີ້ ຂ້ອຍໄປກິນລ້ຽງກັບໝູ່ໃນທີມງານ ແລ້ວກໍໄປຮ້ອງຄາລາໂອເກະຕໍ່.
  나: 그래요? **재미있었겠어요.** ແມ່ນບໍ? ຄືຊິມ່ວນເນາະ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

✔ ລະຫວ່າງ **'-겠-'** ກັບ **'-(으)ㄹ 거예요'**

'-겠-' ກັບ '-(으)ㄹ 거예요' ແມ່ນໃຊ້ຊີ້ບອກເຖິງເຈດຕະນາຂອງປະທານໃນປະໂຫຍກ ຫຼື ໃຊ້ໃນເວລາຄາດຄະເນເຖິງເລື່ອງໃດໜຶ່ງ. ໃນເວລາຊີ້ບອກເຖິງເຈດຕະນານັ້ນ ປະທານຂອງປະໂຫຍກເປັນບູລຸດທີ 1 ເຮົາໃຊ້ໄດ້ທັງ '-겠-' ແລະ '-(으)ㄹ 거예요'. ໃນກໍລະນີໃຊ້ໃນການຄາດຄະເນ ປະທານຂອງປະໂຫຍກຕ້ອງເປັນບູລຸດທີ 2 ແລະທີ 3. ກໍລະນີຂໍ້ອ້າງອີງໃນການຄາດຄະເນຖ້າແມ່ນແງ່ຄວາມຄິດ ຫຼື ມຸມມອງຂອງຜູ້ເວົ້າເອງແມ່ນໃຊ້ '-겠-' ແຕ່ຖ້າແມ່ນແງ່ຄວາມ ຄິດ ຫຼື ມຸມມອງຂອງຄົນ ທົ່ວໆໄປແມ່ນໃຊ້ '-(으)ㄹ 거예요'.

- 바루 씨가 야근을 하겠어요.(X)
- 여기를 누르면 불이 켜지겠어요.(X)
- 바루 씨가 야근을 **할 거예요**.(O)
- 여기를 누르면 불이 **켜질 거예요**.(O)



ເຂົ້າໃຈການໃຊ້ '-겠-' ແລ້ວບໍ່? ສະນັ້ນ ຈົ່ງເລືອກເອົາຄຳຕອບ ທີ່ຖືກຕ້ອງ ຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

**2. 대화를 읽고 맞는 대답을 고르세요.** ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງ.

1) 가: 요즘 일이 너무 많아요. ປັດຈຸບັນນີ້ ມີວຽກຫຼາຍ.
   나: ______________________.

   ① 바쁘겠어요　　② 바빴겠어요

2) 가: 지난주에 제주도로 여행을 다녀왔어요. ອາທິດຜ່ານມາ ໄດ້ໄປທ່ຽວເກາະເຈຈູ.
   나: ______________________.

   ① 정말 재미있겠어요　　② 정말 재미있었겠어요

정답 1) ① 2) ②

## 대화 2 ບົດສົນທະນາ 2

Track 104



ເຮືອງ ແລະ ຊຸພິກາ ກຳລັງລົມກັນກ່ຽວກັບ ວັນພັກທີ່ຍາວໃນຊ່ວງຈຸຊອກ (ບຸນກາບໄຫວ້ ບັນພະບຸລຸດ). ທັງສອງຄົນນັ້ນ ກຳລັງລົມກັນກ່ຽວກັບ ຫຍັງແດ່? ກ່ອນອື່ນໝົດ ຈົ່ງຟັງບົດ ສົນທະນານີ້ ກ່ອນສອງຄັ້ງ.

**흐 엉** 수피카 씨, 추석 연휴에 뭐 할 거예요?
ຊຸພິກາ ຊ່ວງວັນພັກຈຸຊອກ ຈະເຮັດຫຍັງບໍ?

**수피카** 글쎄요. 아직 잘 모르겠어요.
흐엉 씨는요?
ອືມ, ຍັງບໍ່ທັນຮູ້ເທື່ອ. ເຮືອງເດ?

**흐 엉** 저는 친구들하고 경복궁에 가려고 해요. 거기에서 고향에 못 가는 사람들을 위해서 여러 가지 행사를 해요.
ຂ້ອຍມີແຜນຈະໄປ ພະລາດຊະວັງ ຄຽງບອກບົກບໝ່. ຢູ່ບ່ອນນີ້ ແມ່ນໄດ້ມີກິດຈະກຳຕ່າງໆ ສຳລັບຄົນທີ່ບໍ່ໄດ້ກັບໄປຢາມບ້ານເກີດໄດ້.

**수피카** 그래요? 가면 뭘 할 수 있어요?
ແມ່ນບໍ? ຖ້າໄປນັ້ນ ສາມາດເຮັດຫຍັງໄດ້ແດ່?

**흐 엉** 한국의 전통 놀이도 할 수 있고 송편을 만드는 체험도 할 수 있어요.
수피카 씨도 같이 가요.
ສາມາດຫຼິ້ນເກມພື້ນບ້ານ ຂອງເກົາຫຼີ ແລະ ທົດລອງເຮັດເຂົ້າໜົມຊົງປີຍອນ. ຊຸພິກາ ກໍໄປນຳກັນເນາະເນາະ.

**연휴** ວັນພັກຍາວ
- 연휴에 여행 온 가족들이 많이 있어요?
  ໃນຊ່ວງວັນພັກຍາວ ຫຼາຍຄອບຄົວພາກັນ ໄປທ່ອງທ່ຽວບໍ?
- 이번 주에는 금요일이 공휴일이라서 사흘 동안 연휴예요.
  ພາຍໃນອາທິດນີ້ ວັນສຸກກໍແມ່ນວັນພັກລັດຖະການ ສະນັ້ນ ພວກເຮົາຈະມີວັນພັກຕິດຕໍ່ກັນ 3 ວັນ.

**행사** ງານ, ກິດຈະກຳ
- 어린이날이 되면 어린이를 위해서 여러 가지 행사가 열려요.
  ຖ້າຫາກ ແມ່ນວັນເດັກນ້ອຍ ແມ່ນໄດ້ມີການເປີດງານຫຼາຍຢ່າງ ສຳລັບເດັກນ້ອຍ.
- 지난 연말에 우리 회사에서는 직원들을 위해서 여러 행사를 준비했어요.
  ໃນງານສົ່ງທ້າຍປີທີ່ຜ່ານມາບໍລິສັດພວກເຮົາ ແມ່ນໄດ້ກະ ກຽມຫຼາກຫຼາຍກິດຈະກຳໃຫ້ກັບພະນັກງານ.



ຄັ້ງນີ້ ຈົ່ງລອງສະແດງບົດບາດເປັນ ຊຸພິກາ ແລະ ເຮືອງ ແລ້ວເວົ້າຕາມບົດສົນທະນາ. ໄດ້ຕັ້ງ ໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້ລອງເບິ່ງ.

1. 흐엉 씨는 추석에 뭘 하려고 해요? ເຮືອງ ຊ່ວງຈຸຊອກ ມີແຜນເຮັດຫຍັງບໍ?
2. 경복궁에서는 어떤 행사가 있어요? ຢູ່ພະລາດຊະວັງ ຄຽງບອກບຸກມີງານຫຍັງແດ່?

정답 1. 경복궁에 가려고 해요. 2. 한국의 전통 놀이를 하고 송편을 만들 수 있어요.



## 어휘 2 ຄຳສັບ 2    추석 ຈູຊອກ(ບຸນປະເພນີ ກາບໄຫວ້ບັນພະບຸລຸດ)



ສຳນວນທີ່ກ່ຽວຂ້ອງກັບ ບຸນປີໃໝ່ເກົາຫຼີ ມີຫຍັງແດ່ ລອງໄປເບິ່ງນຳກັນບໍ?




고향에 내려가다
ໄປຢ້ຽມຢາມ ບ້ານເກີດ




친척집에 가다
ໄປຢ້ຽມຢາມ ເຮືອນພີ່ນ້ອງ



차례를 지내다
ເຮັດພິທີໄຫວ້ ບັນພະບຸລຸດ



절하다
ໄຫວ້, ກາບໄຫວ້



성묘하다
ໄຫວ້ຫຼຸມຝັງສົບ ຂອງບັນພະບຸລຸດ



송편을 만들다
ເຮັດເຂົ້າໜົມ ຊົງປີຍອນ
*(Songpyeon)*



보름달을 보다
ຊົມພະຈັນເຕັມດວງ



소원을 빌다
ຂໍອະທິຖານ



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




1)




2)



3)



4)



5)



6)



7)



8)

**보기**

| | | | |
|---|---|---|---|
| 차례를 지내다 | 친척집에 가다 | 성묘하다 | 송편을 만들다 |
| 보름달을 보다 | 소원을 빌다 | 절하다 | 고향에 내려가다 |

**정답** 1) 고향에 내려가다 2) 친척집에 가다 3) 절하다 4) 송편을 만들다 5) 차례를 지내다 6) 성묘하다 7) 보름달을 보다 8) 소원을 빌다

## 문법 2 ບົດສົນທະນາ 2 -는



'-는' ແລະເຮັດໜ້າທີ່ເປັນຄຳຂະຫຍາຍໃຫ້ຄຳນາມເຊິ່ງສະຖານະການ ຫຼື ການກະທຳນັ້ນແມ່ນເກີດຂຶ້ນໃນປັດຈຸບັນ.(ໃນກໍລະນີລົງທ້າຍດ້ວຍຕົວສະກົດຕົວ 'ㄹ', ຕົວ 'ㄹ' ຈະຫາຍໄປ. ຕົວຢ່າງ: 살다 → 사는)

- 가: 한국 사람들은 명절에 보통 뭐 해요? ໃນຊ່ວງເທດສະການ, ປົກກະຕິຄົນເກົາຫຼີເຮັດຫຍັງ?
  나: 고향에 **내려가는** 사람이 많아요. ຄົນທີ່ກັບເມືອບ້ານເກີດແມ່ນມີຫຼາຍ.
- 가: 지금 듣는 노래가 뭐예요? ເພງທີ່ເຈົ້າຟັງດຽວນີ້ ແມ່ນເພງຫຍັງ?
  나: 요즘 한국에서 **유행하는** 노래예요. ແມ່ນເພງທີ່ຄົນເກົາຫຼີນິຍົມຟັງໃນປັດຈຸບັນ.
- 가: 바루 씨는 무슨 일을 하세요? ບາລູເຈົ້າເຮັດວຽກຫຍັງ?
  나: 저는 가구를 **만드는** 일을 해요. ຂ້ອຍເປັນຊ່າງເຟີນີເຈີ.



ເຂົ້າໃຈການໃຊ້ '-는' ແລ້ວບໍ? ສະນັ້ນ ຈົ່ງເລືອກເອົາສຳນວນ ທີ່ເໝາະສົມແລ້ວຕື່ມໃສ່ບົດສົນທະນາລອງເບິ່ງ.

2. 빈칸에 맞는 표현을 <보기>에서 골라 대화를 완성하세요.
   ຈົ່ງເລືອກເອົາສຳນວນ ທີ່ຖືກຕ້ອງ ຈາກ < ກອບ > ຕື່ມໃສ່ຫວ່າງບົດສົນທະນາ.

1) 가: 안녕하세요. 저는 한국건설에 ____________ 아딧입니다.
   ສະບາຍດີ, ຂ້ອຍ ແມ່ນອາດິດ ຈາກບໍລິສັດ ກໍ່ສ້າງເກົາຫຼີ.
   나: 반갑습니다. ຍິນດີທີ່ຮູ້ຈັກ.
2) 가: 요즘 날씨가 참 따뜻하지요? ປັດຈຸບັນ ສະພາບອາກາດ ແມ່ນອົບອຸ່ນ ແມ່ນບໍ?
   나: 네, 그래서 밖에서 ____________ 사람이 많네요.
   ເຈົ້າ. ຍ້ອນແນວນັ້ນ ຈຶ່ງມີຄົນອອກກຳລັງກາຍ ຫຼາຍຢູ່ຂ້າງນອກ.
3) 가: 바루 씨는 어떤 일을 하세요? ບາຣູ ເຈົ້າເຮັດວຽກຫຍັງບໍ?
   나: 저는 가구를 ____________ 일을 해요.
   ຂ້ອຍ ເຮັດວຽກກ່ຽວກັບ ສ້າງເຟີນີເຈີ.

보기: 만들다 / 다니다 / 운동하다

정답 1) 다니는 2) 운동하는 3) 만드는



ລອງມາຮຽນນຳກັນຕື່ມໜ້ອຍໜຶ່ງບໍ? ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ '-는'.

1. 투안 씨가 회사에서 일해요. 그 회사는 시청 근처에 있어요.
   ________________________________________.
2. 리한 씨가 주스를 마셔요. 그 주스는 오렌지 주스예요.
   ________________________________________.

정답 1. 투안 씨가 일하는 회사는 시청 근처에 있어요.
2. 리한 씨가 마시는 주스는 오렌지 주스예요.

### 유용한 표현 ສຳນວນທີ່ສຳຄັນ

이건 한국말로 뭐예요? ອັນນີ້ ພາສາເກົາຫຼີແມ່ນຫຍັງ?

가: **이건 한국말로 뭐예요?** ອັນນີ້ ພາສາເກົາຫຼີແມ່ນຫຍັງ?
나: 그건 종이라고 해요. ອັນນັ້ນ ແມ່ນເອີ້ນວ່າ '종이' (ເຈ້ຍ).

## 활동 ກິດຈະກໍາ

다음을 읽고 질문에 답하세요. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວຕອບຄໍາຖາມ.

지난주 금요일은 설날이었습니다. 저는 설날에 한국 친구 집에 초대를 받아서 친구의 집에 갔습니다. 친구의 할아버지와 할머니는 한복을 입고 계셨습니다. 저는 할아버지와 할머니, 친구의 부모님께 절을 했습니다.

한국에서는 설날에 어른들께 절을 하면서 새해 인사를 드리는데 이것을 '________ ㉠ ________'(이)라고 합니다. 절을 한 후에 가족들이 모여서 같이 떡국을 먹었습니다. 한국에서 처음 먹어 봤는데 정말 맛있었습니다. 그리고 친구의 가족과 함께 윷놀이를 하면서 즐거운 하루를 보냈습니다.

ໃນວັນສຸກ ອາທິດທີ່ຜ່ານມາ ແມ່ນວັນປີໃໝ່ເກົາຫຼີ. ຂ້ອຍໄດ້ຮັບການເຊີນຈາກເພື່ອນເກົາຫຼີໃຫ້ໄປຢາມເຮືອນ ສະນັ້ນ ຈຶ່ງຈະໄປເຮືອນໝູ່ໃນວັນປີໃໝ່ເກົາຫຼີ. ພໍ່ເຖົ້າ ແລະ ແມ່ເຖົ້າຂອງໝູ່ແມ່ນໄດ້ນຸ່ງຊຸດຮັນບົກ (ຊຸດປະຈໍາຊາດເກົາຫຼີ) ຢູ່ພາຍໃນເຮືອນ. ຂ້ອຍໄດ້ຂໍຄະມາພໍ່ເຖົ້າ, ແມ່ເຖົ້າ ແລະ ພໍ່ແມ່ຂອງໝູ່ນໍາ. ຢູ່ເກົາຫຼີ ໃນວັນປີໃໝ່ ໄດ້ຂໍຄະມາ ຫຼື ກາບໄຫວ້ຜູ້ອາວຸດໂສ ແລະ ເປັນການທັກທາຍໃນງານປີໃໝ່ ເອີ້ນວ່າ '___ ㉠ ___'. ຫຼັງຈາກການຂໍຄະມາແລ້ວ (ການກາບໄຫວ້) ສະມາຊິກໃນຄອບຄົວຈະມາລວມຕົວກັນ ກິນແກງຕ່ອກນໍາກັນ. ຢູ່ເກົາຫຼີ ເປັນເທື່ອທໍາອິດທີ່ໄດ້ລອງກິນ ແລະ ກໍແຊບຫຼາຍ. ພ້ອມກັນນັ້ນ ກໍຍັງໄດ້ຫຼິ້ນເກມຢັດ (Yut) ຮ່ວມກັບສະມາຊິກໃນຄອບຄົວຂອງໝູ່ ເຊິ່ງໄດ້ເປັນເວລາ ທີ່ມີຄວາມສຸກສະໜຸກສະໜານ.

1. ㉠에 들어갈 말로 알맞은 것을 고르세요. ຈົ່ງເລືອກເອົາຄໍາຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ '㉠'.

① 덕담　　② 세배　　③ 성묘　　④ 차례

2. 위의 내용과 같으면 ○, 다르면 x에 표시하세요.
ຈົ່ງໝາຍ○ໃສ່ສໍານວນ ທີ່ຖືກຕ້ອງກັບບົດເລື່ອງ ຂ້າງເທິງນັ້ນ ແລະ ໝາຍ X ໃສ່ເນື້ອໃນ ທີ່ບໍ່ຖືກກັບບົດເລື່ອງຂ້າງເທິງນັ້ນ.

1) 한국에서는 설날에 떡국을 먹습니다.　　○　　X
2) 한국에서는 새해 인사를 할 때 절을 합니다.　　○　　X
3) 이 사람은 설날에 한국 친구를 집으로 초대했습니다.　　○　　X

정답 1. ② 2. 1) O 2) O 3) X

# 한국의 명절

## ວັນພັກຂອງເກົາຫຼີ

### 설날 ວັນປີໃໝ່ເກົາຫຼີ



설날은 음력 1월 1일로 한 해가 시작되는 것을 축하하면서 기념하는 날입니다. 가족들이 모여서 차례를 지내고 어른들께 세배를 합니다. 세배를 하면 어른들이 덕담을 해 주시고 세뱃돈을 주시기도 합니다. 그리고 설날에는 "새해 복 많이 받으세요."라는 인사를 합니다.

ວັນປີໃໝ່ເກົາຫຼີ ແມ່ນເອົາຕາມ ວັນທີ 1 ເດືອນ 1 ຂອງປະຕິທິນລຸນາເປັນມື້ ທີ່ສະແດງຄວາມຍິນດີ ທີ່ໄດ້ເລີ່ມມື້ໃໝ່ຂອງປີ ພ້ອມທັງເປັນວັນ ທີ່ສະ ເຫຼີມສະຫຼອງປີໃໝ່ນຳ. ໃນມື້ນັ້ນ ສະມາຊິກໃນຄອບຄົວ ຈະຮ່ວມຕົວກັນ ໃຊ້ເວລາຢູ່ນຳກັນ ແລະ ບັນດາເດັກນ້ອຍກໍຈະເຮັດການຂໍຄະມາຜູ້ອາວຸດໂສ ແລະ ຜູ້ອາວຸດໂສກໍຈະໃຫ້ພອນ ພ້ອມກັບໃຫ້ເງິນຂອງຂວັນປີໃໝ່. ພ້ອມກັນນັ້ນ ຈະທັກທາຍກັນ ໂດຍໃຊ້ຄຳວ່າ "새해 복 많이 받으세요."

### 정월대보름 ໃນມື້ພະຈັນ ເຕັມດວງ



정월대보름은 음력 1월 15일로 새해 첫 보름달이 뜨는 날입니다. 사람들은 다섯 가지 곡식으로 지은 오곡밥과 말린 나물을 요리해서 먹습니다. 그리고 땅콩이나 호두 등 껍질이 딱딱한 견과류를 먹는데, 이를 '부럼'이라고 합니다. 부럼을 깨 먹으면 몸에 부스럼이 생기지 않는다는 이야기가 있습니다.

ໃນມື້ພະຈັນເຕັມດວງ*(Daeboreum)* ແມ່ນກົງກັບວັນທີ 15 ເດືອນ 1 ຕາມປະຕິ ທິນລຸນາ ເຊິ່ງເປັນມື້ທຳອິດຂອງພະຈັນເຕັມດວງ. ຄົນເກົາຫຼີ ຈະກິນເຂົ້າທີ່ປະກອບ ມີພືດທີ່ເປັນເມັດຫ້າຢ່າງລວມກັນ, ໂອກກົກປັບ ແລະ ພຶດຜັກອາຫານແຫ້ງ. ພ້ອມ ນັ້ນພວກເຂົາຍັງກິນຖົ່ວດິນ, ໝາກໄມ້ທີ່ເປັນເປືອກແຂງອື່ນໆ ຫຼື ເອີ້ນວ່າບູ ຣອມ, ເຊິ່ງມີຄວາມເຊື່ອເວົ້າກັນວ່າ ຖ້າຫາກກິນບູຣອມແລ້ວ ຮ່າງກາຍຈະແຂງແກ່ນຫຼີກເວັ້ນຈາກ ສິ່ງທີ່ບໍ່ດີ.

### 추석 ຈູຊ່ອກ



추석은 음력 8월 15일로 '한가위'라고도 합니다. 추석에도 성묘를 하고 차례를 지내는데, 추석에는 갓 수확한 쌀로 쌀밥을 짓고 송편을 만들어서 먹습니다. 그리고 밤에는 보름달을 보면서 소원을 빕니다. 추석의 대표적인 놀이로는 '강강술래'가 있는데 이는 밤에 달 아래 여성들이 동그랗게 손을 잡고 노래를 부르면서 빙글빙글 도는 놀이입니다.

ຈູຊ່ອກ*(Chuseok)* ຫຼື ວັນໄຫວ້ບັນພະບູລຸດ, ແມ່ນກົງກັບວັນທີ 15 ເດືອນ 8 ໃນປະຕິທິນລຸນາ ຫຼື ເອີ້ນອີກຊື່ໜຶ່ງວ່າ 'ຫັນກາວີ'(한가위). ໃນວັນຈູຊ່ອກ ຄົນເກົາຫຼີ ຈະໄປກາບໄຫວ້ຫຼຸມຝັງສົບຂອງບັນພະບູລຸດ ແລ້ວສະແດງຄວາມ ເຄົາລົບ. ພ້ອມນັ້ນ ວັນຈູຊ່ອກ ຄົນເກົາຫຼີ ຈະພ້ອມກັນກິນເຂົ້າໃໝ່ ແລະ ເຮັດ ເຂົ້າໜົມຊົງປີຍອນ ເພື່ອກິນໃນວັນດັ່ງກ່າວນີ້. ໃນຕອນກາງຄືນ ຈະພ້ອມ ກັນເບິ່ງພະຈັນເຕັມດວງ ແລ້ວຂໍອະທິຖານ. ເກມທີ່ເປັນຕົວ ແທນເອກະລັກຂອງວັນ ຈູຊ່ອກແມ່ນເອີ້ນວ່າ ຄັງຄັງຊູເຣ (강강술래) ຈະຫຼິ້ນກາງແຈ້ງໃນຄືນທີ່ມີແສງເດືອນ ເຊິ່ງເປັນເກມພື້ນເມືອງສຳລັບ ແມ່ຍິງທີ່ຈະຈັບມືກັນເປັນວົງມົນ.



# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນເປັນການຟັງບົດສົນທະນາ ແລະ ເລືອກເອົາຄໍາຕອບທີ່ເໝາະສົມ. ຈົ່ງຕັ້ງໃຈ ຟັງ ແລະ ເລືອກເອົາຄໍາຕອບທີ່ຖືກຕ້ອງ.

[1~3] 이야기를 듣고 질문에 알맞은 답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄໍາຕອບ ທີ່ເໝາະສົມກັບຄໍາຖາມ.





1. 남자는 설날 연휴에 무엇을 했습니까?
ຜູ້ຊາຍຄົນນັ້ນ ຊ່ວງປີໃໝ່ເກົາຫຼີ ວັນພັກຍາວ ລາວໄດ້ເຮັດຫຍັງ?

① 떡국을 먹었습니다. ② 집에 혼자 있었습니다.
③ 세배를 받았습니다. ④ 친구하고 영화를 봤습니다.

2. 한국 사람들이 추석에 하는 일과 관계 없는 것을 고르십시오.
ຈົ່ງເລືອກເອົາ ຄໍາຕອບທີ່ບໍ່ໄດ້ກ່ຽວຂ້ອງກັບ ສິ່ງທີ່ຄົນເກົາຫຼີເຮັດ ໃນວັນປີໃໝ່ເກົາຫຼີ.

① 고향에 갑니다. ② 세배를 합니다.
③ 차례를 지냅니다. ④ 맛있는 음식을 먹습니다.

3. 두 사람은 무엇에 대해 이야기하고 있습니까?
ທັງສອງຄົນນີ້ ແມ່ນກໍາລັງລົມກັນ ກ່ຽວກັບຫຍັງ?

① 명절에 먹는 옷 ② 명절에 하는 인사
③ 명절에 입는 음식 ④ 명절에 하는 놀이



ຕໍ່ໄປ ເປັນການຟັງບົດສົນທະນາ ແລະ ເລືອກເອົາຄໍາຕອບທີ່ເໝາະສົມສໍາລັບແຕ່ລະຄໍາຖາມ. ກ່ອນທີ່ຈະໄປຟັງບົດສົນທະນາ ຈົ່ງລອງກວດເບິ່ງເນື້ອໃນຂອງຄໍາຖາມກ່ອນ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາບົດໜຶ່ງ ແລ້ວຕອບຄໍາຖາມ 2 ຂໍ້.

4. 여자는 왜 추석에 고향에 안 내려갑니까?
ໃນຊ່ວງປີໃໝ່ ຍ້ອນຫຍັງແມ່ຍິງຄົນນັ້ນ ຈຶ່ງບໍ່ກັບໄປຢາມບ້ານເກີດບໍ?

① 일을 해야 돼서 ② 연휴가 너무 짧아서
③ 고향이 너무 멀어서 ④ 기차표가 다 팔려서

5. 두 사람은 추석 연휴에 무엇을 할 것입니까?
ທັງສອງຄົນນີ້ ໃນວັນພັກຍາວປີໃໝ່ເກົາຫຼີ ພວກເຂົາຈະເຮັດຫຍັງ?

① 집에서 쉴 것입니다. ② 같이 일을 할 것입니다.
③ 콘서트에 갈 것입니다. ④ 영화를 보러 갈 것입니다.



## 듣기 대본 ເນື້ອໃນບົດຟັງ

1. 여: 투안 씨는 설날 연휴에 뭐 했어요? ຕວນ ວັນພັກຍາວປີໃໝ່ ເຈົ້າໄດ້ເຮັດຫຍັງບໍ?
   남: 친구 집에 가서 어른들께 세배도 하고 떡국도 먹었어요.
   ໄດ້ໄປເຮືອນໝູ່, ແລ້ວກໍໄດ້ຂໍຄະມາຜູ້ອາວຸດໂສ ແລະ ໄດ້ກິນແກງຕ່ອກ.
2. 여: 한국 사람들은 추석에 보통 뭐 해요? ປົກກະຕິແລ້ວ ໃນວັນປີໃໝ່ ຄົນເກົາຫຼີເຮັດຫຍັງ?
   남: 고향에 내려가는 사람들이 많아요. 고향에 가서 가족들과 맛있는 음식도 먹고 차례도 지내요.
   ຫຼາຍຄົນກໍກັບໄປຢາມບ້ານເກີດ. ຢູ່ທີ່ບ້ານເກີດ ກໍໄດ້ກິນອາຫານແຊບໆ ກັບບັນດາສະມາຊິກໃນຄອບຄົວ ແລະ ໃຊ້ເວລາທຳພິທີເຊັ່ນໄຫວ້ບັນພະບຸລຸດນຳກັນ.
3. 여: 명절에 가족들이 만나서 하는 놀이가 있어요?
   ໃນມື້ວັນພັກນັ້ນ ໄດ້ພົບກັບສະມາຊິກ ໃນຄອບຄົວແລ້ວ ແມ່ນໄດ້ຫຼິ້ນເກມຫຍັງບໍ?
   남: 네, 설날이나 추석 같은 명절에 가족들이 모여서 윷놀이를 해요.
   ເຈົ້າ. ໃນວັນປີໃໝ່ ຫຼື ຈູຊ໋ອກ ແມ່ນຄ້າຍຄືກັນ ສະມາຊິກໃນຄອບຄົວໂຮມໂຕກັນ ແລ້ວກໍພ້ອມພາກັນຫຼິ້ນເກມຢັດ.

4-5. 남: 미영 씨, 이제 곧 추석인데 언제 고향에 내려가요?
ມິຍອງ ດຽວນີ້ ແມ່ນຊ່ວງວັນພັກ ຈູຊ໋ອກ ເມື່ອໃດ ເຈົ້າຈະກັບໄປຢາມບ້ານເກີດບໍ?
여: 이번 추석에는 고향에 안 내려갈 거예요. ຈູຊ໋ອກປີນີ້ ບໍ່ໄດ້ກັບໄປຢາມບ້ານເກີດດອກ.
남: 왜요? 추석에도 일을 해야 돼요? ເປັນຫຍັງບໍ? ຊ່ວງຈູຊ໋ອກ ກໍຕ້ອງໄດ້ເຮັດວຽກບໍ?
여: 아니요, 일은 안 하는데 고향에 가는 기차표가 없어요. ບໍ່ແມ່ນ. ບໍ່ໄດ້ເຮັດວຽກ ແຕ່ປີ້ລົດໄຟກັບໄປບ້ານເກີດ ບໍ່ມີ.
남: 아, 그럼 우리 추석 연휴에 만날까요? ອາ, ສະນັ້ນ ຊ່ວງວັນພັກຈູຊ໋ອກ ພວກເຮົາສາມາດພົບກັນໄດ້ບໍ?
여: 좋아요. 같이 영화도 보고 밥도 먹어요. ດີຄືກັນ. ໄປເບິ່ງໜັງ ແລະ ກິນເຂົ້ານຳກັນເນາະ.

정답 1. ① 2. ② 3. ④ 4. ④ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

L-33

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   다음 중 들은 내용과 같은 것은 무엇입니까? ຄຳຕອບທີ່ຖືກຕ້ອງກັບເນື້ອໃນ ທີ່ໄດ້ຟັງນັ້ນ ແມ່ນຫຍັງ?

   ① 여자는 추석 연휴 계획을 세워 두었습니다.
   ② 추석 연휴에 경복궁은 문을 열지 않습니다.
   ③ 남자는 이번 추석 연휴에 고향에 가려고 합니다.
   ④ 추석 연휴에 경복궁에서 송편을 만들 수 있습니다.

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 수피카 씨, 이번 추석 연휴에는 고향에 안 간다고 했죠? 뭐 할 거예요?
   ຊຸພິກາ ໃນເວລາພັກບຸນຈູຊອກຄັ້ງນີ້ ເຈົ້າໄດ້ເວົ້າວ່າ ບໍ່ກັບໄປຢາມບ້ານເກີດແມ່ນບໍ? ສະນັ້ນ ເຈົ້າຈະເຮັດຫຍັງບໍ?
   여: 글쎄요. 뭘 할지 아직 잘 모르겠어요. 투안 씨는요? ຈັ່ງວ່ານີ້ລະ, ຈະເຮັດຫຍັງ ຍັງບໍ່ທັນຮູ້ເທື່ອ. ຕວນ ເດ໋ ຈະເຮັດຫຍັງບໍ?
   남: 저는 친구들하고 경복궁에 구경 가려고 해요. 거기 가면 한국 전통 놀이도 하고 송편 만들기도 직접 해 볼 수 있대요.
   ຂ້ອຍກັບໝູ່ວາງແຜນ ທີ່ຈະໄປທ່ຽວພະລາດຊະວັງ ຄຽງບົກ. ຢູ່ບ່ອນນີ້ ສາມາດຫຼິ້ນເກມພື້ນບ້ານ ຂອງເກົາຫຼີ ແລະ ຍັງສາມາດລອງເຮັດເຂົ້າໜົມ ຊົງພະຍອນໄດ້ນຳອີກ.





# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 3 ເປັນການເລືອກເອົາສຳນວນ ທີ່ເໝາະສົມທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ ຂອງບົດສົນທະນາ. ຈົ່ງເລືອກເອົາສຳນວນ ທີ່ເໝາະສົມ ຕື່ມໃສ່ຫວ່າງ.

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

가: 한국의 전통 옷이 한복이지요? 한복은 보통 언제 입어요?
ຊຸດປະຈະຊາດເກົາຫຼີ ແມ່ນ ຮັນບົກບໍ? ຊຸດຮັນບົກ ປົກກະຕິແລ້ວ ແມ່ນນຸ່ງຕອນໃດ?

나: 설날이나 추석 같은 ________에 주로 입어요.
ປົກກະຕິແລ້ວ ແມ່ນຈະນຸ່ງໃນວັນພັກປີໃໝ່ ຫຼື ວັນພັກຈູຊ໋ອກ.

① 생일 ② 명절 ③ 계절 ④ 회의

2.

가: 지훈 씨는 설날 연휴에 뭐 할 거예요? ຈິຮຸນ ຊ່ວງວັນພັກປີໃໝ່ ຈະເຮັດຫຍັງບໍ?

나: 저는 고향에 ____________. ຂ້ອຍມີແຜນຈະກັບໄປຢາມບ້ານເກີດ.

① 다닐 거예요 ② 내려갈 거예요 ③ 돌아올 거예요 ④ 이사할 거예요

3.

가: 저는 지난 설 연휴에 친구 집에 가서 떡국도 먹고 세뱃돈도 받았어요.
ຂ້ອຍ ໃນວັນພັກປີໃໝ່ຜ່ານມາ ແມ່ນໄດ້ໄປ ເຮືອນຂອງໝູ່ ກິນແກງຕ໋ອກ ແລະ ກໍໄດ້ຮັບເງິນຂອງຂວັນປີໃໝ່ນຳ.

나: 우와, 정말 ____________. 저는 집에만 있었는데 부러워요.
ວາ, ຈັ່ງແມ່ນມ່ວນຫຼາຍເນາະ. ໜ້າເສຍດາຍ ຂ້ອຍໄດ້ຢູ່ແຕ່ເຮືອນ.

① 추웠겠어요 ② 속상했겠어요 ③ 재미있었겠어요 ④ 사람이 없었겠어요



ຕໍ່ໄປແມ່ນການອ່ານບົດເລື່ອງໜຶ່ງ ແລ້ວຕອບຄຳຖາມສອງຂໍ້. ຈົ່ງຄິດທົບທວນບົດຮຽນ ທີ່ຮຽນ ຜ່ານມາ ແລ້ວຕອບຄຳຖາມລອງເບິ່ງ.

[4~5] 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວຕອບຄຳຖາມ.

한국의 대표적인 명절은 설날과 추석입니다. 설날은 음력 1월 1일로 한 해의 시작을 축하하는 날입니다. 설날에는 가족이 모여 조상들께 차례를 지내고 어른들께 세배를 합니다. 그리고 떡국도 먹습니다. 추석은 음력 8월 15일로 과일과 곡식을 거둔 것을 감사하는 날입니다. 추석에는 차례를 지내고 송편을 먹습니다. 밤에는 보름달을 보고 소원도 빕니다. 추석에는 과일과 음식이 많아서 '더도 말고 덜도 말고 한가위만 같아라'라는 말도 있습니다.

ວັນພັກທີ່ເປັນເອກະລັກ ຂອງເກົາຫຼີນັ້ນ ແມ່ນບຸນປີໃໝ່ເກົາຫຼີ ແລະ ຈູຊ໋ອກ (ວັນໄຫວ້ບັນພະບຸລຸດ). ວັນປີໃໝ່ເກົາຫຼີ ແມ່ນກົງກັບວັນທີ 1 ເດືອນ 1 ຕາມປະຄິທິນລູນາ ເຊິ່ງຖືເປັນການສະຫຼອງ ວັນເລີ່ມຕົ້ນຂອງປີ. ໃນວັນປີໃໝ່ສະມາ ຊິກໃນຄອບຄົວຈະເຕົ້າໂຮມ ແລະ ໃຊ້ເວລາຢູ່ນຳກັນ ພ້ອມທັງມີການຂໍຄະມາ ຜູ້ອາວຸດໂສ້ນຳ. ນອກນັ້ນ ກໍ ຍັງມີ ການ ກິນ ແກ່ງຕ໋ອກນຳ. ສຳລັບວັນພັກຈູຊ໋ອກ ແມ່ນກົງກັບວັນທີ 15 ເດືອນ 8 ຕາມປະຕິທິນລູນາ ເຊິ່ງເປັນ ວັນທີ່ ເປັນການຂອບໃຈ ຕໍ່ສິ່ງເຮັດໃຫ້ສຳເລັດການເກັບກ່ຽວຜົດຜົນ ແລະ ໝາກໄມ້ຕ່າງໆ. ໃນວັນຈູຊ໋ອກກໍເຊັ່ນດຽວກັນ ສະມາຊິກໃນຄອບຄົວ ໃຊ້ເວລາຢູ່ຮ່ວມກັນ ແລະ ກິນເຂົ້າໜົມຊົງປຽອນ. ໃນຍາມກາງຄືນ ກໍຊົມພະຈັນເຕັມດວງ ແລະ ຂໍອາທິຖານ. ໃນຊ່ວງວັນຈູຊ໋ອກ ໝາກໄມ້ ແລະ ອາຫານຈະມີຫຼາຍ ຈຶ່ງມີຄຳເວົ້າທີ່ວ່າ ບໍ່ຕ້ອງຫຼາຍ ບໍ່ຕ້ອງໜ້ອຍ ເທົ່າກັບ ຮັນກາວີ (ວັນຈູຊ໋ອກ) ເທົ່ານັ້ນກໍພໍ.



4. 한 해의 시작을 축하하는 날은 언제입니까? ເມື່ອໃດ ທີ່ເປັນວັນສະຫຼອງ ໂດຍຖືເປັນວັນ ທີ່ເລີ່ມຕົ້ນຂອງປີ?

① 설날　② 추석　③ 명절　④ 한가위

5. 읽은 내용과 같은 것을 고르십시오. ຈົ່ງເລືອກເອົາສໍານວນ ທີ່ຖືກຕ້ອງ ກັບເນື້ອໃນ ຂອງບົດເລື່ອງນັ້ນ.

① 추석은 음력 1월 1일이다.
② 설날에 송편을 만들어서 먹는다.
③ 설날에는 조상들께 차례를 지내지 않는다.
④ 추석에는 과일과 음식을 많이 먹을 수 있다.

정답 1. ② 2. ② 3. ③ 4. ① 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄໍາຕອບ ທີ່ເໝາະສົມທີ່ສຸດ ເພື່ອຕື່ມໃສ່ບ່ອນຫວ່າງ.

1.

이번 연휴 때는 고향에 다녀올 생각입니다. 싸게 파는 비행기 표가 있어서 지난주에 표를 ________ 샀습니다.

ໃນວັນພັກວຽກທີ່ຍາວໃນຄັ້ງນີ້ ຄິດຢາກຈະໄປຢາມບ້ານເກີດ. ຍ້ອນມີການຂາຍປີ້ຍົນຖືກ ໃນອາທິດທີ່ຜ່ານມາ ຈຶ່ງໄດ້ຊື້ລ່ວງໜ້າໄວ້.

① 훨씬　② 아직
③ 매우　④ 미리

2.

다음 주는 명절 연휴입니다. 연휴 때는 일을 하지 않는 공장이 ________ 우리도 쉴 수 있을 것 같습니다.

ອາທິດໜ້າແມ່ນ ວັນພັກວຽກທີ່ຍາວ. ຊ່ວງວັນພັກວຽກຍາວ ໂຮງງານທີ່ບໍ່ໄດ້ເຮັດວຽກ ແມ່ນມີຈໍານວນຫຼາຍສະນັ້ນພວກເຮົາກໍ່ອາດຈະໄດ້ພັກຄືກັນ.

① 많을 때　② 많으니까
③ 가까울 때　④ 가까우니까

3.

오늘은 설날이라서 회사 사람들과 함께 사장님 댁에 인사를 드리러 갔습니다. 사장님 댁에서 떡국을 처음 ________.

ເນື່ອງຈາກມື້ນີ້ ແມ່ນວັນປີໃໝ່ເກົາຫຼີ ຄົນຈໍານວນຫຼາຍ ໄດ້ພາກັນໄປຢາມເຮືອນຂອງຫົວໜ້າ, ຢູ່ເຮືອນຂອງຫົວໜ້າ ໄດ້ລອງກິນແກງຕ່ອກເປັນຄັ້ງທໍາອິດ.

① 먹어 봤습니다　② 팔면 안 됩니다
③ 팔아 봤습니다　④ 먹으면 안 됩니다

정답 1. ④ 2. ② 3. ①



# 아기 옷을 선물하는 게 어때요?

ການໃຫ້ເສື້ອຜ້າເດັກນ້ອຍ ເປັນຂອງຂວັນເດ ຄິດວ່າແນວໃດ?

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການແນະນຳ, ການເວົ້າກ່ຽວກັບຂັ້ນຕອນ |
| □ ໄວຍາກອນ | -는 게 어때요, -고 나서 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ວັນພິເສດ, ວັດທະນະທຳ ການແຕ່ງງານ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ຂ່າວຮ້າຍ ແລະ ຂ່າວຂອງຄົນເກົາຫຼີ |



## 대화 1 ບົດສົນທະນາ 1






ຕໍ່ໄປນີ້ ແມ່ນບົດສົນທະນາລະຫວ່າງ ໂມນິກາ ແລະ ໂຊຮີ. ກ່ອນອື່ນ ຈົ່ງຟັງບົດສົນທະ ນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

모니카 소희 씨도 이번 주말에 순영 씨의 아기 돌잔치에 가요?
ວັນທ້າຍອາທິດນີ້, ໂຊຮີ ກໍຈະໄປງານວັນເກີດຄົບຮອບ 1 ປີ ຂອງລູກ ຊຸນຢອງ ຄືກັນບໍ?

소 희 네, 저도 갈 거예요.
ເຈົ້າ, ຂ້ອຍກໍຈະໄປຄືກັນ.

모니카 돌잔치에 가면 뭐 해요?
ຖ້າໄປງານວັດເກີດ ຄົບຮອບ 1 ປີ ແມ່ນເຮັດຫຍັງ?

소 희 가족과 친구들이 아기의 첫 번째 생일을 축하하고 밥도 먹어요.
ທາງຄອບຄົວ ແລະ ໝູ່ຄູ່ກໍຈະໄປສະແດງຄວາມຍິນດີ ກັບງານວັນເກີດຄົບຮອບໜຶ່ງປີ ຂອງເດັກນ້ອຍແລ້ວ ກໍກິນເຂົ້າຮ່ວມກັນ.

모니카 그런데 아기한테 무슨 선물을 하는 게 좋아요?
ແຕ່ວ່າ ເຮົາຈະເອົາຫຍັງ ເປັນຂອງຂວັນ ໃຫ້ເດັກນ້ອຍຈຶ່ງຈະດີບໍ?

소 희 아기 옷이나 인형을 많이 선물해요. 저는 인형을 샀으니까 모니카 씨는 옷을 선물하는 게 어때요?
ຄົນສ່ວນຫຼາຍກໍມັກເອົາ ຕຸກກະຕາ ຫຼື ເສື້ອຜ້າເດັກນ້ອຍ ໃຫ້ເປັນຂອງຂວັນ. ຂ້ອຍໄດ້ຊື້ຕຸກກະຕາແລ້ວ ໂມນິກາ ກໍໃຫ້ເສື້ອຜ້າເດັກນ້ອຍເປັນ ຂອງຂວັນເດ, ຄິດວ່າແນວໃດ?

모니카 그게 좋겠네요. 고마워요.
ອັນນັ້ນ ກໍດີຄືກັນ. ຂອບໃຈເດີ້.

> **번째**
> ໃຊ້ໃນເວລາ ທີ່ນັບເລກທີ, ລຳດັບຂອງວຽກ, ລະດັບຂັ້ນ ແລະ ອື່ນໆ.
> · 다음 달 첫 번째 토요일에 만나요.
> ພົບກັນວັນເສົາທຳອິດ ຂອງເດືອນໜ້າ.
> · 한국 방문은 이번이 두 번째예요.
> ຂ້ອຍ ມາຢ້ຽມຢາມ ປະເທດເກົາຫຼີ ເທື່ອນີ້ເປັນເທື່ອທີສອງ.

> **선물** ຂອງຂວັນ
> · 모니카 씨의 생일 선물로 꽃을 준비했어요.
> ຂ້ອຍໄດ້ກຽມດອກໄມ້ໄວ້ເປັນ ຂອງຂວັນ ວັນເກີດຂອງໂມນິກາ.
> · 어린이날에 제 조카에게 장난감 선물을 할 거예요.
> ໃນວັນເດັກ ຂ້ອຍຈະເອົາ ຂອງຫຼິ້ນໃຫ້ເປັນຂອງຂວັນຫຼານ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 이번 주말은 무슨 날이에요? ວັນທ້າຍອາທິດນີ້ ແມ່ນວັນທີຫຍັງ?
2. 두 사람은 무슨 선물을 준비할 거예요? ທັງສອງຄົນ ຈະກຽມຂອງຂວັນຫຍັງ?

정답 1. 순영 씨의 아기 돌잔치예요. 2. 인형과 옷을 준비할 거예요.





## 어휘 1 ຄຳສັບ 1

### 특별한 날 ວັນພິເສດ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ວັນພິເສດ ຂອງເກົາຫຼີ. ພວກເຮົາລອງມາ ເບິ່ງນຳກັນ ວ່າ ມີຫຍັງແດ່?



생일
ວັນເກີດ





백일
ວັນຄົບຮອບ 100 ວັນ





돌
ວັນຄົບຮອບວັນເກີດໜຶ່ງປີ



집들이
ຂຶ້ນເຮືອນໃໝ່





어버이날
ວັນພໍ່





스승의 날
ວັນຄູ





어린이날
ວັນເດັກນ້ອຍ



결혼기념일
ວັນຄົບຮອບ ແຕ່ງງານ





환갑
ວັນຄົບຮອບ ວັນເກີດ 60 ປີ





칠순
ວັນຄົບຮອບ ວັນເກີດ 70 ປີ







ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.

① ② ③ ④ ⑤

㉠ 생일 ㉡ 돌 ㉢ 어버이날 ㉣ 결혼기념일 ㉤ 집들이

정답 ① ㉡ ② ㉤ ③ ㉣ ④ ㉢ ⑤ ㉠

## 문법 1 ໄວຍາກອນ 1 -는 게 어때요

G34-1



'-는 게 어때요' ມັນໃຊ້ຕື່ມທ້າຍຄຳກຳມະເພື່ອແນະນຳ ຫຼື ຊັກຊວນໃຫ້ຄູ່ສົນທະນາລົງມືກະທຳໃນສິ່ງນັ້ນ.

- 가: 주말에 친구 집들이가 있는데 무슨 선물이 좋을까요?
  ທ້າຍອາທິດນີ້, ໝູ່ຂ້ອຍຈະຂຶ້ນເຮືອນໃໝ່ (ຂ້ອຍ) ຄວນເອົາຂອງຂວັນຫຍັງໃຫ້ລາວດີ?
  나: 세제나 휴지를 **사는 게 어때요**? ຊື້ແຟັບ ຫຼື ເຈ້ຍອະນາໄມໃຫ້.(ເຈົ້າຄິດວ່າແນວໃດ?)
- 가: 지금 밥을 먹을까요? ພວກເຮົາຈະກິນເຂົ້າດຽວນີ້ເລີຍບໍ?
  나: 영화를 본 후에 밥을 **먹는 게 어때요**? ເບິ່ງໜັງແລ້ວຈຶ່ງກິນເຂົ້າເນາະ? (ເຈົ້າຄິດວ່າແນວໃດ?)

### 대조적 정보 ການປຽບທຽບ

ໃນພາສາເກົາຫຼີເວລາສະເໜີຄວາມຄິດເຫັນແມ່ນມັກຈະໃຊ້ໃນຮູບແບບນຳສະເໜີແລ້ວຈຶ່ງຖາມຄວາມຄິດເຫັນຂອງອີກ ຝ່າຍໜຶ່ງ ແຕ່ໃນພາສາລາວແມ່ນມັກໃຊ້ໃນຮູບແບບແນະນຳໄປໂດຍກົງເລີຍ.

- 다음에는 우리 집에서 **모이는 게 어때요?** ເທື່ອໜ້າ ມາຊຸມນຸມກັນຢູ່ເຮືອນຂ້ອຍເນາະ, ເຈົ້າວ່າເປັນແນວໃດ?
- 일찍 밥을 **먹는 게 어때요?** ກິນເຂົ້າແຕ່ເວັນໆບໍ?



ເຂົ້າໃຈການໃຊ້ '-는 게 어때요?' ແລ້ວບໍ? ສະນັ້ນ, ຈົ່ງນຳໃຊ້ສຳນວນນີ້ ເພື່ອຕື່ມໃສ່ບົດ ສົນທະນາ ໃຫ້ຄົບຖ້ວນ.

2. 그림을 보고 '-는 게 어때요?'를 사용해서 대화를 완성하세요.
   ຈົ່ງເບິ່ງຮູບພາບແລ້ວໃຊ້ '-는 게 어때요?' ເພື່ອເຮັດໃຫ້ບົດສົນທະນາ ໃຫ້ຄົບຖ້ວນ.

1) 

가: 수진 씨가 집들이를 하는데 무슨 선물을 하면 좋을까요?
ຊູຈິນ ຈະຈັດງານຂຶ້ນບ້ານໃໝ່, ຂ້ອຍຄວນຈະເອົາ ຂອງຂັວນແບບໃດໃຫ້ຈຶ່ງຈະດີ?

나: ______________________________?

2) 

가: 다음 주 토요일이 모니카 씨 생일인데 뭘 살까요?
ວັນເສົາອາທິດໜ້າ ແມ່ນວັນເກີດຂອງໂມນິກາ, ຂ້ອຍ ຄວນຊື້ຫຍັງໃຫ້ດີ?

나: ______________________________?

정답 1) 휴지를 선물하는 게 어때요 2) 티셔츠를 선물하는 게 어때요

ລອງຮຽນເພີ່ມເຕີມ ອີກໜ້ອຍໜຶ່ງບໍ? ຈົ່ງຕື່ມໃສ່ປະໂຫຍກ ໃຫ້ຄົບຖ້ວນໂດຍການໃຊ້ '-는 게 어때요?'.

1. 가: 목이 좀 아파요.
   나: 따뜻한 물을 ____________?
2. 가: 주말에 어디로 여행을 갈까요?
   나: 제주도에 ____________?
3. 가: 어디에서 만날까요?
   나: 시내에서 ____________?
4. 가: 저는 공포 영화를 싫어해요.
   나: 그럼, 다른 영화를 ____________?

정답 1. 마시는 게 어때요 2. 가는 게 어때요 3. 만나는 게 어때요 4. 보는 게 어때요



## 대화 2 ບົດສົນທະນາ 2

Track 107



ມີຍອງ ແລະ ລີລີ ກຳລັງສົນທະນາກັນກ່ຽວກັບ ພິທີແຕ່ງງານ ຂອງເກົາຫຼີ. ທັງສອງຄົນກຳລັງລົມຫຍັງກັນ? ກ່ອນອື່ນ, ຈົ່ງຟັງບົດສົນທະນາສອງຄັ້ງ.

미영 신랑하고 수진 씨가 참 잘 어울리지요?
ຊູຈິນ ແລະ ເຈົ້າບ່າວຄືເໝາະສົມກັນຫຼາຍແມ່ນບໍ?

리리 네, 정말 잘 어울려요. 그런데 한국에서는 결혼할 때 한복을 안 입어요?
ແມ່ນ, ເໝາະສົມກັນແທ້ໆ. ແຕ່ວ່າ ຢູ່ເກົາຫຼີ, ເວລາແຕ່ງງານບໍ່ນຸ່ງຊຸດ ຮັນບົກບໍ?

미영 결혼식이 끝나고 나서 폐백을 드리는데 그때 한복을 입어요.
ຫຼັງຈາກເລີກ ງານແຕ່ງງານແລ້ວ ໃນເວລາທີ່ເຮັດພິທີ ແພແບັກ ໃນເວລານັ້ນຈຶ່ງໃສ່ຊຸດຮັນບົກ.

리리 폐백이 뭐예요?
ແພແບັກ ແມ່ນຫຍັງ?

미영 결혼할 때 신랑 부모님과 친척들께 하는 인사예요.
ໃນເວລາແຕ່ງງານ ແມ່ນປະເພນີ ການທັກທາຍ ແລະ ເຄົາລົບພໍ່ແມ່ເຈົ້າບ່າວ ແລະ ບັນດາຍາດພີ່ນ້ອງ.

리리 아, 그렇군요. 한국의 전통 혼례도 보고 싶어요.
ອ່າ, ແມ່ນແນວນັ້ນເນາະ. ຂ້ອຍ ຢາກເຫັນພິທີການແຕ່ງງານຕາມປະເພນີເກົາຫຼີນຳ.

**참** ຫຼາຍ/ແທ້
- 오늘은 날씨가 참 좋네요.
  ອາກາດ ມື້ນີ້ແມ່ນດີແທ້ໆ.
- 투안 씨는 일을 참 잘해요.
  ຕວນ ເຮັດວຽກໄດ້ດີຫຼາຍ.

**어울리다** ເຂົ້າກັນ/ເໝາະສົມ
- 가: 민수 씨하고 미영 씨가 결혼한다면서요?
  ຂ້ອຍໄດ້ຍິນວ່າ ມິນຊູ ແລະ ມີຍອງ ຈະແຕ່ງງານກັນບໍ?
- 나: 네, 저도 들었어요. 두 사람이 정말 잘 어울리는 것 같아요.
  ແມ່ນແລ້ວ, ຂ້ອຍກໍໄດ້ຍິນຄືກັນ. ທັງສອງຄົນເບິ່ງຄືເໝາະສົມກັນຫຼາຍ.



ຄັ້ງນີ້ ລອງສວມບົດບາດເປັນ ລີລີ ແລະ ມີຍອງ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງ ໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 미영 씨와 리리 씨는 지금 어디에 있어요? ຕອນນີ້ ມີຍອງ ແລະ ລີລີ ແມ່ນຢູ່ໃສ?
2. 폐백이 뭐예요? ແພແບັກ ແມ່ນຫຍັງ?

정답 1. 결혼식장에 있어요. 2. 신부가 신랑 부모님과 친척들께 하는 인사예요.



## 어휘 2 ຄຳສັບ 2 결혼 문화 ວັດທະນະທຳ ການແຕ່ງງານ



ສຳນວນທີ່ກ່ຽວຂ້ອງກັບ ວັດທະນາທຳການແຕ່ງງານມີຫຍັງແດ່ ລອງໄປເບິ່ງນຳກັນບໍ?



결혼식
ພິທີແຕ່ງງານ/ງານແຕ່ງງານ




청첩장
ບັດເຊີນໄປງານແຕ່ງງານ



축의금
ເງິນໃສ່ຊອງ
(ສຳລັບສະແດງຄວາມຍິນດີ)

신랑
ເຈົ້າບ່າວ



신부
ເຈົ້າສາວ



주례
ພິທີການ/ຜູ້ດຳເນີນ ພິທີແຕ່ງງານ



하객
ແຂກ/ຜູ້ຖືກເຊີນ



사진 촬영을 하다
ຖ່າຍຮູບພາບ



피로연을 하다
ງານລ້ຽງຫຼັງງານແຕ່ງງານ



폐백을 드리다
'ການຈັດພິທີແພແບັກ
(ເພື່ອທຳຄວາມເຄົາລົບ
ຄອບຄົວຝ່າຍເຈົ້າບ່າວ)





ຈົ່ງຄິດທົບທວນຄຳສັບ ທີ່ຮຽນມາຂ້າງເທິງນັ້ນ ອີກເທື່ອໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 문장을 완성하세요.
ຈົ່ງເລືອກສຳນວນ ທີ່ຖືກຕ້ອງກັບຮູບພາບຈາກ <ກອບ> ແລ້ວຕື່ມໃສ່ປະໂຫຍກ ໃຫ້ຄົບຖ້ວນ.

1) 제 한국 친구한테서 ___________을 받았어요.

2) 그래서 저는 지난주 토요일에 친구의 ___________에 갔어요.



3) 선물 대신 ___________을 준비했어요.

4) 결혼식이 시작되고 먼저 ___________이 입장했어요.



5) 그리고 ___________가 입장했는데 정말 아름다웠어요.

**보기**
결혼식
청첩장
신부
축의금
신랑

**정답** 1) 청첩장 2) 결혼식 3) 축의금 4) 신랑 5) 신부

## 문법 2 ໄວຍາກອນ 2 -고 나서




'-고 나서' ມັນໃຊ້ຕື່ມທ້າຍຄຳກຳມະເພື່ອຊີ້ບອກວ່າ ພາຍຫຼັງມີການກະທຳນັ້ນເກີດຂຶ້ນກໍຈະພາໃຫ້ເກີດມີສະພາບການໃດໜຶ່ງ ຫຼື ການກະທຳອື່ນເກີດຂຶ້ນຕາມມາ.

- 가: 미영 씨, 언제 밥 먹을 거예요? ມີຢອງ, ເມື່ອໃດເຈົ້າຈະກິນເຂົ້າ?
  나: 이 일을 **끝내고 나서** 먹으러 갈 거예요. ເຮັດວຽກນີ້ແລ້ວ ຂ້ອຍຈຶ່ງຈະກິນ.
- 가: 모니카 씨, 당근하고 양파는 어떻게 할까요? ໂມນິຄາ, ຫົວກະລົດກັບຜັກບົ່ວເຮັດແນວໃດ?
  나: 고기를 **삶고 나서** 볶으세요. ຫຼັງຈາກ ຕົ້ມຊີ້ນແລ້ວ ກໍເອົາໄປຂົ້ວ.



ເຂົ້າໃຈການໃຊ້ '-고 나서' ແລ້ວບໍ? ສະນັ້ນ ຈົ່ງນຳໃຊ້ສຳນວນນີ້ ເພື່ອຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

2. 그림을 보고 '-고 나서'를 사용해서 대화를 완성하세요.
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນ ໂດຍການໃຊ້ '-고 나서'.

1) 

가: 언제 폐백을 드려요? ຕອນໃດຈະເຮັດພິທີແພແບັກ?
나: ________________ 폐백을 드려요.

2) 

가: 언제 밥 먹으러 갈까요? ຕອນໃດເຮົາຈະໄປກິນເຂົ້າ?
나: ________________ 갑시다.

정답 1) 결혼식을 하고 나서 2) 사진을 찍고 나서



ລອງຮຽນເພີ່ມເຕີມ ອີກໜ້ອຍໜຶ່ງບໍ? ຈົ່ງຕື່ມໃສ່ປະໂຫຍກ ໃຫ້ຄົບຖ້ວນໂດຍການໃຊ້ '-고 나서'.

1. 아침을 ________________________________.

2. 장을 ________________________________.

정답 1. 먹고 나서 회사에 가요 2. 보고 나서 요리해요

## 활동 ກິດຈະກຳ

〈보기〉처럼 이야기해 보세요. ລອງເຮັດບົດສົນທະນາ ຄືດັ່ງຕົວຢ່າງ.

보기 ຕົວຢ່າງ

다음 주 토요일 ວັນເສົາອາທິດໜ້າ



수진 씨 아기 돌
ວັນຄົບຮອບ ວັນເກີດ 1 ປີ ຂອງລູກ ຊູຈິນ

가: 다음 주 토요일이 수진 씨 아기 돌인데 무슨 선물을 하면 좋을까요?
ວັນເສົາອາທິດໜ້າ ແມ່ນວັນຄົບຮອບວັນເກີດ 1 ປີ ຂອງລູກ ຊູຈິນ, ຂ້ອຍຄວນຈະເອົາຫຍັງ ໃຫ້ເປັນຂອງຂວັນ ວັນເກີດດີ?

나: 아기 옷을 선물하는 게 어때요?
ເອົາເສື້ອຜ້າເດັກນ້ອຍ ໃຫ້ເປັນຂອງຂວັນເດ, ຄິດວ່າແນວໃດ?

1) 5월 15일

스승의 날

2) 내일

친구 생일

3) 다음 주 일요일



친구 결혼식

4) 이번 주 토요일




반장님 집들이

### 유용한 표현 ສຳນວນທີ່ສຳຄັນ

일할 맛이 나요. ຂ້ອຍຮູ້ສຶກຢາກເຮັດວຽກ.(ຄວາມຮູ້ສຶກດຸໝັ່ນ ຢາກເຮັດວຽກ)

가: 상여금을 받아서 기분이 좋네요. ຂ້ອຍຮູ້ສຶກດີຫຼາຍ ຫຼັງຈາກໄດ້ຮັບເງິນໂບນັສ.

나: 맞아요, **일할 맛이 나요.** ແມ່ນແລ້ວ, **ຂ້ອຍຮູ້ສຶກ ຢາກເຮັດວຽກເລີຍ.**

# 한국인의 경조사

## ງານທາງຄອບຄົວ ຂອງຄົນເກົາຫຼີ

**돌** ວັນຄົບຮອບວັນເກີດ 1 ປີ




아기가 태어난 후 1년이 되면 돌잔치를 합니다. 아기의 부모는 친척과 친구들을 초대해서 같이 밥을 먹는데 이때 '돌잡이'를 합니다. '돌잡이'는 아기의 미래를 알아보기 위해 여러 가지 물건을 놓고 아기가 잡게 하는 것입니다.

ຫຼັງຈາກທີ່ເດັກເກີດມາໄດ້ 1 ປີ ກໍຈະມີການຈັດງານສະຫຼອງ ວັນຄົບຮອບວັນເກີດ 1 ປີ. ພໍ່ແມ່ ຂອງເດັກ ຈະເຊີນຍາດພີ່ນ້ອງ ແລະ ໝູ່ ເພື່ອມາກິນເຂົ້າຮ່ວມກັນ ແລະ ໃນເວລານີ້ ກໍຈະມີ '돌잡이'. '돌잡이' ແມ່ນເຮັດເພື່ອໃຫ້ຮູ້ອະນາຄົດ ຂອງເດັກນ້ອຍວ່າຈະເປັນແນວໃດ ໂດຍຈະມີການໃສ່ສິ່ງຂອງ ຫຼາກຫຼາຍລົງໄປ ແລ້ວເອົາໃຫ້ເດັກນ້ອຍຈັບ.

**결혼** ງານແຕ່ງງານ



한국인의 결혼식에는 전통 혼례와 현대적인 결혼식이 있는데 요즘은 결혼식장이나 호텔에서 현대적인 결혼식을 많이 합니다. 그렇지만 전통적인 모습도 많이 남아 있는데, 결혼식이 끝나고 나서 신랑 부모님과 친척들께 드리는 인사인 폐백이 대표적입니다.

ໃນງານແຕ່ງງານ ຂອງຄົນເກົາຫຼີ ແມ່ນມີທັງພິທີ ທາງປະເພນີ ແລະ ພິທີແບບສະໄໝໃໝ່ ເຊິ່ງປະຈຸບັນ ກໍຈະມີການຈັດງານແຕ່ງງານແບບສະ ໄໝໃໝ່ ຢູ່ໂຮງແຮມ ຫຼື ສະຖານທີ່ຈັດງານແຕ່ງງານຕ່າງໆ ເປັນສ່ວນຫຼາຍ. ເຖິງແນວໃດກໍຕາມ, ພິທີ ແຕ່ງງານທາງປະເພນີ ກໍຍັງຫຼົງເຫຼືອຢູ່ ເຊິ່ງວ່າຫຼັງຈາກຈົບງານແຕ່ງແບບສະໄໝໃໝ່ ແລ້ວ ກໍຈະມີພິທີການຄຳນັບ ພໍ່ແມ່ ແລະ ຍາດພີ່ນ້ອງ ຂອງເຈົ້າບ່າວເປັນຕົ້ນ.

**제사** ພິທີໄຫວ້ ບັນພະບູລຸດ



어른이 돌아가시면 매년 돌아가신 날에 가족들이 모여 제사를 지냅니다. 요즘은 많이 간소화 되었으나 제사상에는 전, 나물, 과일, 고기 등 정성스럽게 만든 음식들을 올립니다. 명절 아침에 드리는 제사는 차례라고 합니다.

ເມື່ອມີຄົນໃນຄອບຄົວ ທີ່ລ່ວງລັບໄປແລ້ວ, ໃນວັນຄົບຮອບການເສຍຊີວິດ ຂອງແຕ່ລະປີ ຄົນໃນຄອບຄົວກໍຈະມາເຕົ້າໂຮມກັນ ເພື່ອເຮັດພິທີກາບໄຫວ້ ບັນພະບູລຸດ. ປະຈຸບັນເຖິງວ່າພິທີການ ຈະເຮັດແບບລຽບງ່າຍຂຶ້ນ ກ່ວາເມື່ອກ່ອນແລ້ວ ແຕ່ໃນເວ ລາໄຫວ້ບັນພະບູລຸດ ກໍຍັງມີການກະກຽມອາຫານໄຫວ້ຕ່າງໆ ເຊັ່ນ ອາຫານຈືນ, ຜັກ, ໝາກໄມ້ ແລະ ຊີ້ນ ເປັນຕົ້ນ. ສຳລັບ ວິທີໄຫວ້ບັນພະບູລຸດ ໃນຕອນເຊົ້າ ຂອງວັນພັກສຳຄັນຕ່າງໆ ເຊັ່ນ ວັນປີໃໝ່ ແມ່ນເອີ້ນວ່າ '차례'.

**장례** ງານສົບ




장례식장에 갈 때에는 검은색 옷을 입고 갑니다. 장례식장에서는 돌아가신 분에 대한 묵념을 하거나 절을 하고 돌아가신 분의 가족들에게 인사를 합니다. 보통 한국에서는 돌아가신 날로부터 3일이나 5일 동안 장을 치릅니다.

ໃນເວລາໄປງານສົບ ແມ່ນໃຫ້ນຸ່ງຊຸດດຳໄປ. ໃນເວລາໄປສະຖານທີ່ ຈັດງານສົບ ແມ່ນຈະມີການກົ້ມຄຳນັບສົບ ແບບງຽບໆ ແລ້ວກໍທັກທາຍຄອບຄົວ ຂອງຜູ້ທີ່ລ່ວງ ລັບໄປນັ້ນນຳ. ປົກກະຕິແລ້ວຢູ່ເກົາຫຼີ ຈະມີການຈັດງານສົບ ເປັນເວລາ 3-5 ວັນ ນັບແຕ່ວັນທີ່ເສຍຊີວິດໄປ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນເປັນການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ຈົ່ງຟັງຄຳຖາມແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~3] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

Track 108

1. ① 감사합니다. ② 미안합니다.
   ③ 괜찮습니다. ④ 축하합니다.

2. ① 지난주에 결혼을 했지요?
   ② 옷을 선물하는 게 어때요?
   ③ 이런 선물을 줘서 고마워요.
   ④ 제 생일은 다음 주 토요일이에요.

3. ① 아기가 참 예쁘네요.
   ② 돌잔치가 참 재미있어요.
   ③ 금반지를 선물하는 게 좋아요.
   ④ 아기 생일을 축하하고 같이 밥을 먹어요.



ຕໍ່ໄປ ແມ່ນການຟັງບົດສົນທະນາໜຶ່ງບົດ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງກວດເບິ່ງ ເນື້ອໃນຂອງຄຳຖາມອີກເທື່ອໜຶ່ງ ກ່ອນຟັງບົດສົນທະນາ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມ 2 ຂໍ້.

4. 두 사람은 어디에 가려고 합니까? ທັງສອງຄົນຈະໄປໃສ?
   ① 집들이 ② 돌잔치
   ③ 장례식 ④ 결혼식

5. 남자는 무슨 색 옷을 입을 것입니까? ຜູ້ຊາຍຈະໃສ່ເສື້ອຜ້າສີຫຍັງ?
   ① 빨간색 ② 까만색
   ③ 하얀색 ④ 파란색



### 듣기 대본 ເນື້ອໃນບົດຟັງ

1. 여: 지훈 씨, 정말 멋있네요. 결혼 축하해요. ຈີຮຸນ, ເຈົ້າຫຼໍ່ຫຼາຍ. ຍິນດີນຳສຳລັບງານແຕ່ງງານເດີ້.
2. 남: 다음 주 토요일이 친구 생일인데 무슨 선물을 하면 좋을까요?
   ວັນເສົາໜ້າ ຈະແມ່ນວັນເກີດຂອງໝູ່, ຂ້ອຍ ຄວນຈະເອົາຂອງຂວັນແບບໃດໃຫ້ຈຶ່ງຈະດີ?
3. 여: 건우 씨, 한국에서는 돌잔치 때 뭐 해요?
   ກອນອູ, ຢູ່ເກົາຫຼີ ວັນຄົບຮອບວັນເກີດ 1 ປີ ແມ່ນເຈົ້າເຮັດຫຍັງ?

4-5.

여: 소식 들었어요? 현석 씨 아버지가 돌아가셨어요.
ເຈົ້າໄດ້ຍິນຂ່າວບໍ່? ພໍ່ຂອງ ຮີຢອນຊ໋ອກ ເສຍແລ້ວ.

남: 정말이요? 현석 씨가 많이 힘들겠네요. ແທ້ບໍ? ຮີຢອນຊ໋ອກ ຄືຈະເສົ້າເນາະ.

여: 오늘 저녁에 리한 씨하고 가 보려고 하는데 같이 갈래요?
ແລງມື້ນີ້ ຂ້ອຍ ແລະ ຣີຮັນ ຈະໄປລອງເບິ່ງ, ໄປນຳກັນບໍ?

남: 네, 오늘 저녁에 같이 가요. ເຈົ້າ. ໄປນຳກັນຕອນແລງນີ້ເນາະ.

여: 그런데 장례식장에 갈 때는 까만색 옷을 입고 가야 돼요.
ແຕ່ວ່າ ເວລາທີ່ໄປງານສົບ ແມ່ນເຮົາຕ້ອງໃສ່ຊຸດດຳໄປ.

남: 그럼 집에 가서 까만색 옷을 입고 올게요. ສະນັ້ນ, ຂ້ອຍຈະກັບໄປບ້ານ ແລ້ວນຸ່ງເຄື່ອງສີດຳມາກ່ອນ.

정답 1. ① 2. ② 3. ④ 4. ③ 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ


L-34

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자가 이사를 하려고 하는 이유는 무엇입니까? ຍ້ອນເຫດຜົນໃດ ຜູ້ຍິງຈຶ່ງຈະຍ້າຍເຮືອນ?

   ① 교통이 불편해서 ② 방이 좁고 불편해서
   ③ 주변이 시끄러워서 ④ 공기가 깨끗하지 않아서

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 다음 주에 지하철역 근처로 이사를 가려고 해요. ອາທິດໜ້າ ຂ້ອຍຈະຍ້າຍເຮືອນໄປໃກ້ກັບ ສະຖານີລົດໄຟໃຕ້ດິນ.

   남: 왜요? 지금 기숙사가 좋지 않아요? 방도 크고 깨끗하잖아요.
   ເປັນຫຍັງ? ດຽວນີ້ ຢູ່ຫໍພັກບໍ່ດີບໍ? ຫ້ອງກໍໃຫຍ່ ແລະ ສະອາດດີ ບໍ່ແມ່ນບໍ.

   여: 기숙사가 편하고 좋은데 대중교통을 이용하기가 너무 불편해요.
   ຫໍພັກແມ່ນດີ ແລະ ສະດວກສະບາຍ, ແຕ່ວ່າ ການໃຊ້ລົດຂົນສົ່ງ ສາທາລະນະ ແມ່ນບໍ່ສະດວກຫຼາຍ.

   남: 맞아요. 지하철역 근처로 이사하면 교통은 편리하겠네요.
   ແມ່ນ. ຖ້າຍ້າຍເຮືອນໄປໃກ້ກັບ ສະຖານີລົດໄຟໃຕ້ດິນ, ການໃຊ້ລົດຂົນສົ່ງສາທາລະນະ ຄືຈະສະດວກຫຼາຍ.


정답 1. ①



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 3 ເປັນການເລືອກເອົາສຳນວນ ທີ່ເໝາະສົມທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ ຂອງບົດສົນທະນາ. ຈົ່ງເລືອກເອົາສຳນວນ ທີ່ເໝາະສົມ ຕື່ມໃສ່ຫວ່າງ.

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກຄຳຕອບ ທີ່ຖືກຕ້ອງທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 한국에서는 아기의 첫 번째 생일을 ________(이)라고 합니다. 이를 기념하기 위해 가족과 친척들이 모여 같이 밥을 먹고 축하를 해 줍니다.

   ຢູ່ເກົາຫຼີ ແມ່ນເອີ້ນງານວັນຄົບຮອບວັນເກີດ 1 ປີວ່າ *Dol*. ເພື່ອເປັນການສະແດງ ຄວາມຍິນດີໃນວັນດັ່ງກ່າວນີ້, ຄອບຄົວ ແລະ ຍາດພີ່ນ້ອງ ກໍຈະເຕົ້າໂຮມກັນ ເພື່ອກິນເຂົ້າຮ່ວມກັນ ແລ້ວກໍສະແດງຄວາມຍຍິນດີ.

   ① 돌　② 백일　③ 집들이　④ 결혼기념일

2. 가: 진영 씨 소식 들었어요? 진영 씨가 다음 달에 결혼해요.
   ໄດ້ຍິນຂ່າວຂອງ ຈິນຢອງບໍ? ຈິນຢອງ ຈະແຕ່ງງານ ເດືອນໜ້າ.

   나: 네, 저도 어제 ________을 받았어요. 남자 친구를 사귄 지 얼마 안 됐는데 벌써 결혼을 한다니 깜짝 놀랐어요.
   ເຈົ້າ, ຂ້ອຍກໍໄດ້ຮັບ ບັດເຊີນໄປງານແຕ່ງງານ ມື້ວານນີ້. ລາວຫາກໍ່ຄົບກັບແຟນ ໄດ້ບໍ່ດົນປານໃດ ແລ້ວກໍຈະ ແຕ່ງງານແລ້ວ, ຂ້ອຍເອງກໍຕົກໃຈ.

   ① 선물　② 피로연　③ 청첩장　④ 축의금

3. 한국의 결혼은 전통 혼례와 서양식 결혼식이 있습니다. 요즘에는 보통 웨딩드레스를 입고 서양식 결혼식을 많이 하지만 전통 혼례의 풍습도 아직 남아 있습니다. 결혼식이 끝난 후에 신랑 부모님과 친척들에게 인사를 드리는데 이것을 ________(이)라고 합니다.

   ງານແຕ່ງງານຢູ່ເກົາຫຼີ ແມ່ນມີທັງພິທີແຕ່ງງານ ແບບປະເພນີດັ້ງເດີມ ແລະ ພິທີແບບຕາເວັນຕົກ. ປັດຈຸບັນ ເຖິງວ່າ ຈະມີການນຸ່ງຊຸດແຕ່ງງານແບບທົ່ວໄປ ແລະ ເຮັດພິທີ ແບບຕາເວັນຕົກກັນຫຼາຍ ແຕ່ການປະຕິບັດຕາມ ພິທີແຕ່ງງານ ແບບປະເພນີດັ້ງເດີມ ກໍຍັງມີຢູ່. ນັ້ນກໍຄື ເວລາຫຼັງຈາກຈົບພິທີແຕ່ງງານແລ້ວ ກໍຈະມີການຄຳນັບຄອບຄົວ ແລະ ຍາດພີ່ ນ້ອງເຈົ້າບ່າວ ທີ່ເອີ້ນວ່າ ແພແບັກ.

   ① 함　② 맞선　③ 폐백　④ 상견례



ຕໍ່ໄປ ແມ່ນການອ່ານບົດເລື່ອງໜຶ່ງ ແລ້ວຕອບຄຳຖາມສອງຂໍ້. ຈົ່ງຄິດທົບທວນບົດຮຽນ ທີ່ຮຽນຜ່ານມາ ແລ້ວຕອບຄຳຖາມລອງເບິ່ງ.

[4~5] 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງ ດັ່ງຕໍ່ໄປນີ້ ແລ້ວຕອບຄຳຖາມ.

새로운 집에 이사를 가면 가족이나 친구를 초대해서 ________을/를 합니다. 초대를 받아서 갈 때에는 선물을 사 가는데 보통 휴지나 세제를 많이 선물합니다. 휴지는 일이 잘 되라는 의미가 있고 세제는 빨리 부자가 되라는 의미가 있습니다. 요즘은 부부가 함께 쓸 수 있는 커피 잔이나 화분같은 것을 선물하기도 합니다.

ຖ້າຍ້າຍໄປເຮືອນໃໝ່ແລ້ວ ແມ່ນຈະມີການເຊີນຄອບຄົວ ແລະ ໝູ່ເພື່ອນໄປ ງານຂຶ້ນເຮືອນໃໝ່. ໃນເວລາທີ່ໄດ້ຮັບເຊີນ ແລະ ຈະໄປງານຂຶ້ນເຮືອນໃໝ່ນັ້ນ, ໂດຍປົກກະຕິຈະມີການໃຫ້ ເຈ້ຍອະນາໄມ ຫຼື ແຟັບ ເປັນຂອງຂວັນ. ສໍາລັບ ເຈ້ຍອະນາໄມ ແມ່ນ ໝາຍເຖິງການອວຍພອນ ໃຫ້ວຽກງານມີຄວາມລາບລື່ນ, ສ່ວນ ແຟັບ ແມ່ນມີຄວາມໝາຍວ່າ ໃຫ້ກາຍເປັນເສດຖີໄວໆ. ປະຈຸບັນ ກໍຍັງມີການໃຫ້ສິ່ງທີ່ຄູ່ຜົວເມຍສາມາດໃຊ້ໄດ້ນຳກັນ ເຊັ່ນ ຈອກກາເຟ ຫຼື ໂຖດອກໄມ້.



4. 빈칸에 들어갈 말로 알맞은 것을 고르십시오. ຈົ່ງເລືອກຄຳຕອບ ທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.
   ① 돌잔치　　② 집들이　　③ 결혼식　　④ 생일 파티

5. 세제를 선물하는 것은 어떤 의미입니까?
   ການໃຫ້ແຟັບເປັນຂອງຂວັນ ມີຄວາມໝາຍວ່າແນວໃດ?
   ① 일이 잘 되기를 바랍니다.　　② 건강하게 살기를 바랍니다.
   ③ 빨리 부자가 되기를 바랍니다.　　④ 새 집에서 오래 살기를 바랍니다.

정답 1. ① 2. ③ 3. ③ 4. ② 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

1. 매년 5월 8일은 부모님의 은혜에 감사하는 날입니다. 자녀들이 부모님에게 꽃을 달아드리고 감사의 마음을 전합니다.

   ວັນທີ 8 ເດືອນ 5 ຂອງທຸກໆປີ ແມ່ນວັນທີ່ສະແດງຄວາມຮູ້ບຸນຄຸນ ພໍ່ແມ່. ລູກທັງຫຼາຍ ແມ່ນເອົາດອກໄມ້ໃຫ້ພໍ່ແມ່ ແລະ ສະແດງຄວາມຂອບໃຈ.

   ① 어린이날　　② 어버이날　　③ 스승의 날　　④ 국군의 날

2. 한국 사람의 집에 들어갈 때는 신발을 벗고 들어가야 합니다. 또 집에 들어가면 먼저 집안 어른께 인사를 드려야 합니다.

   ເວລາທີ່ຈະເຂົ້າເຮືອນຄົນເກົາຫຼີ ແມ່ຕ້ອງປົດເກີບກ່ອນເຂົ້າໄປ. ນອກຈາກນີ້, ຖ້າເຂົ້າໄປໃນເຮືອນແລ້ວ ສິ່ງທຳອິດທີ່ ຕ້ອງເຮັດຄື ການທັກທາຍຜູ້ໃຫຍ່.

   ① 방문 예절　　② 언어 예절　　③ 직장 예절　　④ 식사 예절

3. 저는 회사에서 오전 9시부터 오후 6시까지 일합니다. 12시부터 1시까지는 점심시간입니다. 일이 많을 때에는 저녁 9시까지 야근을 할 때도 있습니다.

   ຂ້ອຍເຮັດວຽກຢູ່ບໍລິສັດແຕ່ເວລາ 9 ໂມງເຊົ້າ ເຖິງ 6 ໂມງແລງ. 12 ໂມງ ຫາ 1 ໂມງສວຍ ແມ່ນເວລາພັກກິນ ອາຫານທ່ຽງ. ເວລາທີ່ມີວຽກຫຼາຍ, ກໍມີເວລາທີ່ຕ້ອງເຮັດວຽກລ່ວງເວລາຕອນຄ່ຳຈົນຮອດ 9 ໂມງ.

   ① 퇴근 시간　　② 회의 시간　　③ 근무 시간　　④ 출근 시간

정답 1. ② 2. ① 3. ③



# 한국 드라마가 재미있잖아요

ລະຄອນເກົາຫຼີ ກໍມ່ວນ ບໍ່ແມ່ນຫວ່າ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການເວົ້າເຖິງສາເຫດ, ການຄາດເດົາ |
| □ ໄວຍາກອນ | –잖아요, –는/(으)ㄴ 것 같다 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ກະແສເກົາຫຼີ, ເສດຖະກິດ ແລະ ອຸດສາຫະກຳ |
| □ ຂໍ້ມູນກ່ຽວກັບວັດທະນະທຳ | ການທ່ອງທ່ຽວຕາມກະແສເກົາຫຼີ |



## 대화 1 ບົດສົນທະນາ 1





ຕໍ່ໄປ ແມ່ນບົດສົນທະນາຂອງ ສຸພິກາ ກັບ ເຮືອງ, ກ່ອນອື່ນຈົ່ງຟັງບົດສົນທະນາ 2 ຄັ້ງກ່ອນ ແລະ ເວົ້າຕາມຫຼັງບົດສົນທະນາ.

**수피카** 지금 드라마가 시작돼요. 흐엉 씨, 빨리 오세요.
ຕອນນີ້ ລະຄອນເລີ່ມສາຍແລ້ວ, ເຮືອງ ມາໄວໆແດ່.

**흐 엉** 오, 김수현 씨 정말 멋있지 않아요? 우리 고향 친구들도 아주 좋아해요.
ໂອ, ຄິມຊູຮ້ອນ ໂຄດຫຼໍເລີຍບໍ່ແມ່ນຫວ່າ? ໝູ່ລຸ້ນດຽວກັນຢູ່ບ້ານພຸ້ນກໍມັກຫຼາຍໆ.

**수피카** 흐엉 씨 고향에서도 한국 드라마가 인기가 있어요?
ເຮືອງ ຢູ່ບ້ານເຈົ້າພຸ້ນ ກໍນິຍົມກັນເບິ່ງລະຄອນເກົາຫຼີບໍ?

**흐 엉** 그럼요. 한국 드라마가 재미있잖아요. 수피카 씨는 한국 연예인 중에 누구를 제일 좋아해요?
ແນ່ນອນຢູ່ແລ້ວ, ລະຄອນເກົາຫຼີ ກໍມ່ວນບໍ່ແມ່ນຫວ່າ, ສຸພິກາ ໃນດາລາເກົາຫຼີ ເຈົ້າມັກໃຜຫຼາຍທີ່ສຸດ?

**수피카** 저는 빅뱅을 제일 좋아해요. 멋있잖아요.
ຂ້ອຍມັກບິກແບັງຫຼາຍທີ່ສຸດ, ຫຼໍເດບໍ່ແມ່ນບໍ.

**–지 않아요?**
ຄຳກຳມະ + ບໍ່ແມ່ນບໍ?
ໃຊ້ໃນເມື່ອເວລາ ບອກຄົນອື່ນ ຮູ້ກ່ຽວກັບສິ່ງໃດສິ່ງໜຶ່ງ ທີ່ຕົນເອງກຳລັງຄິດຢູ່ ອອກມາໃຫ້ຊັດເຈນ.
- 가: 이 드라마 참 재미있지 않아요?
  ໜັງເລື່ອງນີ້ ມ່ວນແທ້ໆບໍ່ແມ່ນບໍ?
  나: 네, 재미있어요.
  ແມ່ນແລ້ວ, ມ່ວນ.
- 가: 김치찌개가 맵지 않아요?
  ແກງອ່ອມຄິມຈິ ເຜັດບໍ່ແມ່ນບໍ?
  나: 아니요, 안 매워요.
  ບໍ່, ບໍ່ເຜັດ.

**인기** ຄວາມນິຍົມ
- 민수 씨는 여자들에게 인기가 많아요.
  ມິນຊຸ ເປັນທີ່ນິຍົມ ຂອງບັນດາສາວໆຫຼາຍຄົນ.
- 이 영화는 남자보다 여자에게 더 인기가 있어요.
  ໜັງເລື່ອງນີ້ ແມ່ຍິງນິຍົມຫຼາຍກວ່າຜູ້ຊາຍ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 두 사람은 무엇을 보고 있어요? ສອງຄົນນີ້ ກຳລັງເບິ່ງຫຍັງຢູ່?
2. 수피카 씨는 한국 연예인 중에 누구를 제일 좋아해요?
   ສຸພິກາ, ມັກດາລາເກົາຫຼີຄົນໃດ ຫຼາຍກວ່າໝູ່?

정답 1. 드라마를 보고 있어요. 2. 빅뱅을 제일 좋아해요.



## 어휘 1 ຄຳສັບ 1 　 한류 ກະແສເກົາຫຼີ

ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ກະແສເກົາຫຼີ. ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່?

**한류**
ກະແສເກົາຫຼີ

- 케이팝(K-pop) — ເຄ-ປ໊ອບ(K-pop)
- 드라마 — ລະຄອນ
- 예능프로그램 — ລາຍການ ບັນເທີງຕ່າງໆ
- 영화 — ໜັງເລື່ອງ
- 음악프로그램 — ລາຍການດົນຕີ

**연예인**
ດາລາ

- 가수 — ນັກຮ້ອງ
- 영화배우 — ນັກສະແດງ
- 아이돌 — ເນັດໄອດໍ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງ ພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.



① ② ③ ④

㉠ 영화 　 ㉡ 음악 프로그램 　 ㉢ 드라마 　 ㉣ 예능 프로그램

정답 ① ㉠ ② ㉢ ③ ㉡ ④ ㉣

## 문법 1 ໄວຍາກອນ 1 -잖아요




'-잖아요' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ, ຄຳນາມ ເພື່ອຊີ້ບອກວ່າ ເລື່ອງລາວນັ້ນເປັນສິ່ງທີ່ຜູ້ເວົ້າ ແລະ ຜູ້ຟັງໄດ້ຮັບຮູ້ມາກ່ອນແລ້ວ. ໃນກໍລະນີເປັນຄຳນາມ ແມ່ນໃຊ້ 'ຄຳນາມ + (이)잖아요'.

- 가: 수피카 씨의 친구들도 한국 가수를 좋아해요? ພວກໝູ່ຂອງສຸພິຄາ ກໍມັກນັກຮ້ອງເກົາຫຼີບໍ?
  나: 그럼요. 노래도 잘하고 **멋있잖아요**. ມັກແຫຼະບໍ. ແນວວ່າຮ້ອງເພງກໍເກັ່ງ ແຖມເຈົ້າຊູອີກ.
- 가: 주말에 쇼핑하러 백화점에 갈까요? ທ້າຍອາທິດ ພວກເຮົາໄປເລາະຊື້ເຄື່ອງຢູ່ຮ້ານສັບພະສິນຄ້າບໍ?
  나: 다음 주말에 가는 게 어때요? 다음 주말부터 세일 **기간이잖아요**.
  ໄປທ້າຍອາທິດໜ້າ ເປັນແນວໃດ? ເພາະທ້າຍອາທິດໜ້າຖືກຊ່ວງສິນຄ້າຫຼຸດລາຄາ.



ເຂົ້າໃຈການໃຊ້ '-잖아요'ແລ້ວບໍ? ຈົ່ງອ່ານບົດສົນທະນາຕໍ່ໄປນີ້ ແລ້ວເລືອກຄຳທີ່ຖືກຕ້ອງ.

2. 대화를 읽고 맞는 대답을 고르세요. ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

1) 가: 모니카 씨, 이 사과 어디에서 샀어요? ໂມນິຄາ ເຈົ້າຊື້ໝາກແອັບເປິ້ນນີ້ຢູ່ໃສ?
나: 시장에서 샀어요. ________________. ຊື້ຢູ່ຕະຫຼາດ ຕະຫຼາດລາຄາຖືກເດ.

① 시장이 싸잖아요　　② 시장이 비싸잖아요

2) 가: 투안 씨, 왜 우산을 가지고 왔어요? ຕວນ, ເປັນຫຍັງຈຶ່ງເອົາຄັນຮົ່ມມາ?
나: 밖을 보세요. ________________. ເບິ່ງທາງນອກດູ, ຝົນຕົກເດ.

① 비가 오잖아요　　② 날씨가 좋잖아요

정답 1) ① 2) ①



ລອງຮຽນຕື່ມອີກໜ້ອຍໜຶ່ງບໍ? ຈົ່ງຕື່ມປະໂຫຍກ ໃຫ້ຄົບຖ້ວນ ໂດຍການໃຊ້ '-잖아요'.

1. 가: 이 식당에 자주 오네요.
   나: 음식이 ________________.
2. 가: 투안 씨는 한국어를 참 잘하지요?
   나: 네, 열심히 ________________.
3. 가: 왜 채소만 먹어요?
   나: 건강에 ________________.
4. 가: 상우 씨가 인기가 많네요.
   나: 친절하고 ________________.

정답 1. 맛있잖아요 2. 공부하잖아요 3. 좋잖아요 4. 멋있잖아요



### 유용한 표현 ສຳນວນທີ່ສຳຄັນ

입에 잘 맞아요. ລົດຊາດ ຖືກປາກດີ.

가: 한국 음식이 매워서 먹기 힘들지요? ອາຫານເກົາຫຼີມີລົດຊາດເຜັດ ສະນັ້ນ, ກິນຍາກແມ່ນບໍ?
나: 아뇨, **입에 잘 맞아요.** ບໍ່, ລົດຊາດຖືກປາກດີ.



## 대화 2 ບົດສົນທະນາ 2

Track 110



ຣີຮັນ ກັບ ຕວນກຳລັງລົມກັນ ກ່ຽວກັບໂທລະສັບ ຢູ່ໃນປະເທດເກົາຫຼີ; ສອງຄົນນີ້ກຳລັງ ລົມຫຍັງກັນຢູ່? ຈົ່ງຟັງບົດສົນທະນາກ່ອນ 2 ຄັ້ງ.

리한 **투안 씨, 스마트폰 새로 샀어요?**
ຕວນ, ເຈົ້າຊື້ໂທລະສັບ ສະມາດໂຟນໃໝ່ບໍ?

투안 **네, 삼성전자에서 나온 신제품이에요.**
ເຈົ້າ, ແມ່ນລຸ້ນອອກມາໃໝ່ ຂອງບໍລິສັດຊຳຊຸງ.

리한 **저도 휴대폰을 바꿔야 되는데 그거 어때요?**
ຂ້ອຍ ກໍຈະຕ້ອງປ່ຽນໂທລະສັບຄືກັນ ແຕ່ວ່າ ອັນເຈົ້າໃຊ້ເປັນແນວໃດ?

투안 **화면도 크고 편리한 기능도 많은 것 같아요.**
ໜ້າຈໍກໍໃຫຍ່ ຄືຈະມີຟັງຊັນ ໃຊ້ສະບາຍຫຼາຍຢ່າງ.

리한 **한번 봐도 돼요?**
ໃຫ້ຂ້ອຍເບິ່ງ ກໍໄດ້ບໍ?

투안 **네, 요즘 한국 휴대폰이 우리 나라에도 많이 수입되는 것 같아요. 제 친구들도 많이 써요.**
ໄດ້, ໃນປະຈຸບັນປະເທດ ຂອງພວກຂ້ອຍ ກໍໜ້າຈະນຳເຂົ້າສະມາດໂຟນ ມາແຕ່ເກົາຫຼີ, ໝູ່ຂອງຂ້ອຍກໍໃຊ້ຫຼາຍ ຄືກັນ.

리한 **휴대폰이 한국의 대표적인 수출품이잖아요.**
ໂທລະສັບ ແມ່ນຕົວແທນສິນຄ້າ ທີ່ສົ່ງອອກຂອງເກົາຫຼີເດ.

**새로** ໃໝ່
① ອັນໃໝ່ ທີ່ຕ່າງຈາກເກົ່າ ຫຼື ສິ່ງໃໝ່
② ສິ່ງທຳອິດ ທີ່ບໍ່ເຄີຍມີມາກ່ອນ
- 컴퓨터가 고장이 나서 새로 컴퓨터를 샀어요.
ຄອມພິວເຕີເພ ກໍເລີຍໄດ້ຊື້ຄອມພິວເຕີໃໝ່.
- 이 집은 새로 지어서 깨끗해요.
ເຮືອນນີ້ ສ້າງໃໝ່ກໍເລີຍສະອາດດີ.

**대표적인**
ຕ່າງໜ້າໃຫ້, ເປັນ ຕົວແທນໃຫ້.
ເປັນສິ່ງທີ່ບົ່ງບອກເຖິງ ເຄື່ອງໝາຍ, ຄຸນລັກສະນະ ຂອງພາກສ່ວນ ຫຼື ກຸ່ມໃດໜຶ່ງ.
- 한국의 대표적인 관광지는 제주도예요.
ເກາະເຈຈູ ເປັນຕົວແທນ ຂອງສະຖານທີ່ທ່ອງທ່ຽວ ໃນປະເທດເກົາຫຼີ.
- 비빔밥은 한국의 대표적인 음식이에요.
ບີບິມບັບ ເປັນຕົວແທນອາຫານ ຂອງເກົາຫຼີ.



ຕັ້ງນີ້ ລອງສວມບົດບາດເປັນ ຣີຮັນ ແລະ ຕວນ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨가 새로 산 물건은 어때요? ຕວນ ເຄື່ອງທີ່ຊື້ໃໝ່ເປັນແນວໃດ?
2. 한국의 대표적인 수출품은 뭐예요? ຕົວແທນສິນຄ້າ ສົ່ງອອກຂອງເກົາຫຼີ ແມ່ນຫຍັງ?

정답 1. 화면도 크고 기능도 많아요. 2. 휴대폰이에요.

## 어휘 2 ຄຳສັບ 2 경제 및 산업 ເສດຖະກິດ ແລະ ທຸລະກິດ






ຈົ່ງຄຶດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




보기 수출하다 선진국 수입품 개발도상국 수출품 수입하다

정답 1) 수출하다 2) 수출품 3) 선진국 4) 수입하다 5) 수입품 6) 개발도상국

## 문법 2 ບົດສົນທະນາ 2 -는/(으)ㄴ 것 같다



'-는/(으)ㄴ 것 같다' ມັນຖືກໃຊ້ຕື່ມທ້າຍຄຳກຳມະເຊິ່ງໃຊ້ໃນເວລາຄາດຄະເນເຖິງສະພາບການ ຫຼື ເລື່ອງລາວໃນປັດຈຸບັນ ຫຼື ໃນເວລາ ຢາກສະແດງຄວາມຄິດເຫັນຂອງຕົນເອງຢ່າງນິ້ມນວນ.

| 동사(ຄຳກຳມະ)<br>있다/없다 → -는 것 같다 | 형용사(ຄຳຄຸນນາມ) | | 명사(ຄຳນາມ)<br>→ 인 것 같다 |
|---|---|---|---|
| | 자음(ພະຍັນຊະນະ)<br>→ -은 것 같다 | 모음(ສະຫຼະ)<br>→ -ㄴ 것 같다 | |
| 가다 → 가는 것 같다<br>먹다 → 먹는 것 같다<br>있다 → 있는 것 같다 | 크다 → 큰 것 같다<br>작다 → 작은 것 같다 | | 학생 → 학생인 것 같다<br>의사 → 의사인 것 같다 |

- 사람들이 우산을 쓰고 있어요. 밖에 비가 **오는 것 같아요**. ຢູ່ນອກຝົນຄືຊິຕົກ. ຄົນພາກັນກັ້ງຄັນຮົ່ມຢູ່.
- 가: 모니카 씨, 화장품을 사야 하는데 어떤 게 좋아요? ໂມນິຄາ, ຂ້ອຍຕ້ອງຊື້ເຄື່ອງສຳອາງ ຈະຊື້ອັນໃດດີ?
  나: 이거 한번 써 보세요. **싸고 좋은 것 같아요**. ໃຊ້ອັນນີ້ລອງເບິ່ງ. ລາຄາກໍຖືກຄືຊິໃຊ້ດີ.



ເຂົ້າໃຈການໃຊ '-는/(으)ㄴ 것 같다'ແລ້ວບໍ? ຕໍ່ໄປຈົ່ງອ່ານບົດສົນທະນາແລ້ວ ເລືອກເອົາຄຳທີ່ຖືກຕ້ອງ.

2. 대화를 읽고 맞는 대답을 고르세요. ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງ.

1) 가: 모니카 씨는 항상 주말에 친구들을 만나요. ນາງ ໂມນິກາ, ໄປພົບໝູ່ ໃນທ້າຍອາທິດເລື້ອຍໆ.
나: ______________________.

① 친구가 아주 많은 것 같아요
② 친구가 한 명도 없는 것 같아요

2) 가: 방가 씨가 한국어 실력이 많이 늘었어요. ຄວາມສາມາດ ພາສາເກົາຫຼີ ຂອງ ບັງກາ ເກັ່ງຂຶ້ນຫຼາຍ.
나: ______________________.

① 요즘 한국어 공부를 안 하는 것 같아요
② 요즘 한국어를 열심히 공부하는 것 같아요

정답 1) ① 2) ②



**유용한 표현** ສຳນວນທີ່ສຳຄັນ

눈코 뜰 새 없이 바빠요. ຫຍຸ້ງຈົນ ມືນຫູມືນຕາບໍ່ໄດ້.

가: 요즘도 일이 많아요? ຊ່ວງນີ້ ວຽກກໍຫຼາຍບໍ?
나: 네, **눈코 뜰 새 없이 바빠요.** ຫຍຸ້ງຈົນວ່າມືນຫູມືນຕາບໍ່ໄດ້.

## 활동 ກິດຈະກຳ

한류 열풍과 수출의 관계에 대한 신문 기사입니다. 잘 읽고 질문에 답하세요.
ບົດຂ່າວກ່ຽວກັບ ການສົ່ງອອກສິນຄ້າ ແລະ ກະແສເກົາຫຼີ ກຳລັງມາແຮງ, ຈົ່ງອ່ານ ແລ້ວຕອບຄຳຖາມໃຫ້ດີ.

NEWS TIMES

### 화장품 수출과 한류 열풍

LG경제연구원이 발표한 보고서에 따르면 한국 문화에 관심이 높을수록 화장품, 의류, 음료, 전자제품, 자동차 등의 상품의 수출이 늘어나는 것으로 나타났다. 미국의 경우 한류에 대한 인터넷 검색이 많아질수록 화장품의 수출도 크게 증가한 것을 알 수 있다. 또한 드라마에 나온 한류 스타들이 화장품 모델을 하면서 수출도 크게 늘었다. 특히 중국과 아시아 지역에서는 최근 5년간 매년 30%씩 꾸준히 수출이 증가한 것으로 나타났다.



검색량은 K-pop과 드라마 검색량의 합(분기별 추이)

ການສົ່ງອອກສິນຄ້າ ເຄື່ອງສຳອາງ ແລະ ກະແສເກົາຫຼີ ກຳລັງມາແຮງ

ອີງຕາມບົດລາຍງານ ຂອງສູນຄົ້ນຄວ້າ ທາງດ້ານເສດຖະກິດ LG ໃຫ້ຮູ້ວ່າ ຖ້າຫາກຄວາມສົນໃຈ ວັດທະນະທຳເກົາຫຼີສູງຂຶ້ນ ໄປເທົ່າໃດຈະເຮັດໃຫ້ເພີ່ມປະລິມານ ການສົ່ງອອກ ເຄື່ອງສຳອາງ, ເຄື່ອງນຸ່ງ, ເຄື່ອງດື່ມ, ເຄື່ອງໃຊ້ໄຟຟ້າ ແລະ ລົດໃຫຍ່ ຕ່າງໆ ເພີ່ມຂຶ້ນຫຼາຍເທົ່ານັ້ນ. ຢູ່ໃນປະເທດສະຫະລັດອາເມລິກາ ການຄົ້ນຫາຂໍ້ມູນ ກ່ຽວກັບກະແສເກົາຫຼີ ຫຼາຍຂຶ້ນ ເທົ່າໃດ ການສົ່ງອອກສິນຄ້າເຄື່ອງສຳອາງ ກໍຍິ່ງເພີ່ມຫຼາຍຂຶ້ນເທົ່ານັ້ນ ແລະ ອີກຢ່າງໜຶ່ງ ເມື່ອດາລາທີ່ຕິດກະແສຫຼາຍ ເປັນທັງພິເຊັນ ເຕີໃຫ້ເຄື່ອງສຳອາງ ຕາມລະຄອນຕ່າງໆ ກໍເຮັດໃຫ້ການສົ່ງອອກ ເພີ່ມຂຶ້ນເຊັ່ນດຽວກັນ. ພິເສດຢູ່ໃນປະເທດຈີນ ແລະ ບັນດາປະເທດ ອາຊີໃນຊ່ວງ 5 ປີນີ້ ເຫັນວ່າເປີເຊັນ ການສົ່ງອອກໄດ້ສືບຕໍ່ເພີ່ມຂຶ້ນ ປີລະ 30 ເປີເຊັນ.

1. 읽은 내용과 같으면 ○, 다르면 X에 표시하세요.
ຖ້າຫາກຄືກັບເນື້ອໃນບົດເລື່ອງ ທີ່ອ່ານນັ້ນ ໃຫ້ໝາຍ O ໃສ່, ຖ້າຫາກບໍ່ແມ່ນ ໃຫ້ໝາຍ X ໃສ່.

1) 중국과 아시아에서는 최근 화장품 수출이 줄어들고 있다. ○ X

2) 한국 문화에 대한 관심 때문에 화장품을 사는 사람들이 늘었다. ○ X

3) 수출이 늘어난 것은 한류 스타들이 화장품 모델을 하고 있기 때문이다. ○ X

정답 1) X 2) O 3) O

# 한류 여행

## ການທ່ອງທ່ຽວຕາມກະແສເກົາຫຼີ

한류 열풍으로 인해 한국으로 여행을 오는 외국인 관광객의 수도 늘어났습니다. 2000년대 초반에 방영된 〈겨울연가〉가 큰 사랑을 받고 일본과 중국으로 수출되면서 〈겨울연가〉의 촬영지인 '남이섬'은 이제 아시아의 여행지가 되었고 최근에 방영된 〈별에서 온 그대〉가 중국에서 큰 인기를 끌면서 드라마 촬영지인 거제도, 인천, 가평 등의 여행지가 새로운 관광명소로 떠올랐습니다. 관광지 외에 주인공이 커피를 마시던 카페나 치킨과 맥주를 먹던 치킨 전문점 등을 여행 코스로 한 '별그대 테마 여행' 상품도 등장했습니다.

ເນື່ອງຈາກກະແສນິຍົມ ຂອງເກົາຫຼີຈຶ່ງໄດ້ເຮັດໃຫ້ ຈຳນວນນັກທ່ອງທ່ຽວຕ່າງປະເທດ ເຂົ້າມາທ່ຽວໃນປະເທດເກົາຫຼີ ຫຼາຍຂຶ້ນ, ໃນຕົ້ນປີ 2000 ໄດ້ເປີດສາຍລະຄອນເລື່ອງ <겨울연가 ຄ້ອນຍອນກາ> ເຊິ່ງໄດ້ຮັບຄວາມນິຍົມຢ່າງຫຼວງຫຼາຍ ແລະ ໄດ້ສົ່ງອອກໄປສາຍ ຢູ່ປະເທດຈີນ ແລະ ຍີ່ປຸ່ນ; ສະຖານການຖ່າຍລະຄອນ ເກາະນາມິ ໃນປະຈຸບັນໄດ້ກາຍເປັນແຫຼ່ງທ່ອງທ່ຽວ ຂອງອາຊີ ແລະ ໃນຕອນນີ້ ໄດ້ເປີດສາຍລະຄອນເລື່ອງ <별에서 온 그대 ກະເຣສໍ ອຸນກືເດ> ເຊິ່ງໄດ້ດຶງດູດຄວາມສົນໃຈຫຼາຍ ໃນປະເທດຈີນ ແລະ ສະຖານທີ່ ຖ່າຍລະຄອນ ເກາະແຈໂດ, ອິນຊອນ, ຄາພຢອງ ແລະ ອື່ນໆ ໄດ້ກາຍເປັນສື່ ໂຄສະນາຂອງສະຖານທີ່ທ່ອງທ່ຽວແຫ່ງໃໝ່ ນອກ ຈາກສະຖານທີ່ທ່ອງທ່ຽວແລ້ວຍັງມີຮ້ານກາເຟ, ຮ້ານໄກ່ອົບ, ຮ້ານເຫຼົ້າ ທີ່ດາລານັກສະແດງເຄີຍກິນໃນໜັງເລື່ອງໄດ້ກາຍເປັນສິນຄ້າ ແລະ ພາບຫຼັກ ຂອງແຫຼ່ງທອງທ່ຽວທີ່ໂດ່ງດັງເກີດຂຶ້ນມາເລື້ອຍໆ.






해외 한류 팬들은 한류 스타들을 보면서 그들이 입고 나오는 옷이나 화장품, 가방, 휴대폰 등에 큰 관심을 보여 한국 백화점이나 동대문, 명동 등을 찾는 외국인 관광객도 많아졌습니다. 여행사들은 드라마나 영화 촬영지를 볼 수 있는 여행 상품을 선보이거나 K-pop 스타 공연을 볼 수 있는 여행 상품을 내 놓는 등 다양한 상품을 개발하고 있습니다.

ບັນດາແຟນຄຣັບ ຂອງກະແສເກົາຫຼີ ໃນຕ່າງປະເທດ ແມ່ນໄດ້ຮັບຄວາມນິຍົມຫຼາຍ ໃນຮູບແບບການແຕ່ງຕົວຂອງດາ ລາຕ່າງໆເປັນຕົ້ນແມ່ນ ເຄື່ອງນຸ່ງທີ່ເຂົາເຈົ້ານຸ່ງ ອອກມາສະແດງ ຫຼື ເຄື່ອງສຳອາງທີ່ໃຊ້, ກະເປົາ, ສະມາດໂຟນ ແລະ ອື່ນໆ ເຊິ່ງຈະເຫັນ ໄດ້ຈາກຈຳນວນນັກທອງທ່ຽວຕ່າງປະເທດ ທີ່ເຂົ້າມາຊອກຊື້ເຄື່ອງ ໃນຮ້ານສັບພະສິນຄ້າ, ຮ້ານດົງແທມຸນ, ມຽງດົງ ແລະ ອື່ນໆໄດ້ເພີ່ມຂຶ້ນເລື້ອຍໆ, ບັນດາບໍລິສັດນຳທ່ຽວ ກໍໄດ້ພັດທະນາໂປຣແກຣມ ທີ່ມີ ການທອງທ່ຽວໄປຕາມສະຖານທີ່ ຖ່າຍລະຄອນ ຫຼື ໜັງເລື່ອງ ຫຼື ໃນສະຖານທີ່ທີ່ສາມາດຊົມການສະແດງຂອງດາລາ ເຄປ໊ອບ (K-pop) ແລະ ຮູບແບບຕ່າງໆ ຂຶ້ນກັບຄວາມມັກຂອງນັກທ່ອງທ່ຽວ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນເປັນການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~3] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

Track 111

1. ① 저는 드라마를 봐요.
   ② 음악을 자주 들었어요.
   ③ 저는 빅뱅을 좋아해요.
   ④ 영화에서 볼 수 있어요.

2. ① 석유를 많이 수입해요.
   ② 휴대폰하고 텔레비전이에요.
   ③ 저는 컴퓨터 게임을 많이 해요.
   ④ 요즘 경제가 안 좋아진 것 같아요.

3. ① 네, 재미있잖아요.
   ② 네, 콘서트를 많이 봤어요.
   ③ 아니요, 그래서 매일 봐요.
   ④ 아니요, 예능 프로그램을 좋아해요.



ຕໍ່ໄປ ແມ່ນການຟັງບົດສົນທະນາໜຶ່ງບົດ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງກວດເບິ່ງ ເນື້ອໃນ ຂອງຄຳຖາມອີກເທື່ອໜຶ່ງ ກ່ອນຟັງບົດສົນທະນາ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາບົດໜຶ່ງ ແລ້ວຕອບຄຳຖາມ 2 ຂໍ້.

4. 두 사람은 무엇에 대해 이야기하고 있습니까?
   ສອງຄົນນີ້ ກຳລັງສົນທະນາກ່ຽວກັບຫຍັງ?

   ① 한국어 ② 한국 노래
   ③ 한국 영화 ④ 한국 드라마

5. 두 사람은 지금 무엇을 할 것입니까?
   ດຽວນີ້ ສອງຄົນກຳລັງຈະເຮັດຫຍັງ?

   ① 콘서트에 갈 것입니다. ② 쇼핑을 할 것입니다.
   ③ 텔레비전을 볼 것입니다. ④ 영화를 보러 갈 것입니다.



## 듣기 대본 ເນື້ອໃນບົດຟັງ

1. 여: 리한 씨는 한국 연예인 중에 누구를 좋아해요?
   ຣິຮັນ ໃນດາລາເກົາຫຼີ ເຈົ້າມັກໃຜ?
2. 남: 한국의 대표적인 수출품은 뭐예요?
   ຕົວແທນສິນຄ້າ ທີ່ສົ່ງອອກຂອງເກົາຫຼີ ແມ່ນຫຍັງ?
3. 여: 투안 씨는 한국의 예능 프로그램을 참 좋아하네요.
   ຕວນ ມັກລາຍການບັນເທີງ ຂອງເກົາຫຼີຫຼາຍແທ້ໆ.

4-5.

여: 투안 씨, 이제 곧 제가 좋아하는 음악 프로그램이 시작되는데 같이 볼래요?
ຕວນ, ມີລາຍການດົນຕີ ທີ່ຂ້ອຍມັກຈະເລີ່ມ ໃນໃກ້ໆນີ້, ຈະໄປເບິ່ງນຳກັນບໍ?

남: 네, 좋아요. ໂອເຄ, ດີຫຼາຍ.

여: 투안 씨도 한국 노래를 좋아해요? ຕວນ ກໍມັກເພງເກົາຫຼີບໍ?

남: 그럼요. 한국 노래를 자주 들어요. ມັກແນ່ນອນ, ຂ້ອຍ ຟັງເພງເກົາຫຼີ ຢູ່ຕະຫຼອດ.

여: 그럼 우리 토요일에 같이 콘서트 보러 갈래요?
ຄັນຊັ້ນວັນເສົານີ້ ພວກເຮົາໄປເບິ່ງ ຄອນເສີດນຳກັນບໍ?

남: 좋아요. 저도 콘서트에 가 보고 싶었어요. ດີໆ, ຂ້ອຍ ກໍຢາກໄປເບິ່ງຄອນເສີດຢູ່ແລ້ວ.

정답 1. ③ 2. ② 3. ① 4. ② 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ L-35

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자는 한국어 공부를 어떻게 하고 있습니까? ຜູ້ຍິງຄົນນັ້ນ ກຳລັງຮຽນພາສາເກົາຫຼີ ແນວໃດ?

   ① 학원에 다닙니다. ② 혼자 공부합니다.
   ③ 친구와 같이 공부합니다. ④ 선생님과 함께 공부합니다.

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 투안 씨, 요즘 한국어 배우러 다닌다면서요? ຕວນ, ຊ່ວງນີ້ກຳລັງຮຽນ ພາສາເກົາຫຼີບໍ?

   남: 네, 주말마다 근로자센터에서 한국어를 배우는데 아주 재미있어요.
   ເຈົ້າແມ່ນແລ້ວ, ທຸກໆທ້າຍອາທິດ ໄດ້ໄປຮຽນພາສາເກົາຫຼີ ຢູ່ສູນຈັດຫາງານ ມີຄວາມສະນຸກສະໜານຫຼາຍ.

   여: 그래요? 저는 혼자서 한국어를 공부해서 그런지 재미도 없고 실력도 늘지 않는 것 같아요. 저도 다음에는 근로자센터에 다녀야겠어요.
   ແມ່ນບໍ? ຍ້ອນວ່າ ຄົນຮຽນພາສາເກົາຫຼີຄົນດຽວ ກໍເລີຍບໍ່ມ່ວນ ແລະ ຄວາມສາມາດກໍບໍ່ເພີ່ມຂຶ້ນເລີຍ. ຂ້ອຍກໍຄືກັນ ຕໍ່ໄປຈະໄປຮຽນພາສາເກົາຫຼີ ຢູ່ສູນຈັດຫາງານ.



정답 1. ②



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແມ່ນເປັນການການບົດເລື່ອງ ແລ້ວເລືອກຫົວຂໍ້ບົດເລື່ອງນັ້ນ. ສຳລັບ ຂໍ້ 2 ຫາ 3 ແມ່ນເປັນອ່ານບົດເລື່ອງ ແລ້ວເລືອກເອົາຄຳທີ່ຖືກຕ້ອງ. ຈົ່ງອ່ານໃຫ້ດີ ແລ້ວເລືອກຕອບ ທີ່ຖືກຕ້ອງກັບຄຳຖາມ.

[1~3] 다음 질문에 답하십시오. ຈົ່ງຕອບຄຳຖາມ ຕໍ່ໄປນີ້.

1. 다음은 무엇에 대한 글입니까? ຕໍ່ໄປນີ້ ແມ່ນບົດເລື່ອງ ກ່ຽວກັບຫຍັງບໍ່?

   한국은 1950년에 한국전쟁이 끝난 후 세계에서 가장 가난한 나라였습니다. 그렇지만 1960년대 경제를 개발했고 이후 경제가 크게 발전했습니다.

   ປະເທດເກົາຫຼີ ພາຍຫຼັງສິ້ນສຸດສົງຄາມໃນປີ 1950 ໄດ້ເປັນປະເທດທີ່ທຸກຍາກທີ່ສຸດຢູ່ໃນໂລກ, ແຕ່ວ່າມາ ຮອດຊຸມປີ 1960 ໄດ້ພັດທະນາເສດຖະກິດ ຫຼັງຈາກນັ້ນເສດຖະກິດ ຂອງປະເທດເກົາຫຼີ ໄດ້ເຕີບໂຕຢ່າງໄວວາ.

   ① 무역 ② 수출품 ③ 수입품 ④ 경제 발전

2. 이 사람에 대한 설명으로 맞는 것을 고르십시오. ຈົ່ງເລືອກເອົາສິ່ງທີ່ຖືກຕ້ອງກັບ ການອະທິບາຍຂອງທ່ານນີ້.

   저는 한국 노래를 좋아해서 한국에 왔습니다. 처음 텔레비전에서 우연히 한국 아이돌이 나오는 콘서트를 봤는데 춤도 잘 추고 노래도 잘하는 모습에 반했습니다. 그래서 한국 노래를 듣고 이해하고 싶어서 한국어를 공부하기 시작했습니다.

   ຂ້ອຍ ໄດ້ມາປະເທດເກົາຫຼີ ຍ້ອນວ່າ ມັກເພງເກົາຫຼີ, ຕອນທຳອິດທີ່ເບິ່ງໂທລະພາບ ເຊິ່ງໄດ້ເຫັນຄອນເສີດໄອດໍເກົາຫຼີຂອງຕົນເອງ ໂດຍບັງເອີນ ໄດ້ເຫັນການເຕັ້ນ ແລະ ການຮ້ອງເພງເກັ່ງຫຼາຍ ຢາກຟັງເພງເກົາຫຼີໃຫ້ເຂົ້າໃຈ ສະນັ້ນ ຈຶ່ງໄດ້ເລີ່ມຮຽນພາສາເກົາຫຼີ.

   ① 지금 고향에 있습니다. ② 한국 노래를 좋아합니다.
   ③ 한국어를 할 수 없습니다. ④ 한국 노래를 자주 안 듣습니다.

3. 한국의 수출에 대한 설명으로 맞는 것을 고르십시오.
   ຈົ່ງເລືອກເອົາ ຄຳຕອບທີ່ຖືກຕ້ອງ ກັບການອະທິບາຍ ກ່ຽວກັບການສົ່ງອອກ ຂອງເກົາຫຼີ.

   한국의 경제는 수출 중심입니다. 1980년대 이전에는 단순한 조립 제품을 수출했지만 1990년대 이후 자동차와 기계 등을 수출했고 2000년대부터는 휴대전화나 컴퓨터와 같은 전자제품의 수출이 늘었습니다.

   ການສົ່ງອອກ ເປັນປັດໃຈທາງດ້ານເສດຖະກິດ ຂອງປະເທດເກົາຫຼີ, ໃນຊ່ວງກ່ອນຊຸມປີ 1980 ໄດ້ສົ່ງອອກສິນຄ້າເຄື່ອງປະກອບແບບງ່າຍໆ ແລະ ໃນປີ ຊຸມປີ 1990 ຕໍ່ມາ ໄດ້ສົ່ງອອກກົນຈັກ ແລະ ລົດຍົນ; ຕັ້ງແຕ່ປີ 2000 ເປັນຕົ້ນມາໄດ້ເພີ່ມການສົ່ງອອກໂທລະສັບ ສະມາດໂຟນ, ຄອມພິວເຕີ ແລະ ເຄື່ອງໃຊ້ໄຟຟ້າເປັນຕົ້ນ.

   ① 한국은 수입을 많이 합니다.
   ② 1980년대에는 수출을 전혀 안 했습니다.
   ③ 1990년대에 조립 제품을 많이 수출했습니다.
   ④ 2000년대의 대표적인 수출품은 휴대전화입니다.



ຕໍ່ໄປ ແມ່ນເປັນການອ່ານບົດເລື່ອງບົດໜຶ່ງ ແລ້ວຕອບຄຳຖາມ; ຈົ່ງຄິດທວນຄືນ ໃນສິ່ງທີ່ໄດ້ຮຽນມາ ແລ້ວຕອບຄຳຖາມ.



[4~5] 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວຕອບຕາມຄຳຖາມ.

1990년대부터 중국과 동남아를 중심으로 인기를 얻기 시작한 한국의 대중문화를 한류라고 합니다. 최근에는 아이돌을 중심으로 한 K-pop이 아시아는 물론 유럽과 미국에서까지 큰 인기를 얻고 있고 배우들과 가수들이 외국에 나가서 활동하는 경우도 늘고 있습니다. 한류로 인해 한국의 음식이나 한국어에 대한 관심도 같이 높아져서 관광 수입도 크게 늘어나고 있습니다.

ຕັ້ງແຕ່ປີ 1990 ເປັນຕົ້ນມາ ວັດທະນາທຳ ເຄ-ປັອບ ຂອງປະເທດເກົາຫຼີ ໄດ້ເລີ່ມຮັບຄວາມນິຍົມ ໃນປະເທດ ຈີນ ແລະ ອາຊີຕາເວັນອອກສ່ຽງໃຕ້ ເຊິ່ງເອີ້ນວ່າ ກະແສນິຍົມເກົາຫຼີ; ໃນປະຈຸບັນນີ້ ໄອດໍເຄປັອບ (K-pop) ໄດ້ຮັບຄວາມນິຍົມ ຢ່າງກວ້າງຂວາງ ຢູ່ບັນດາປະເທດອາຊີ, ເອີຣົບ, ປະເທດອາເມລິກາ ແລະ ບັນດານັກຮ້ອງ, ນັກສະແດງ ໄດ້ອອກໄປເຄື່ອນໄຫວກິດຈະກຳຕ່າງໆ ຢູ່ໃນຕ່າງປະເທດຫຼາຍຂຶ້ນ, ຍ້ອນກະ ແສນິຍົມເກົາຫຼີ ຈຶ່ງເຮັດໃຫ້ຄວາມສົນໃຈກ່ຽວກັບ ອາຫານເກົາຫຼີ ຫຼື ຮຽນພາສາເກົາຫຼີເພີ່ມສູງຂຶ້ນ ແລະ ເຮັດໃຫ້ລາຍ ຮັບຈາກການທ່ອງ ທ່ຽວເພີ່ມຂຶ້ນຢ່າງຫຼວງຫຼາຍ.

4. 한류에 대한 설명으로 맞는 것을 고르십시오.
   ຈົ່ງເລືອກເອົາສິ່ງທີ່ຖືກຕ້ອງກັບ ບົດເລື່ອງທີ່ອະທິບາຍ ກ່ຽວກັບກະແສນິຍົມເກົາຫຼີ.

   ① 최근에 시작되었다. ② 동남아의 대중문화이다.
   ③ 유럽과 미국에서도 인기가 있다. ④ 외국에서 활동하는 배우는 전혀 없다.

5. 한류의 영향으로 맞는 것은 무엇입니까? ກະແສເກົາຫຼີ ໄດ້ສິ່ງຜົນອິດທິພົນ ຕໍ່ກັບຫຍັງແດ່?

   ① 한국어를 배우는 사람이 없다. ② 음악보다 드라마가 인기가 있다.
   ③ 한국 음식에 대한 관심이 많아졌다. ④ 한국으로 여행 오는 사람은 많지 않다.

정답 1. ④ 2. ② 3. ④ 4. ③ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 저는 한국 노래를 좋아하지만 한국어는 잘 모릅니다. 그래서 한국 노래를 잘 이해하고 싶어서 한국어를 ________ 시작했습니다.
   ຂ້ອຍມັກເພັງເກົາຫຼີ ແຕ່ວ່າຂ້ອຍບໍ່ຮູ້ພາສາເກົາຫຼີເລີຍ. ສະນັ້ນ, ເພື່ອຢາກໃຫ້ເຂົ້າໃຈເພັງເກົາຫຼີໄດ້ດີ ຂ້ອຍຈະເລີ່ມຕົ້ນຮຽນພາສາເກົາຫຼີ.

   ① 잘하기 ② 배우기 ③ 설명하기 ④ 가르치기

2. 한국 드라마가 여러 나라에서 인기를 얻고 있습니다. 한국에 대한 관심이 높아지면서 매년 한국에 오는 관광객도 ________ 있습니다.
   ລະຄອນເກົາຫຼີ ໄດ້ຮັບຄວາມນິຍົມຊົມຊອບ ຈາກຫຼາຍໆປະເທດ, ມີຜູ້ຄົນສົນໃຈ ປະເທດເກົາຫຼີ ເປັນຈຳ ນວນຫຼາຍ ໃນທຸກໆປີ ຈະມີນັກທ່ອງທ່ຽວເຂົ້າມາທ່ອງທ່ຽວປະເທດເກົາຫຼີເພີ່ມຂຶ້ນ.

   ① 늘어나고 ② 사라지고 ③ 방문하고 ④ 신청하고

정답 1. ② 2. ①




# 단정한 모습이 좋아 보여요

ລັກສະນະເປັນລະບຽບຮຽບຮ້ອຍ ແມ່ນເບິ່ງຈືບງາມດີ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການອະທິບາຍ ກ່ຽວກັບການນຸ່ງຖື, ການໃຫ້ຄຳແນະນຳ |
| □ ໄວຍາກອນ | –아/어 보이다, –게 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ຊຸດເຄື່ອງນຸ່ງ, ກະລະເທສະ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ຊຸດເຄື່ອງນຸ່ງສຳລັບ ສະຖານທີ່ເຮັດວຽກ |



## 대화 1 ບົດສົນທະນາ 1

Track 112



ຕວນ ແລະ ຣີຮັນ ກຳລັງລົມກັນກ່ຽວກັບ ຊຸດປະຈຳບ່ອນເຮັດວຽກໃໝ່. ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

투안 리한 씨, 새 작업복이 잘 어울리네요.
ຣີຮັນ ຊຸດເຮັດວຽກໃໝ່ເຂົ້າກັນດີແທ້.

리한 그래요? 저는 지퍼를 목까지 올려야 해서 좀 불편한데, 투안 씨는 괜찮아요?
ແມ່ນບໍ? ຂ້ອຍຕ້ອງໄດ້ໃສ່ຊິບຈົນຈຳຮອດຄໍ ຂ້ອນຂ້າງບໍ່ສະບາຍປານໃດ. ຕວນເດ ພໍໃຊ້ໄດ້ບໍ?

투안 좀 그렇기는 한데, 이렇게 해야 작업할 때 안전하니까요.
ຖືກຕ້ອງແລ້ວ, ແຕ່ຕ້ອງໄດ້ເຮັດແນວນັ້ນ ເພື່ອຄວາມ ປອດໄພ.

반장 투안 씨 말이 맞아요. 그리고 지금 두 사람 단정한 모습이 좋아 보여요. 처음이라 좀 불편하겠지만 익숙해지면 괜찮을 거예요.
ແມ່ນຄວາມຕວນຫັ້ນລະ. ດຽວນີ້ ສອງຄົນກໍເບິ່ງເປັນລະບຽບຮຽບຮ້ອຍດີ. ເລີ່ມຕົ້ນອາດຈະບໍ່ສະບາຍປານໃດ ແຕ່ເມື່ອ ມັນລຶ້ງແລ້ວຄືຈະໃສ່ໄດ້ດີຢູ່.

**그렇기는 한데** ຖືກຕ້ອງແລ້ວ ແຕ່...ໃຊ້ໃນກໍລະນີທີ່ຍອມຮັບຮູ້ເນື້ອໃນທາງເບື້ອງໜ້າ ແຕ່ຫາກມີທັດສະນະແນວຄິດຕ່າງອີກ.
- 가: 이 운동화가 정말 예쁘네요.
  ເກີບອອກກຳລັງກາຍອັນນີ້ ຈັ່ງແມ່ນງາມຫຼາຍ.
  나: 그렇기는 한데, 너무 비싸서 못 사요.
  ຖືກຕ້ອງແລ້ວແຕ່ ລາຄາແພງຫຼາຍ ຊື້ບໍ່ໄດ້ດອກ.

**–아/어지다** ເມື່ອເຊື່ອມຕໍ່ກັບຄຳຄຸນນາມແລ້ວ ມັນຈະກາຍເປັນຄຳສະແດງອາການຂອງຄຳແທນນາມ.
- 친구들을 만나서 기분이 좋아졌어요.
  ໄດ້ພົບໝູ່ຫຼາຍຄົນ ອາລົມກໍດີຂຶ້ນ.
- 날씨가 점점 추워지니까 감기 조심하세요.
  ຍ້ອນສະພາບອາກາດໜາວລົງເລື້ອຍໆ ຈົ່ງລະມັດລະວັງໄຂ້ຫວັດແດ່.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ?

1. 투안 씨와 리한 씨는 무슨 옷을 입고 있어요?
2. 리한 씨는 왜 새 작업복을 불편해 해요?

정답 1. 새 작업복을 입고 있어요. 2. 지퍼를 목까지 올려야 해서요.





## 어휘 1 ຄຳສັບ 1　　복장 ຊຸດ (ເຄື່ອງນຸ່ງ, ຊຸດ)



ຢູ່ບ່ອນເຮັດວຽກ ແມ່ນຕ້ອງໄດ້ໃສ່ຊຸດເຄື່ອງນຸ່ງແນວໃດ?



작업복
ຊຸດເຮັດວຽກ



유니폼
ເຄື່ອງແບບ



단정하다
ເປັນລະບຽບຮຽບຮ້ອຍ



깔끔하다
ເປັນລະບຽບຈົບງາມ

- 작업장에서는 **작업복**을 입어야 해요.
  ຢູ່ບ່ອນເຮັດວຽກ ຕ້ອງໄດ້ໃສ່ເຄື່ອງນຸ່ງເຮັດວຽກ.
- **유니폼**을 입으니까 단정해 보여요.
  ຍ້ອນໃສ່ເຄື່ອງແບບ ເບິ່ງເປັນລະບຽບດີ.
- 직장에서는 **단정하고 깔끔한** 옷차림을 해야 해요.
  ຢູ່ບ່ອນເຮັດວຽກ ຕ້ອງນຸ່ງເຄື່ອງເປັນລະບຽບ ແລະ ຈົບງາມ.



단추를 잠그다
ໃສ່ກະດຸມ



단추를 풀다
ແກ້ກະດຸມ



지퍼를 올리다
ຮິດຊິບຂຶ້ນ



지퍼를 내리다
ຮິດຊິບລົງ



넥타이를 매다
ມັດກາລະວັດ



넥타이를 풀다
ແກ້ກາລະວັດ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.

① 
② 
③ 
④ 
⑤ 

㉠ 넥타이를 풀다　㉡ 지퍼를 내리다　㉢ 넥타이를 매다　㉣ 단추를 풀다　㉤ 단추를 잠그다

정답 ①㉣ ②㉢ ③㉡ ④㉤ ⑤㉠

## 문법 1 ໄວຍາກອນ 1 -아/어 보이다




'-아/어 보이다' ມັນຖືກໃຊ້ຕື່ມທ້າຍຄຳຄຸນນາມເພື່ອຊີ້ບອກເຖິງການປະເມີນພິຈາລະນາ ຫຼື ການຄາດຄະເນກ່ຽວກັບສິ່ງໃດໜຶ່ງ.

| ㅏ, ㅗ → **-아 보이다** | ㅓ, ㅜ, ㅣ ເປັນຕົ້ນ → **-어 보이다** | 하다 → **해 보이다** |
|---|---|---|
| 작다 → 작**아 보이다** | 맛있다 → 맛있**어 보이다** | 불편하다 → 불편**해 보이다** |

- 가: 노이 씨, 아주 **바빠 보여요.** ນ້ອຍ ຄືຊິຫຍຸ້ງ.
  나: 네, 오늘 일 좀 많아요. ແມ່ນ, ມື້ນີ້ວຽກ (ຂ້ອຍຂ້າງ) ຫຼາຍ.
- 가: 이 빵 좀 드셔 보세요. 제가 만들었어요. ເຈົ້າກິນເຂົ້າຈີ່ກ້ອນນີ້ລອງເບິ່ງ. ຂ້ອຍເຮັດ (ເອງ).
  나: 정말 **맛있어 보여요.** ຈັ່ງແມ່ນເປັນຕາແຊບ.
- 가: 좀 **불편해 보이는데** 괜찮아요? ເບິ່ງຊົງຄືຊິອຶດອັດ, (ບໍ່ແມ່ນເນັກໄທ) ຮັດໂພດບໍ?
  나: 넥타이를 풀어야겠어요. ເບິ່ງຊົງຄືຊິໄດ້ແກ້ກາລະຫວັດອອກ.

ນອກຈາກນີ້ ຄຳຄຸນນາມບາງຕົວກໍໃຊ້ກັບ '-게 보이다' ໄດ້ ໂດຍບໍ່ໄດ້ມີຂໍ້ແຕກຕ່າງຫຍັງກັນຫຼາຍ.

- 그 옷을 입으니까 **날씬해 보여요**. ນຸ່ງເສື້ອຜືນນີ້ແລ້ວ ເບິ່ງຄືຈ່ອຍນໍ.
  (= 그 옷을 입으니까 **날씬하게 보여요**.) (ນຸ່ງເສື້ອຜືນນີ້ແລ້ວເຮັດໃຫ້ເບິ່ງຄືຈ່ອຍນໍ.)



ເຂົ້າໃຈການໃຊ້ '-아/어 보이다' ແລ້ວບໍ? ສະນັ້ນ ຈົ່ງນຳໃຊ້ສຳນວນຂ້າງເທິງນັ້ນແລ້ວຕື່ມໃສ່ບົດສົນທະນາຕໍ່ໄປນີ້ໃຫ້ສົມບູນ.

2. '-아/어 보이다'를 사용해서 대화를 완성하세요.
   ຈົ່ງນຳໃຊ້ '-아/어 보이다' ເພື່ອຕື່ມໃສ່ບົດສົນທະນານີ້ໃຫ້ສົມບູນ.

   1) 가: 리한 씨, 단추를 좀 푸는 게 어때요? ________________. [답답하다 ອຶດອັດ]
      ຣີຮັນ ແກ້ກະດຸມອອກໜ້ອຍໜຶ່ງ ເປັນແນວໃດ? ເບິ່ງຄືວ່າອຶດອັດແທ້.
      나: 그래요? 전 별로 불편하지 않아요. 괜찮아요.
      ແມ່ນບໍ? ຂ້ອຍກໍບໍ່ຮູ້ສຶກວ່າ ບໍ່ສະດວກສະບາຍ. ບໍ່ເປັນຫຍັງດອກ.

   2) 가: 넥타이를 매니까 아주 ________________. [단정하다 ເປັນລະບຽບ]
      ຍ້ອນມັດກາລະວັດ ເບິ່ງຄືວ່າເປັນລະບຽບດີ.
      나: 그래요? 감사합니다.
      ແມ່ນບໍ? ຂອບໃຈ.

   3) 가: 지훈 씨가 오늘 ________________. [피곤하다 ເມື່ອຍ]
      ຈີຮູນ ມື້ນີ້ ເບິ່ງຄືເມື່ອຍແທ້.
      나: 어제 늦게까지 일을 해서 그런 것 같아요.
      ຍ້ອນມື້ວານີ້ ເຮັດວຽກຈົນເດິກຄືຊິແມ່ນຫັ້ນລະ.

정답 1) 답답해 보여요 2) 단정해 보여요 3) 피곤해 보여요



### 유용한 표현 ສຳນວນທີ່ສຳຄັນ

한잔할까요? ເຈົ້າຢາກດື່ມເຫຼົ້າບໍ?

가: 오늘 저녁에 **한잔할까요?** ມື້ນີ້ຕອນແລງ ໄປດື່ມກັນບໍ?
나: 좋아요. 어디에서 만날까요? ດີຄືກັນ. ຈະພົບກັນຢູ່ໃສບໍ?



## 대화 2 ບົດສົນທະນາ 2

Track 113



ຫົວໜ້າໂຮງງານກຳລັງ ໃຫ້ຄຳແນະນຳເຕືອນແກ່ ຣີຮັນ. ຫົວໜ້າໂຮງງານ ໄດ້ເວົ້າແນວ ໃດຕໍ່ກັບຣີຮັນ? ກ່ອນອື່ນ ຈົ່ງຟັງບົດສົນທະນາ ກ່ອນສອງຄັ້ງ.

공장장 리한 씨, 잠깐 나 좀 봐요.
ຣີຮັນ, ມາພົບຂ້ອຍໜ້ອຍໜຶ່ງເດີ.

리 한 네? 무슨 일이신데요?
ເຈົ້າ, ມີວຽກຫຍັງບໍ?

공장장 리한 씨, 요즘 일이 많아서 힘든 건 알겠어요. **그래도** 기계를 발로 툭툭 차고, 작업장에서 **크게** 떠드는 건 정말 예의가 없는 행동**이잖아요**.
ຣີຮັນ, ປັດຈບັນ ຂ້ອຍຮູ້ວ່າ ຍ້ອນວຽກຫຼາຍ ເຈົ້າກໍລຳບາກ ຫຼາຍ. ເຖິງແນວໃດກໍຕາມ ການທີ່ເຕະເຄື່ອງຈັກ ແລະ ເວົ້າສຽງດັງ ຢູ່ບ່ອນເຮັດວຽກ ເປັນພຶດຕິກຳ ທີ່ບໍ່ເໝາະສົມປານໃດ ຢູ່ບ່ອນເຮັດວຽກ.

리 한 죄송해요. 저도 모르게 짜증이 나서 그랬어요.
ຂໍໂທດ. ຂ້ອຍຮູ້ສຶກນ້ອຍໃຈ ຈຶ່ງສະແດງພຶດຕິກຳແນວນັ້ນ ອອກມາ.

공장장 요즘 다들 그럴 거예요. 서로 조금씩만 배려합시다.
ດຽວນີ້ ຄົນອື່ນໆ ກໍອາດຈະຮູ້ສຶກຄືກັນ.

**그래도**
ເຖິງແນວໃດກໍຕາມ.

- 이 책은 너무 비싸요. 그래도 한국어 공부를 하려면 꼭 필요한 책이에요.
  ປຶ້ມນີ້ ແມ່ນແພງຫຼາຍ. ເຖິງແນວໃດກໍຕາມ ຖ້າຫາກຍັງຮຽນພາສາເກົາຫຼີ ແມ່ນເປັນປຶ້ມທີ່ຈຳເປັນ.
- 피곤하고 힘들어요. 그래도 오늘까지 일을 끝내야 해요.
  ເມື່ອຍ ແລະ ຍາກເຖິງແນວໃດກໍ ຕາມ ຮອດມື້ນີ້ຕ້ອງເຮັດວຽກໃຫ້ສຳ ເລັດ.

**-잖아요**
ໃຊ້ເພື່ອເປັນການກວດຄືນ ຫຼື ດັດແປງ ເຊິ່ງເປັນສະຖານະການ ທີ່ທາງສອງຝ່າຍຮັບຮູ້.

- 가: 리한 씨는 언제 고향에서 돌아와요?
  ຣີຮັນ ເມື່ອໃດ ຈະກັບມາແຕ່ບ້ານເກີດ?
  나: 내일 오잖아요.
  ຄືໄດ້ບອກວ່າ ມື້ອື່ນກໍກັບມາແລ້ວ.
- 가: 왜 이렇게 길이 복잡해요?
  ເປັນຫຍັງ ເສັ້ນທາງຄືມາສັບສົນ ຄືແນວນີ້ບໍ?
  나: 지금 퇴근 시간이잖아요.
  ດຽວນີ້ ເປັນຊ່ວງເວລາທີ່ເລີກວຽກບໍ່ແມ່ນຫວາ.



ເທື່ອນີ້ ຈົ່ງສະແດງບົດບາດ ເປັນຫົວໜ້າໂຮງງານ ແລະ ຣີຮັນ ແລ້ວເວົ້າຕາມ. ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨는 무슨 행동을 했어요? ຣີຮັນ ແມ່ນໄດ້ສະແດງພຶດຕິກຳ ຫຍັງອອກມາ?
2. 리한 씨는 왜 이런 행동을 했어요? ເປັນຫຍັງ ຣີຮັນ ຈຶ່ງສະແດງພຶດຕິກຳ ແນວນັ້ນອອກມາ?

정답 1. 기계를 발로 툭툭 차고, 작업장에서 크게 떠들었어요. 2. 짜증이 나서 그랬어요.



## 어휘 2 ຄຳສັບ 2 　태도 ກິລິຍາມາລະຍາດ



ສະຖານທີ່ສາທາລະນະ ຫຼື ບ່ອນເຮັດວຽກ ເມື່ອຄົນເຮົາລົມກັນ ແມ່ນຕ້ອງເຮັດແນວໃດ? ຄຳສັບກ່ຽວກັບການປະພຶດ ແລະ ກ່ຽວຂ້ອງ ພວກເຮົາລອງໄປຊອກຮູ້ນຳກັນວ່າ ມີຫຍັງແດ່ບໍ?



예의가 있다
ມີມາລະຍາດ




예의가 없다
ບໍ່ມີມາລະຍາດ




반말을 하다
ເວົ້າບໍ່ສຸພາບ




존댓말을 하다
ເວົ້າສຸພາບ



존중하다
ເຄົາລົບ



배려하다
ປະພຶດຢ່າງເໝາະສົມ



칭찬하다
ຍ້ອງຍໍຊົມເຊີຍ



함부로 하다
ປະພຶດໂດຍບໍ່ຄິດ ຮອບຄອບ



피해를 주다
ສ້າງຄວາມເສຍຫາຍ



불쾌하다
ອາລົມເສຍ



무시하다
ປະຕິເສດ, ບໍ່ສົນໃຈ



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 빈칸에 맞는 표현을 〈보기〉에서 골라 문장을 완성하세요.
ຈົ່ງຕື່ມຫວ່າງປະໂຫຍກຕໍ່ໄປນີ້ ໃຫ້ຄົບຖ້ວນ ດ້ວຍສຳນວນທີ່ຖືກຕ້ອງຈາກ <ກອບ>.

[직장에서 지켜야 할 것]

1) 직장에서 일이 많을 때는 서로 ____________ 주세요.
2) 신입 사원에게도 반말 말고 ____________ 주세요.
3) 동료의 의견을 ____________ 주세요.
4) 일을 할 때는 옆 사람에게 ____________ 마세요.
5) 다른 사람의 물건을 ____________ 안 돼요.

보기　존중하다　피해를 주다　함부로 하다　존댓말을 하다　배려하다

정답　1) 배려해 2) 존댓말을 해 3) 존중해 4) 피해를 주지 5) 함부로 하면

## 문법 2 ໄວຍາກອນ 2 -게




'-게' ມັນຖືກໃຊ້ຕື່ມທ້າຍຄຳຄຸນນາມເຊິ່ງເຮັດໜ້າທີ່ເປັນຄຳຂະຫຍາຍ ເພື່ອເຮັດໃຫ້ຄຳກຳມະປ່ຽນເປັນຮູບແບບຄຳວິເສດ.

- 가: **불쾌하게** 해서 미안해요. ຂໍໂທດເດີ ທີ່ເຮັດໃຫ້ອຶດອັດ.
  나: 괜찮아요. 신경 쓰지 마세요. ບໍ່ເປັນຫຍັງ. ຢ່າໃສ່ໃຈເທາະ.
- 초대해 줘서 고마워요. **맛있게** 잘 먹었어요. ຂອບໃຈເດີ ທີ່ເຊີນ. ອາຫານແຊບຫຼາຍ.
- 직장에서는 예의 **있게** 행동해야 해요. ຢູ່ບ່ອນເຮັດວຽກຈະເຮັດຫຍັງ ກໍຕ້ອງປະພຶດໂຕໃຫ້ດີ.
- 여기는 공공장소니까 그렇게 **크게** 떠들면 안 돼요. ຢູ່ນີ້ເປັນບ່ອນສາທາລະນະ ຈະມາບິນແຊວແບບນັ້ນບໍ່ໄດ້.

ຄຳຄຸນນາມບາງຕົວແມ່ນບໍ່ໄປກັບ '-게' ແຕ່ແທນດ້ວຍຮູບແບບຄຳວິເສດຮູບແບບອື່ນ ແລະ ບາງກໍລະນີກໍມີແຕ່ຄຳວິເສດຕ່າງຫາກຕັ້ງແຕ່ເລີ່ມຕົ້ນກໍມີ.

ຕົວຢ່າງ: 많이(ຫຼາຍ), 멀리(ໄກ), 일찍(ເດິກ, ເວັນ, ໄວ), 조금(ໜ້ອຍໜຶ່ງ), 빨리(ໄວໄວ), 천천히(ຊ້າໆ), 높이(ສູງ)



### 대조적 정보 ການປຽບທຽບ

ໃນພາສາເກົາຫຼີ ຄຳວິເສດແມ່ນໄດ້ມາຈາກການປ່ຽນຮູບຕາມກິດຕ່າງໆໃນພາສາເກົາຫຼີ ແຕ່ໃນພາສາລາວແມ່ນບໍ່ມີການປ່ຽນຮູບ ພຽງແຕ່ເວົ້າຊ້ຳຄຳເກົ່າເທົ່ານັ້ນ (ໃນບາງຄຳ). ນອກຈາກເຮົາເວົ້າຊ້ຳຄຳເກົ່າແລ້ວ; ເຮົາຍັງສາມາດເອົາຄຳວ່າ "ຢ່າງ"ມາວາງໄວ້ຢູ່ຕໍ່ໜ້າຄຳຄຸນນາມ.

- 예쁘(다): 예쁘게 — ງາມ: (ໃຫ້) ງາມໆ
- 크(다): 크게 — ໃຫຍ່: (ໃຫ້) ໃຫຍ່ໆ
- 작(다): 작게 — ນ້ອຍ: (ໃຫ້) ນ້ອຍໆ
- 아름답(다): 아름답게 — ງາມ: (ໃຫ້) ງາມໆ
- 깨끗하(다): 깨끗하게 — ສະອາດ: (ໃຫ້) ສະອາດໆ
- 조용하(다): 조용하게 — ງຽບ: (ໃຫ້) ງຽບໆ



ເຂົ້າໃຈການໃຊ້ '-게' ແລ້ວບໍ? ສະນັ້ນ ຈົ່ງຊອກຫາສຳນວນທີ່ເໝາະສົມ ຕື່ມໃສ່ບົດສົນທະນາ.

2. 대화를 읽고 맞는 대답을 고르세요. ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

1)
가: 나이가 같은 사람한테 반말을 하면 안 돼요? ຖ້າຫາກໃຊ້ຄຳເວົ້າທົ່ວໄປ ກັບຄົນທີ່ອາຍຸເທົ່າກັນໄດ້ບໍ?
나: 아직 친하지 않으면 다른 사람을 ________ 할 수 있어요.
ຖ້າຫາກຍັງບໍ່ທັນຄຸ້ນເຄີຍກັນດີ ສາມາດເຮັດໃຫ້ຄົນອື່ນຮູ້ສຶກ ບໍ່ສະດວກປານໃດ.

① 불편하고　② 불편하게

2)
가: 직장에서 ________ 생활하려면 서로 배려하는 게 좋아요.
ຢູ່ບ່ອນເຮັດວຽກ ເຈົ້າຄວນພິຈາລະນາ ປະພຶດຕົນເອງຢ່າງເໝາະສົມ ເພື່ອເຮັດໃຫ້ຊີວິດການເຮັດວຽກມີຄວາມສຸກໃນສະຖານທີ່ເຮັດວຽກ.
나: 맞아요. 피해를 주면 안 돼요. ແມ່ນແລ້ວ. ຖ້າສ້າງຄວາມເສຍຫາຍ ໃຫ້ກັບຄົນອື່ນແມ່ນບໍ່ໄດ້.

① 즐겁게　② 즐겁고

3)
가: 이게 더 ________ 의자니까 여기에 앉으세요. ບ່ອນນີ້ ເປັນບ່ອນນັ່ງທີ່ສະບາຍກວ່າ, ຈົ່ງນັ່ງບ່ອນນີ້ສາ.
나: 네, 고마워요. ເຈົ້າ, ຂອບໃຈເດີ.

① 편한　② 편하게

정답 1) ② 2) ① 3) ①

## 활동 ກິດຈະກຳ

직장 예절에 관한 O, X 퀴즈입니다. 잘 읽고 질문에 답하세요.
ເປັນຄຳທວາຍ O, X ກ່ຽວກັບມາລະຍາດການເຮັດວຽກ. ຈົ່ງຕັ້ງໃຈອ່ານໃຫ້ດີ ແລ້ວຕອບຄຳຖາມຕໍ່ໄປນີ້.

1. 맞으면 O, 틀리면 X에 표시하세요. ຖ້າຫາກຖືກຕ້ອງ ຈົ່ງໝາຍ O, ແຕ່ຖ້າຫາກຜິດ ຈົ່ງໝາຍ X.

| | | | |
|---|---|---|---|
| 1. | 직장에서는 단정하고 깔끔하게 옷을 입어야 합니다.<br>ຢູ່ບ່ອນເຮັດວຽກ ຕ້ອງໄດ້ນຸ່ງເຄື່ອງເປັນລະບຽບ ແລະ ຈົບງາມ. | O | X |
| 2. | 작업을 할 때는 작업복의 단추를 풀어야 합니다.<br>ເວລາປະຕິບັດໜ້າທີ່ວຽກງານ ຕ້ອງໄດ້ແກ້ກະດຸມເສື້ອຊຸດເຮັດວຽກອອກ. | O | X |
| 3. | 작업장에서는 신발끈을 묶었는지 확인하는 것이 좋습니다.<br>ໃນບ່ອນເຮັດວຽກ ການກວດເບິ່ງສາຍເກີບວ່າມັດດີແລ້ວບໍ່ ເປັນສິ່ງທີ່ດີ. | O | X |
| 4. | 예의가 있다는 것은 다른 사람을 배려하는 것입니다.<br>ການມີມາລະຍາດ ແມ່ນການທີ່ພິຈາລະນາ ອັນໃດເໝາະສົມ ໃນການປະພຶດຕໍ່ຄົນອື່ນ. | O | X |
| 5. | 일할 때는 다른 사람을 무시하는 것이 좋습니다.<br>ເວລາເຮັດວຽກ ການທີ່ບໍ່ສົນ ກັບຄົນອື່ນ ແມ່ນດີ. | O | X |
| 6. | 윗사람에게는 존댓말을 해야 합니다.<br>ຕ້ອງໃຊ້ຄຳເວົ້າຊັ້ນສູງ ຫຼື ສຸພາບຕໍ່ກັບຜູ້ອາຍຸສູງກວ່າ. | O | X |
| 7. | 친한 동료와는 반말을 해도 됩니다.<br>ສຳລັບເພື່ອນຮ່ວມງານ ທີ່ສະໜິດ ໃຊ້ຄຳເວົ້າທີ່ບໍ່ສຸພາບ ກໍໄດ້. | O | X |
| 8. | 아랫사람에게도 예의있게 행동해야 합니다.<br>ຕ້ອງໄດ້ປະພຶດ ຢ່າງມີມາລະຍາດຕໍ່ກັບທຸກຄົນ ລວມທັງຜູ້ທີ່ຢູ່ໃຕ້ ການບໍລິຫານຂອງຕົນ. | O | X |
| 9. | 친한 동료에게 함부로 해도 됩니다.<br>ປະພຶດແບບ ບໍ່ຄິດຢ່າງຮອບຄອບ ຕໍ່ກັບເພື່ອນຮ່ວມງານ ທີ່ສະໜິດໄດ້. | O | X |
| 10. | 다른 사람을 불쾌하게 하는 행동은 하지 말아야 합니다.<br>ຕ້ອງຫຼີກຫຼ່ຽງສະແດງພຶດຕິກຳ ທີ່ເຮັດໃຫ້ຄົນອື່ນອາລົມເສຍ. | O | X |

정답 1. ○ 2. × 3. ○ 4. ○ 5. × 6. ○ 7. ○ 8. ○ 9. × 10. ○

2. 정답을 보고, 여러분의 점수를 계산해 보세요. 문제 당 1점이에요.
ຈົ່ງກວດເບິ່ງຄຳຕອບ ແລ້ວຈົ່ງຄິດໄລ່ລວມຄະແນນເບິ່ງ. ແຕ່ລະຄຳຕອບແມ່ນເທົ່າກັບ 1 ຄະແນນ.

| 나의 점수 ຄະແນນຂອງຂ້ອຍ | |
|---|---|

3. 여러분은 어떤 사람이에요? 알아보세요. ແຕ່ລະຄົນນັ້ນ ຈະເປັນຄົນແນວໃດ? ລອງໄປເບິ່ງນຳກັນ.

| | | |
|---|---|---|
| 8점 이상<br>8 ຄະແນນ | | 직장에서의 예절을 잘 알고 있군요!<br>ແມ່ນສາມາດຮູ້ດີ ກ່ຽວກັບມາລະຍາດ ໃນບ່ອນເຮັດວຽກ. |
| 4-7점<br>ຄະແນນ 4-7 | | 직장 예절에 대해 조금 더 생각해 보세요.<br>ຈົ່ງລອງຄົ້ນຄິດຕື່ມອີກ ກ່ຽວກັບມາລະຍາດ ໃນບ່ອນເຮັດວຽກ. |
| 3점 이하<br>3 ຄະແນນລົງມາ | | 직장 예절에 대해 다시 공부하세요.<br>ຈົ່ງຮຽນຮູ້ຄືນ ກ່ຽວກັບມາລະຍາດ ໃນບ່ອນເຮັດວຽກ. |



## 정보 ຂໍ້ມູນທົ່ວໄປ

# 작업 현장의 복장

ການນຸ່ງຖື ຢູ່ບ່ອນເຮັດວຽກ



농업

ອຸດສະຫະກຳ ກະສິກຳ



어업

ການປະມົງ



제조업(용접)

ອຸດສະຫະກຳ ການຜະລິດ
(ການເຊື່ອມຈອດ)



제조업(밀링 작업)

ອຸດສະຫະກຳ ການຜະລິດ
(ການຕັດຊອຍ)



건설업

ວຽກການກໍ່ສ້າງ



유통업(제품 포장)

ອຸດສາຫະກຳ ການຂົນສົ່ງ
(ຫຸ່ມຫໍຜະລິດຕະພັນ)













## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 2 ເປັນການເບິ່ງຮູບພາບ ແລ້ວເລືອກເອົາສຳນວນ ທີ່ເໝາະສົມກັບຮູບນັ້ນ. ຈົ່ງລອງກວດສອບເບິ່ງວ່າ ທັງສອງຄົນນີ້ ກຳລັງນຸ່ງຊຸດອັນໃດ.

[1~2] 다음 그림을 보고 알맞은 대답을 고르십시오.

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 114

1. ① ② ③ ④

2 ① ② ③ ④



ຂໍ້ 3 ຫາ 4 ແມ່ນເປັນການເລືອກເອົາຄຳເວົ້າຕໍ່ໄປ. ສຳລັບ ຂໍ້ 5 ແມ່ນເປັນການຊອກຫາພຶດຕິກຳທີ່ຈະເຮັດຕໍ່ໄປ ຂອງຊາຍຄົນໜຶ່ງ ພາຍຫຼັງທີ່ບົດສົນທະນາສິ້ນສຸດລົງ. ສະນັ້ນ ຈົ່ງທຳ ຄວາມເຂົ້າໃຈກັບບັນດາຄຳຕອບກ່ອນທີ່ຈະໄປຟັງບົດສົນທະນາ.

[3~4] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

3. ① 얼른 지퍼를 올릴게요. ② 빨리 옷을 가져올게요.
③ 금방 작업복을 입을게요. ④ 제가 신발을 빌려줄게요.

4. ① 제가 하겠습니다. ② 나중에 다시 올게요.
③ 앞으로는 조심할게요. ④ 그럼, 다음에 뵙겠습니다.

5. 이야기를 듣고 질문에 알맞은 대답을 고르십시오.

ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບທີ່ເໝາະສົມກັບຄຳຖາມນັ້ນ.

남자가 이어서 할 행동으로 맞는 것을 고르십시오.

ຈົ່ງເລືອກເອົາຄຳຕອບ ທີ່ສອດຄ່ອງກັບພຶດຕິກຳ ຂອງຜູ້ຊາຍໃນບົດຟັງນີ້.

① 작업복을 산다.
② 작업복을 벗는다.
③ 작업복 단추를 푼다.
④ 작업복 단추를 잠근다.



### 듣기 대본 ເນື້ອໃນບົດຟັງ

1. ① 여: 작업복을 입었네요. ນຸ່ງເຄື່ອງແບບເຮັດວຽກເນາະ.
   ② 여: 작업을 시작했네요. ເລີ່ມເຮັດວຽກແລ້ວເນາະ.
   ③ 여: 작업을 하고 있네요. ກຳລັງເຮັດວຽກເນາະ.
   ④ 여: 작업장에 들어갔네요. ໄປເຮັດວຽກແລ້ວເນາະ.
2. ① 남: 단추를 잠그고 있어요. ກຳລັງໃສ່ກະດຸມ.
   ② 남: 지퍼를 올리고 있어요. ກຳລັງຮູດຊິບ.
   ③ 남: 유니폼을 입고 있어요. ກຳລັງນຸ່ງເຄື່ອງແບບ.
   ④ 남: 넥타이를 매고 있어요. ກຳລັງມັດກາລະວັດ.
3. 여: 잠깐만요. 작업을 할 때는 작업복의 지퍼를 꼭 올려야 해요.
   ດຽວກ່ອນ. ໃນເວລາເຮັດວຽກ ຕ້ອງຮູດຊິບ ເຄື່ອງແບບເຮັດວຽກຂຶ້ນ.
4. 남: 그렇게 크게 이야기하면 다른 사람들에게 피해를 줄 수 있어요.
   ຖ້າຫາກເວົ້າສຽງດັງ ຄືແນວນັ້ນ ສາມາດລົບກວນຄົນອື່ນໄດ້.
5. 여: 투안 씨, 왜 작업복 단추를 안 잠갔어요?
   ຕວນ ເປັນຫຍັງຈຶ່ງບໍ່ໃສ່ກະດຸມ ເຄື່ອງແບບເຮັດວຽກບໍ?
   남: 너무 더워서 좀 풀었어요. ຮ້ອນຫຼາຍ ຈຶ່ງແກ້ກະດຸມອອກໜ້ອຍໜຶ່ງ.
   여: 더워도 작업복 단추를 풀면 안 돼요. 그러면 위험하니까 얼른 잠그세요.
   ເຖິງແມ່ນວ່າຮ້ອນ ແກ້ກະດຸມເຄື່ອງເຮັດວຽກອອກ ແມ່ນບໍ່ໄດ້. ຍ້ອນວ່າມັນອັນຕະລາຍ, ຈຶ່ງໃສ່ກະດຸມຄືນແດ່.

정답 1. ① 2. ④ 3. ① 4. ③ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ 

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   다음 중 들은 내용과 같은 것은 무엇입니까? ຄຳຕອບທີ່ຖືກຕ້ອງກັບເນື້ອໃນ ທີ່ໄດ້ຟັງນັ້ນ ແມ່ນຫຍັງ?

   ① 남자는 새 작업복이 불편합니다.
   ② 남자는 작업복 사이즈가 맞지 않습니다.
   ③ 여자의 작업복에는 지퍼가 달려 있습니다.
   ④ 여자는 작업복을 입지 않고 일하고 있습니다.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 흐엉 씨, 새 작업복이 잘 어울리네요. ເຮືອງ ຊຸດເຮັດວຽກໃໝ່ ເບິ່ງເຂົ້າກັນດີເນາະ.
   여: 그래요? 리한 씨도 잘 어울려요. 그런데 이번 작업복은 지퍼를 목까지 올려야 해서 저는 좀 불편해요.
   ແມ່ນບໍ? ຣິຮັນ ກໍຄືກັນ ເຂົ້າກັນດີ. ແຕ່ວ່າ ຊຸດເຮັດວຽກເທື່ອນີ້ ຕ້ອງໄດ້ຫັດຊິບຮອດຄໍ ສະນັ້ນ ຂ້ອຍຮູ້ສຶກອຶດອັດ.
   남: 혹시 흐엉 씨한테 작은 거 아니에요? 더 큰 걸로 바꿔서 입어 보세요.
   ບາງທີ ສຳລັບເຮືອງມັນບໍ່ນ້ອຍບໍ? ລອງປ່ຽນເອົາໂຕໃຫຍ່ກວ່ານັ້ນ ມານຸ່ງເບິ່ງ.

정답 1. ③



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ເປັນການຊອກຫາສຳນວນທີ່ເໝາະສົມ ແລະ ຖືກຕ້ອງກັບຮູບພາບ. ຈົ່ງຄິດທົບ ທວນບັນດາຄຳສັບທີ່ໄດ້ຮຽນກ່ອນໜ້ານັ້ນ ເພື່ອແກ້ບັນຫາເຫຼົ່ານີ້.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.

① 단추를 풀고 있습니다. ② 넥타이를 풀고 있습니다.
③ 신발끈을 묶고 있습니다. ④ 지퍼를 내리고 있습니다.

2.




① 반말을 합니다. ② 크게 말합니다.
③ 천천히 말합니다. ④ 존댓말을 합니다.



ຕໍ່ໄປ ແມ່ນບັນຫາກ່ຽວກັບ ການນຸ່ງຖືຢູ່ບ່ອນເຮັດວຽກ ແລະ ສຳນວນທີ່ກ່ຽວຂ້ອງ. ຈົ່ງຄິດທົບທວນເບິ່ງເນື້ອໃນບົດຮຽນ ທີ່ໄດ້ຮຽນຜ່ານມາ ເພື່ອແກ້ບັນຫາເຫຼົ່ານີ້.

[3~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3. 직장에서는 항상 ________ 옷을 입어야 합니다.
ໃນບ່ອນເຮັດວຽກ ຕ້ອງນຸ່ງຖືໃຫ້ເປັນລະບຽບຮຽບຮ້ອຍສະເໝີ.

① 단정하게 ② 불쾌하게 ③ 조용하게 ④ 재미있게

4. 작업복을 입을 때는 지퍼를 목까지 ________ 합니다.
ເວລານຸ່ງເຄື່ອງແບບເຮັດວຽກ ຕ້ອງຮູດຊິບຂຶ້ນໃຫ້ຈຳຮອດຄໍ.

① 묶어야 ② 올려야 ③ 입어야 ④ 풀어야

5. 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວຕອບຄຳຖາມ.

직장 생활을 할 때는 단정한 옷차림을 해야 합니다. 사무직은 양복이나 정장을 입고 넥타이를 맵니다. 생산직에서도 근무복이나 작업복을 입고 점퍼의 지퍼는 꼭 올립니다. 단정하고 깔끔한 옷차림은 가장 기본적인 직장 예절입니다.
ໃນຊີວິດການເຮັດວຽກນັ້ນ ຕ້ອງໄດ້ນຸ່ງເຄື່ອງເຮັດວຽກ ທີ່ເປັນລະບຽບຮຽບຮ້ອຍ. ໃນບ່ອນເຮັດວຽກເປັນຫ້ອງການອາດຈະນຸ່ງຊຸດແວັດ ແລະ ມັດກາລະວັດ. ບ່ອນເຮັດວຽກທີ່ເປັນການຜະລິດ ຕ້ອງໄດ້ນຸ່ງເຄື່ອງແບບເຮັດວຽກ ຫຼື ເຄື່ອງເຮັດວຽກສະເພາະ ແລ້ວຕ້ອງຮູດຊິບເຄື່ອງນຸ່ງນັ້ນນຳ. ການນຸ່ງເຄື່ອງແບບ ທີ່ເປັນລະບຽບຮຽບຮ້ອຍ ແລະ ຈົບງາມ ເປັນມາລະຍາດຂັ້ນພື້ນຖານທີ່ສຸດຂອງບ່ອນເຮັດວຽກ.

글의 내용과 맞지 않는 것은 무엇입니까? ສິ່ງທີ່ບໍ່ຖືກກັບເນື້ອໃນບົດເລື່ອງນີ້ແມ່ນຫຍັງ?

① 옷차림은 직장 예절입니다. ② 단정한 옷차림을 해야 합니다.
③ 생산직 직원은 정장을 주로 입습니다. ④ 사무직 직원은 양복을 입고 넥타이를 맵니다.

정답 1. ② 2. ④ 3. ① 4. ② 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

1. 다음 표지를 맞게 설명한 것을 고르십시오. ຈົ່ງເລືອກເອົາຄຳອະທິບາຍທີ່ຖືກຕ້ອງ ກັບສຳນວນຕໍ່ໄປນີ້.



① 손으로 만지면 안 됩니다.
② 쓰레기를 버리면 안 됩니다.
③ 손을 깨끗이 씻어야 합니다.
④ 안전장갑을 착용해야 합니다.

[2~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

2. 근무 시간에 외출을 해야 하는 경우가 있습니다. 그럴 때는 반드시 상사에게 허락을 받고 ________ 합니다.
ເວລາເຮັດວຽກ ໃນກໍລະນີ ຕ້ອງໄດ້ອອກໄປວຽກຂ້າງນອກກໍມີເຊັ່ນດຽວກັນ. ແຕ່ແນວໃດກໍຕາມ ກໍຕ້ອງໄດ້ຮັບຄຳອະ ນຸຍາດຈາກຫົວໜ້າກ່ອນ ອອກໄປວຽກນອກ.

① 보내야　　② 나가야
③ 들어와야　　④ 기다려야

3. 단정하고 깔끔한 옷차림은 직장 예절의 기본입니다. 공장에서는 작업복을 ________ 점퍼의 지퍼는 꼭 올려야 합니다.
ການນຸ່ງຖື ເປັນລະບຽບຮຽບຮ້ອຍ ແລະ ສະອາດຈົບງາມ ແມ່ນມາລະຍາດ ທີ່ເປັນພື້ນຖານ ຂອງບ່ອນເຮັດວຽກ. ຢູ່ໃນໂຮງງານ ຕ້ອງໄດ້ນຸ່ງເຄື່ອງແບບຂອງບ່ອນເຮັດວຽກ ແລະ ຕ້ອງໄດ້ຫິດຊິບຂຶ້ນ.

① 사고　　② 들고
③ 입고　　④ 보고

정답 1. ④ 2. ② 3. ③

 **발음** ການອອກສຽງ 

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນກໍລະນີທີ່ ພະຍັນຊະນະທີ່ລົງທ້າຍ ຫຼື ລົງທ້າຍດ້ວຍພະຍັນຊະນະຊ້ອນ ແລ້ວຕາມດ້ວຍສະຫຼະແມ່ນ ຈະອອກສຽງຕາມພະຍັນຊະນະລົງທ້າຍ ຂອງພະຍາງທັງໜ້ານັ້ນ ແລະ ຖ້າພະຍັນຊະນະທີ່ຕາມຫຼັງ ຫາກ ເປັນສະຫຼະ ແມ່ນຈະຍ້າຍການອອກສຽງໃນພະຍາງຕໍ່ໆໄປ.

(1) 앉아요, 닭에, 값이
(2) 짧아서, 읽어요, 넓어요
(3) 시장은 물건 값이 싸요.
(4) 한국어 책을 읽어요.



# 출입문을 꼭 닫읍시다
ຈົ່ງອັດປະຕູ ເວລາອອກໄປນອກ

**학습 안내**
ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ — ການແຈ້ງການກ່ຽວກັບ ກົດລະບຽບຂອງຫໍພັກ
- □ ໄວຍາກອນ — -(으)ㅂ시다, -는 동안
- □ ຄຳສັບ ແລະ ສຳນວນຄຳເວົ້າ — ຫໍພັກ, ເຄື່ອງທຳຄວາມເຢັນ-ຮ້ອນ
- □ ຂໍ້ມູນກ່ຽວກັບວັດທະນາທຳ — ແບບທີ່ຢູ່ອາໄສຂອງເກົາຫຼີ



## 대화 1 ບົດສົນທະນາ 1






ຕໍ່ໄປນີ້ແມ່ນ ກົດລະບຽບການນຳໃຊ້ຫໍພັກ. ກ່ອນອື່ນ ຈົ່ງຟັງເນື້ອໃນສອງຄັ້ງ ແລ້ວເວົ້າຕາມ.

〈기숙사 생활 규칙〉
ກົດລະບຽບ ການນຳໃຊ້ຫໍພັກ

다음 기숙사 규칙을 잘 지켜 주세요.
ຈົ່ງຮັກສາກົດລະບຽບ ຫໍພັກໃຫ້ດີ.

1. 방을 깨끗하게 청소합시다.
   ຈົ່ງທຳຄວາມສະອາດຫ້ອງໃຫ້ສະອາດ.
2. 복도나 계단을 깨끗하게 사용합시다.
   ຈົ່ງຮັກສາຂັ້ນໄດ ແລະ ລະບຽງໃຫ້ສະອາດ.
3. 세탁실과 샤워실을 사용한 후에는 잘 정리합시다.
   ຈົ່ງຮັກສາຫ້ອງຊັກເຄື່ອງ ແລະ ຫ້ອງອາບນ້ຳ ໃຫ້ສະອາດຫຼັງຈາກໃຊ້ແລ້ວ.
4. 큰 소리로 떠들지 맙시다.
   ຫ້າມໃຊ້ສຽງດັງ.
5. 기숙사에 외부인을 데리고 오지 맙시다.
   ຫ້າມເອົາຄົນນອກ ເຂົ້າມາໃນຫໍພັກ.
6. 방에서 조리 기구를 사용하지 맙시다.
   ຫ້າມແຕ່ງກິນ ຢູ່ໃນຫ້ອງ.
7. 외출할 때는 출입문을 꼭 닫읍시다.
   ຈົ່ງອັດປະຕູ ເຂົ້າ-ອອກ ເວລາອອກໄປນອກ.
8. 기숙사 시설물이 파손되면 즉시 관리인에게 보고합시다.
   ຖ້າສິ່ງອຳນວຍຄວາມສະດວກ ຢູ່ຫໍພັກເປ່ເພ, ຕ້ອງລາຍງານໃຫ້ຜູ້ດູແລທັນທີ.

**데리고 오다/데려오다**
ເອົາມານຳ/ພາມາ

- 내일 생일 파티에 친구를 데리고 와도 돼요?
  ງານວັນເກີດມື້ອື່ນ, ຂ້ອຍເອົາໝູ່ມານຳກໍໄດ້ບໍ?
- 교실에 강아지를 데리고 오면 안 돼요.
  ຫ້າມເອົາໝາເຂົ້າມາ ໃນຫ້ອງຮຽນ.



**즉시** ທັນທີທັນໃດ/ໃນທັນໃດ
ໃນເວລາທີ່ມີສິ່ງໃດໜຶ່ງເກີດຂຶ້ນ.

- 공항에 도착하면 즉시 저한테 연락해 주세요.
  ຖ້າມາຮອດ ສະໜາມບິນແລ້ວ ໃຫ້ໂທຫາຂ້ອຍເລີຍ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 기숙사에 외부인을 데리고 와도 돼요? ເອົາຄົນນອກ ເຂົ້າມາໃນຫໍພັກກໍໄດ້ບໍ?
2. 기숙사 시설물이 파손되면 누구에게 보고해요?
   ຖ້າສິ່ງອຳນວຍຄວາມສະດວກ ຢູ່ຫໍພັກເປ່ເພ, ຕ້ອງລາຍງານໃຜ?

정답 1. 아니요, 외부인을 데리고 오면 안 돼요. 2. 관리인에게 보고해요.



##  어휘 1 ຄຳສັບ 1 기숙사 ຫໍພັກ



ພວກເຮົາມາລອງເບິ່ງວ່າ ສິ່ງອຳນວຍຄວາມສະດວກຢູ່ຫໍພັກ ແມ່ນມີຫຍັງແດ່?



방
ຫ້ອງ



복도
ທາງຍ່າງ



계단
ຄັນໄດ



출입문
ປະຕູເຂົ້າ-ອອກ

- 기숙사 **방** 안에는 침대와 책상이 있어요. ຢູ່ຫ້ອງໃນຫໍພັກ ແມ່ນມີຕຽງນອນ ແລະ ໂຕະ.
- **복도**에서 큰 소리로 떠들면 안 돼요. ຫ້າມໃຊ້ສຽງດັງ ຢູ່ທາງຍ່າງ.



세탁실
ຫ້ອງຊັກເຄື່ອງ



샤워실
ຫ້ອງອາບນ້ຳ



룸메이트
ເພື່ອນຮ່ວມຫ້ອງ




관리인

- **세탁실**에서 옷을 빨 수 있어요. ສາມາດຊັກເຄື່ອງໄດ້ ຢູ່ຫ້ອງຊັກເຄື່ອງ.
- **샤워실**을 깨끗하게 사용하세요. ຈົ່ງໃຊ້ຫ້ອງອາບນ້ຳ ຢ່າງສະອາດ.



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림에 맞는 표현을 〈보기〉에서 골라 넣으세요.
   ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




**보기**
방
복도
계단
출입문
세탁실
샤워실

정답 1) 방 2) 세탁실 3) 계단 4) 출입문 5) 복도 6) 샤워실

## 문법 1 ໄວຍາກອນ 1 -(으)ㅂ시다

G37-1

'-(으)ㅂ시다' ມັນຖືກໃຊ້ຕື່ມທ້າຍຄຳກຳມະເພື່ອ ຮ້ອງຂໍ ຫຼື ສະເໜີໃຫ້ຄູ່ສົນທະນາທີ່ມີອາຍຸນ້ອຍກວ່າ ຫຼື ຄົນທີ່ມີສະຖານະພາບໃກ້ຄຽງກັນລົງມືກະທຳສິ່ງໃດໜຶ່ງ. ບໍ່ຄວນໃຊ້ກັບຜູ້ທີ່ອາວຸໂສກວ່າ ເພາະຈະເປັນການເສຍມາລະຍາດ.

| 자음(ພະຍັນຊະນະ) → **-읍시다** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㅂ시다** |
|---|---|
| 먹다 → 먹**읍시다**<br>닫다 → 닫**읍시다** | 하다 → 합**시다**<br>가다 → 갑**시다**<br>만들다 → 만**듭시다** |

- 가: 버스가 안 오네요. 택시를 탈까요? ລົດເມບໍ່ມາຊ້ຳ. ຊິຂີ່ລົດແທັກຊີບໍ?
  나: 아니요, 조금 더 **기다립시다**. ບໍ່, ຖ້າອີກຈັກໜ່ອຍກ່ອນເນາະ.
- 가: 기숙사 대청소 언제 할까요? ມື້ໃດ ອະນາໄມຫໍພັກລວມ?
  나: 이번 주말에 쉬니까 이번 주에 **합시다**. ທ້າຍອາທິດນີ້ ຂ້ອຍພັກ ພວກເຮົາອະນາໄມທິດນີ້ເທາະ.
- 외출할 때는 출입문을 꼭 **닫읍시다**. ເວລາອອກໄປວຽກ ໃຫ້ອັດປະຕູເຂົ້າອອກທຸກຄັ້ງ.



ເຂົ້າໃຈການໃຊ້ '-(으)ㅂ시다' ແລ້ວບໍ? ສະນັ້ນ, ຈົ່ງອ່ານປະໂຫຍກດັ່ງຕໍ່ໄປນີ້ ແລ້ວຕອບວ່າ ຂໍ້ໃດຖືກຕ້ອງ ຫຼື ຜິດ.

2. 문장을 읽고 맞으면 ㅇ, 틀리면 ×에 표시하세요.
ຈົ່ງອ່ານປະໂຫຍກ ແລ້ວໝາຍ O ໃສ່ປະໂຫຍກທີ່ຖືກ ແລະ X ໃສ່ປະໂຫຍກທີ່ຜິດ.

1) 복도에 물건을 두지 맙시다. ○ X
2) 오늘 계단을 청소하려고 합시다. ○ X
3) 제가 먼저 샤워실을 사용합시다. ○ X
4) 기숙사에 친구를 데리고 오지 맙시다. ○ X
5) 시설물이 파손되면 관리인에게 이야기합시다. ○ X

정답 1) O 2) X 3) X 4) O 5) O



### 유용한 표현 ສຳນວນທີ່ສຳຄັນ

한턱내세요. ລ້ຽງເຂົ້າເດີ.

가: 반장님, 승진 축하해요. **한턱내세요.** ຫົວໜ້າຫ້ອງການ, ຍິນດີສຳລັບການເລື່ອນຕຳແໜ່ງ. ລ້ຽງເຂົ້າເດີ.
나: 고마워요, 그럴게요. ຂອບໃຈ, ແນວນັ້ນກໍໄດ້.



## 대화 2 ບົດສົນທະນາ 2

Track 116



ຣິຣັນ ກຳລັງຖາມ ຜູ້ດູແລ ວ່າສາມາດໃຊ້ ເຄື່ອງທຳຄວາມຮ້ອນໄຟຟ້າໄດ້ບໍ? ກ່ອນອື່ນ, ຈົ່ງຟັງບົດສົນທະນາສອງຄັ້ງ.

리 한 아저씨, 휴게실이 좀 추운데 전기난로를 켜도 돼요?

ລຸງ, ຢູ່ຫ້ອງນັ່ງຫຼິ້ນ ແມ່ນຂ້ອນຂ້າງໜາວ, ເປີດເຄື່ອງທຳຄວາມຮ້ອນໄຟຟ້າໄດ້ບໍ?

관리인 그럼요. 켜도 되죠. 휴게실에 있는 동안 잘 사용하고 나갈 때는 꼭 스위치를 끄고 플러그도 뽑아 놓으세요.

ແນ່ນອນ. ເປີດກໍໄດ້ຕິ໊ະ. ເປີດໃຊ້ເວລາທີ່ຢູ່ຫ້ອງນັ່ງຫຼິ້ນ ແລະ ເວລາທີ່ຈະອອກໄປກໍປິດສະຫວິດ ແລະ ຖອດສາຍ ໄຟນຳ.

리 한 네, 그럴게요.

ເຈົ້າ, ຈະເຮັດແບບນັ້ນ.

관리인 지난번에는 아무도 없는데 난로가 켜 있어서 깜짝 놀랐어요.

ມື້ນັ້ນ ແມ່ນບໍ່ມີໃຜ ແຕ່ວ່າ ເຄື່ອງທຳຄວາມຮ້ອນຍັງເປີດຢູ່, ຂ້ອຍກໍຕົກໃຈ.

리 한 그래요? 큰일 날 뻔했네요. 제가 다른 친구들한테도 신경 쓰라고 얘기할게요.

ແມ່ນບໍ? ເກືອບເກີດເລື່ອງໃຫຍ່ແລ້ວບໍ? ຂ້ອຍກໍຈະບອກໝູ່ວ່າໃຫ້ເອົາໃຈໃສ່ນຳກັນ.

**-(으)ㄹ 뻔했다** ເກືອບ

ແມ່ນຄຳທີ່ສະແດງເຖິງເຫດການ ຫຼື ສິ່ງໃດໜຶ່ງທີ່ເບິ່ງຄືວ່າ ຈະເກີດຂຶ້ນ ແລ້ວກໍບໍ່ໄດ້ເກີດຂຶ້ນ.

- 늦잠을 자서 회사에 지각할 뻔했어요.
  ຂ້ອຍເກືອບໄປບໍລິສັດຊ້າ ຍ້ອນວ່າຕື່ນສວຍ.
- 아침에 버스를 놓칠 뻔했어요.
  ຂ້ອຍເກືອບໄປ ບໍ່ທັນລົດເມມື້ເຊົ້ານີ້.

**신경(을) 쓰다** ເອົາໃຈໃສ່

ການຄິດຢ່າງຮອບຄອບ ແມ່ນແຕ່ກັບສິ່ງເລັກໆນ້ອຍໆ.

- 가: 외출할 때는 전기난로를 꼭 끄세요.
  ຈົ່ງປິດເຄື່ອງທຳຄວາມຮ້ອນເວລາຈະອອກໄປນອກ.
  나: 네, 신경 쓸게요.
  ເຈົ້າ, ຂ້ອຍຈະເອົາ ໃຈໃສ່ເລື່ອງນັ້ນ.
- 면접을 볼 때는 옷차림에 신경 써야 해요.
  ເວລາໄປເສັງສຳພາດ, ເຮົາຕ້ອງເອົາໃຈໃສ່ການນຸ່ງຖື.



ຄັ້ງນີ້ ລອງສວມບົດບາດເປັນ ຣິຣັນ ແລະ ຜູ້ດູແລ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງ ໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 휴게실 전기난로를 켜도 돼요?
   ເປີດເຄື່ອງທຳຄວາມຮ້ອນໄຟຟ້າ ຢູ່ຫ້ອງນັ່ງຫຼິ້ນກໍໄດ້ບໍ?
2. 휴게실에서 나갈 때는 전기난로를 어떻게 해야 해요?
   ເວລາຈະອອກຈາກຫ້ອງນັ່ງຫຼິ້ນ, ຕ້ອງເຮັດແນວໃດ ກັບເຄື່ອງທຳຄວາມຮ້ອນໄຟຟ້າ?

정답 1. 네, 켜도 돼요. 2. 스위치를 끄고 플러그를 뽑아 놓아야 해요.



## 어휘 2 ຄຳສັບ 2 냉난방기 ເຄື່ອງທຳຄວາມເຢັນ-ຮ້ອນ



ລອງມາເບິ່ງວ່າ ປະເພດຂອງເຄື່ອງທຳຄວາມເຢັນ-ຮ້ອນ ວ່າມີຫຍັງແດ່?



냉방
ເຄື່ອງທຳຄວາມເຢັນ



에어컨
ແອ



선풍기
ພັດລົມ



난방
ເຄື່ອງທຳຄວາມຮ້ອນ



전기난로
ເຄື່ອງທຳຄວາມຮ້ອນໄຟຟ້າ



전기장판
ຜ້າຫົ່ມໄຟຟ້າ




스위치를 켜다
ເປີດສະຫວິດ




스위치를 끄다
ປິດສະຫວິດ



플러그를 꽂다
ສຽບປັກໄຟ



플러그를 뽑다
ຖອດປັກໄຟ



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




보기
에어컨
선풍기
전기난로
스위치
플러그

정답 1) 에어컨 2) 스위치 3) 플러그 4) 선풍기 5) 전기난로

## 문법 2 ໄວຍາກອນ 2 -는 동안




'-는 동안' ມັນຖືກໃຊ້ຕື່ມທ້າຍຄຳກຳມະເພື່ອຊີ້ບອກຊ່ວງເວລາທີ່ສະພາບການ ຫຼື ການກະທຳໃດໜຶ່ງດຳເນີນໄປຢ່າງຕໍ່ເນື່ອງ. ນອກນີ້ ເຮົາຍັງ ໃຊ້ໃນຮູບແບບ '-는 동안에' ດ້ວຍການຕື່ມ '-에' ໃສ່ທ້າຍ. ປະທານຂອງປະໂຫຍກໜ້າ ແລະ ຫຼັງບໍ່ຄືກັນກໍສາມາດໃຊ້ໄດ້. ນອກນີ້ ເຮົາຍັງສາມາດໃຊ້ກັບຄຳນາມທີ່ຊີ້ບອກເວລາໄດ້ 'ຄຳນາມ + 동안'.

- 가: 노이 씨를 **기다리는 동안** 같이 커피를 마실까요? ໃນຊ່ວງເວລາທີ່ລໍຖ້ານ້ອຍ ພວກເຮົາໄປດື່ມກາເຟນຳກັນບໍ?
  나: 그럽시다. ຕົກລົງ.
- 가: 냉방을 **하는 동안** 창문을 열면 안 돼요. ໃນຊ່ວງເວລາທີ່ປັບອຸນຫະພູມໃຫ້ມັນເຢັນ, ບໍ່ຕ້ອງເປີດປະຕູປ່ອງຢ້ຽມເດີ.
  나: 지금 창문을 닫을게요. ຂ້ອຍຈະອັດປະຕູດຽວນີ້.
- 가: 밖에 나가 **있는 동안에** 전기장판을 꼭 끄세요. ໃນຊ່ວງເວລາທີ່ອອກໄປນອກ ຕ້ອງມອດໄຟຟ້າໃຫ້ຮຽບຮ້ອຍ.
  나: 네, 알겠습니다. ເຈົ້າ, ເຂົ້າໃຈແລ້ວ.

### 비교해 보세요 ຈົ່ງປຽບທຽບລອງເບິ່ງ

**✔ ລະຫວ່າງ '-는 동안' ກັບ '-(으)ㄹ 때'**

'-는 동안' ກັບ '-(으)ㄹ 때' ທັງສອງຮູບນີ້ ແມ່ນຊີ້ບອກເຖິງເວລາທີ່ຕົວປະທານຂອງປະໂຫຍກໜ້າໄດ້ມີການກະທຳໃດໜຶ່ງລົງໄປ ມັນໄດ້ເຮັດໃຫ້ເກີດມີການກະທຳອື່ນໃນປະໂຫຍກຫຼັງ. '-는 동안' ບໍ່ສາມາດໄປກັບຄຳຄຸນນາມ; ແຕ່ '-(으)ㄹ 때' ແມ່ນໄປກັບຄຳຄຸນນາມໄດ້. ນອກນີ້ '-는 동안' ຍັງຊີ້ບອກເຖິງຊ່ວງເວລາທັງໝົດທີ່ເກີດມີການກະທຳນັ້ນໆ ແຕ່ '-(으)ㄹ 때' ໄດ້ຊີ້ບອກທັງຊ່ວງເວລາທັງໝົດ ແລະ ຊ່ວງເວລາໃດໜຶ່ງທີ່ເກີດມີການກະທຳ.

- 힘드는 동안에는 쉬세요.(X)
- **힘들 때는** 쉬세요.(O)



ເຂົ້າໃຈການໃຊ້ '-는 동안' ແລ້ວບໍ? ສະນັ້ນ, ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

2. 대화를 읽고 맞는 대답을 고르세요. ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງ.

1) 가: 선풍기를 켜고 자면 안 돼요. ເຈົ້າບໍ່ຄວນເປີດພັດລົມປະໄວ້ແລ້ວນອນ.
   나: ____________________.

   ① 네, 다 사용하면 스위치를 꼭 끄세요　　② 네, 자는 동안에는 사용하지 않을게요

2) 가: 전기장판 좀 빌려줄 수 있어요? ເຈົ້າສາມາດໃຫ້ຂ້ອຍ ຢືມຜ້າຫົ່ມໄຟຟ້າໄດ້ບໍ?
   나: ____________________.

   ① 그럼요. 제가 고향에 있는 동안 빌려줬어요　　② 그럼요. 제가 고향에 가 있는 동안 사용하세요

정답 1) ② 2) ②

## 활동 ກິດຈະກຳ

휴게실에 있는 공지문입니다. 잘 읽고 질문에 답하세요.
ອັນນີ້ ແມ່ນການແຈ້ງປະກາດຢູ່ຫ້ອງນັ່ງຫຼິ້ນ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

**<휴게실을 사용하는 동안 꼭 지켜 주세요.>**
ຈົ່ງຮັກສາລະບຽບ ໃນເວລາທີ່ໃຊ້ຫ້ອງນັ່ງຫຼິ້ນ.

1. 휴게실은 공공장소입니다. 다른 사람을 배려합시다.
   ຫ້ອງນັ່ງຫຼິ້ນ ແມ່ນພື້ນທີ່ຂອງສ່ວນລວມ. ກະລຸນາຄິດເຖິງຜູ້ອື່ນນຳ.
2. 휴게실은 금연 구역입니다. 담배는 흡연실에서 피웁시다.
   ຫ້ອງນັ່ງຫຼິ້ນ ແມ່ນເຂດຫ້າມສູບຢາ. ຈົ່ງສູບຢາໃນຫ້ອງສູບຢາ.
3. 휴게실은 식당이 아닙니다. 냄새나는 음식물은 식당에서 드세요.
   ຫ້ອງນັ່ງຫຼິ້ນ ບໍ່ແມ່ນໂຮງອາຫານ. ຈົ່ງກິນອາຫານທີ່ມີກິ່ນຢູ່ໂຮງອາຫານ.
4. 휴게실에서 나갈 때 아무도 없으면 플러그를 뽑고 나갑시다.
   ຈົ່ງຖອດຝັກສຽບ ເວລາທີ່ຈະອອກຈາກຫ້ອງນັ່ງຫຼິ້ນ ແລະ ບໍ່ມີຄົນຢູ່.

이용 시간: 오전 10시~오후 10시
ເວລາ ນຳໃຊ້: 10ໂມງເຊົ້າ ~ 10ໂມງແລງ

1. 휴게실의 규칙을 잘 지킨 사람을 모두 고르십시오.
ຈົ່ງເລືອກເອົາຄົນ ທີ່ປະຕິບັດຖືກກົດລະບຽບ ຂອງຫ້ອງນັ່ງຫຼິ້ນທັງໝົດ.

①


②


③


④


정답 1. ②, ③



## 정보 ຂໍ້ມູນທົ່ວໄປ

# 한국의 주거 형태

### ຮູບແບບ ທີ່ຢູ່ອາໄສ ຂອງເກົາຫຼີ

### 아파트 ອະພາດເມັ້ນ



한 건물 안에 여러 가구가 독립적으로 살 수 있도록 지은 빌딩형 공동 주택입니다.

ແມ່ນປະເພດ ທີ່ຢູ່ອາໄສໜຶ່ງ ເຊິ່ງເປັນຕຶກອາຄານໜຶ່ງ ທີ່ສ້າງຂຶ້ນເພື່ອເຮັດໃຫ້ຫຼາຍໆ ຄອບຄົວສາມາດຢູ່ຮ່ວມກັນຢ່າງເປັນອິດສະຫຼະໄດ້.

### 주택 ເຮືອນ



주택은 크게 단독 주택과 공동 주택이 있습니다. 단독 주택은 한 세대가 단독으로 사용하는 구조로 된 주택입니다. 공동주택은 각 세대가 하나의 건축물 안에서 생활을 할 수 있는 구조로 된 주택입니다.

ເຮືອນສາມາດແບ່ງອອກເປັນ 2 ປະເພດ ຄື: ເຮືອນດ່ຽວ ແລະ ເຮືອນລວມ. ສໍາລັບເຮືອນດ່ຽວແມ່ນເຮືອນສໍາລັບຄອບຄົວດ່ຽວ ທີ່ແຍກອອກຈາກເຮືອນຫຼັງອື່ນ, ສ່ວນເຮືອນລວມແມ່ນປະເພດທີ່ຢູ່ອາໄສທີ່ຫຼາຍຄອບຄົວ ແຕ່ລະຄອບຄົວ ແມ່ນ ອາໄສຢູ່ຕຶກ ຫຼື ບ້ານຫຼັງດຽວກັນ.

### 원룸 ຫ້ອງດ່ຽວ



방 하나에 생활에 필요한 최소한의 설비를 갖춘 집입니다.

ແມ່ນຫ້ອງໜຶ່ງ ທີ່ປະກອບໄປດ້ວຍ ສິ່ງອໍານວຍຄວາມສະດວກ ທີ່ຈໍາເປັນຂັ້ນ ພື້ນຖານ.

### 고시원 ໂກຊິວອນ




싸게 방을 얻어 생활할 수 있는 건물입니다. 화장실, 부엌 등을 공동으로 사용합니다.

ແມ່ນຫ້ອງທີ່ສາມາດຫາໄດ້ ໃນລາຄາຖືກ ເຊິ່ງມີ ຫ້ອງນໍ້າ, ເຮືອນຄົວ ແລະ ອື່ນໆ ທີ່ໃຊ້ຮ່ວມກັນ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 2 ແມ່ນການຟັງ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງ. ກ່ອນອື່ນ ຈົ່ງກວດເບິ່ງ ຮູບພາບກ່ອນຟັງ.

[1~2] 잘 듣고 내용과 관계있는 그림을 고르십시오.
ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງກັບເນື້ອໃນ.

Track 117

1. ①

②

③

④


2. ①


②


③

④




ຂໍ້ 3 ແມ່ນການຟັງບົດສົນທະນາ ແລ້ວລືອກເອົາຄໍາຕອບ ທີ່ຖືກຕ້ອງ. ຂໍ້ 4 ແລະ 5 ແມ່ນການຟັງການປະກາດແຈ້ງການ ແລ້ວລືອກເອົາຄໍາຕອບທີ່ຖືກຕ້ອງ. ກ່ອນອື່ນ ຈົ່ງກວດເບິ່ງຄໍາຕອບກ່ອນຟັງ.

3. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄໍາຕອບ ທີ່ເໝາະສົມ ສໍາລັບແຕ່ລະຄໍາຖາມ.

지금 무슨 문제가 있습니까? ດຽວນີ້ ແມ່ນມີບັນຫາຫຍັງ?

① 관리인과 싸웠습니다. ② 선풍기가 없어졌습니다.
③ 에어컨이 고장 났습니다. ④ 휴게실에 에어컨이 없습니다.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາບົດໜຶ່ງ ແລ້ວຕອບຄໍາຖາມ 2 ຂໍ້.

4. 이 기숙사의 휴게실은 몇 시까지 이용할 수 있습니까?
ເຮົາສາມາດນໍາໃຊ້ຫ້ອງນັ່ງຫຼິ້ນ ຂອງຫໍພັກນີ້ໄດ້ຮອດຈັກໂມງ?

① 밤 8시 ② 밤 10시
③ 밤 11시 ④ 밤 12시

5. 이 기숙사의 규칙을 지키지 않은 사람은 누구입니까? ຜູ້ໃດທີ່ບໍ່ຮັກສາກົດລະບຽບ ຂອງຫໍພັກນີ້?

① 흡연실에서 담배를 피운 지훈 ② 기숙사에 고향 친구를 초대한 건우
③ 기숙사 방에서 김밥을 먹은 투안 ④ 기숙사 휴게실에서 커피를 마신 모니카



### 듣기 대본 ເນື້ອໃນບົດຟັງ

1. 남: 밤에는 큰 소리로 떠들지 마세요. ຫ້າມໃຊ້ສຽງດັງຕອນກາງຄືນ.
2. 여: 난로를 사용한 후에는 반드시 플러그를 뽑아야 합니다. ເຈົ້າຕ້ອງຖອດປັກສຽບ ຫຼັງຈາກໃຊ້ເຄື່ອງທຳ ຄວາມຮ້ອນ.
3. 남: 아유, 더워. 휴게실 에어컨이 또 고장 났네요. ອ່າຍ, ຮ້ອນເດ. ແອຢູ່ຫ້ອງນັ່ງຫຼິ້ນ ກໍເພອີກແລ້ວ.

   여: 그래요? 날씨가 많이 더워져서 냉방이 안 되면 힘든데…….
   ແມ່ນບໍ? ອາກາດກໍຮ້ອນຂຶ້ນ, ຖ້າແອໃຊ້ບໍ່ໄດ້ກໍຄືຈະລຳບາກ.

   남: 그러게 말이에요. 선풍기라도 가지고 올까요? ກໍແມ່ນແບບນັ້ນແຫຼະ. ຂ້ອຍຄວນຈະເອົາພັດລົມມາດີບໍ?

   여: 네, 그럼 부탁해요. 저는 얼른 관리인 아저씨에게 이야기하고 올게요.
   ໂດຍ. ຊ່ວຍເອົາມາແນ່. ຂ້ອຍກໍຈະໄປບອກ ຜູ້ດູແລ ໄວ້ກ່ອນ.

4-5.

남: 관리실에서 알려드립니다. 요즘 기숙사에 규칙을 지키지 않는 사람들이 많은데 모두 신경 써 주세요. 규칙을 다시 말씀 드릴 테니까 잘 듣고 꼭 지켜주세요. 먼저, 담배를 피울 때는 흡연실을 이용해 주시기 바랍니다. 또, 방에서 조리 기구를 사용하면 안 되고요. 외부인을 기숙사에 데리고 올 수 없습니다. 마지막으로 휴게실 이용 시간은 밤 10시까지니까 꼭 지켜주십시오.

ແຈ້ງການຈາກຫ້ອງການບໍລິຫານ. ປະຈຸບັນນີ້ ມີຫຼາຍຄົນທີ່ບໍ່ຮັກສາ ກົດລະບຽບຂອງຫໍພັກ, ສະນັ້ນ ຈຶ່ງຂໍໃຫ້ທຸກຄົນເອົາ ໃຈໃສ່ຕື່ມ. ພວກເຮົາຈະແຈ້ງກົດລະບຽບອີກເທື່ອໜຶ່ງ, ສະນັ້ນ, ກະລຸນາຕັ້ງໃຈຟັງ ແລະ ປະຕິບັດຕາມ. ກ່ອນອື່ນ, ກະລຸ ນາໃຊ້ຫ້ອງສູບຢາ ໃນເວລາສູບຢາ. ນອກຈາກນີ້, ຫ້າມໃຊ້ເຄື່ອງແຕ່ງກິນຢູ່ໃນຫ້ອງ. ຫ້າມພາຄົນນອກເຂົ້າມາໃນຫໍພັກ. ສຸດທ້າຍແມ່ນ ຈຶ່ງຮັກສາກົດລະບຽບ ຂອງຫ້ອງນັ່ງຫຼິ້ນ ທີ່ສາມາດໃຊ້ໄດ້ຮອດຕອນຄ່ຳ ເວລາ 10 ໂມງ.

정답 1. ① 2. ③ 3. ③ 4. ② 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ

L-37

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   남자는 지금 무엇을 해야 합니까? ສິ່ງທີ່ຜູ້ຊາຍຕ້ອງເຮັດໃນຕອນນີ້ແມ່ນຫຍັງ?

   ① 창문을 닫아야 합니다.
   ② 에어컨을 켜야 합니다.
   ③ 선풍기를 꺼야 합니다.
   ④ 플러그를 꽂아야 합니다.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 바트 씨, 창문 좀 닫아 줄래요? 지금 에어컨을 켰거든요.
   ບັດ, ປິດປະຕູປ່ອງຢ້ຽມແນ່ໄດ້ບໍ? ຍ້ອນວ່າຕອນນີ້ເປີດແອຢູ່.

   남: 네, 알겠어요. 그럼 선풍기는 끌게요. ເຈົ້າ, ເຂົ້າໃຈແລ້ວ. ສະນັ້ນ ຂ້ອຍປິດພັດລົມເດີ.

   여: 아니요, 지금 사무실이 너무 더우니까 선풍기도 같이 켜 놓는 게 좋을 것 같아요. 퇴근할 때 선풍기하고 에어컨 플러그 뽑는 거 잊으면 안 돼요.
   ບໍ່, ຕອນນີ້ ຍ້ອນວ່າຫ້ອງການຮ້ອນຫຼາຍ, ການເປີດພັດລົມໄວ້ນຳແມ່ນຄືຈະດີ. ເວລາເລີກວຽກ ກໍຢ່າລືມຖອດປັກສຽບ ພັດລົມ ແລະ ແອ.

정답 1. ①



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ແມ່ນການເບິ່ງຮູບພາບແລ້ວເລືອກເອົາຄໍາສັບ ຫຼື ປະໂຫຍກທີ່ເໝາະສົມ. ຈົ່ງຄິດທົບທວນເຖິງສໍານວນທີ່ໄດ້ຮຽນຜ່ານມາ ແລ້ວລອງຕອບຄໍາຖາມ.

[1~2] 다음 그림을 보고 맞는 단어나 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄໍາສັບ ຫຼື ປະໂຫຍກທີ່ຖືກຕ້ອງ.

1. 

① 에어컨 ② 세탁기
③ 냉장고 ④ 선풍기

2. 


① 스위치를 켜고 있습니다.
② 스위치를 끄고 있습니다.
③ 플러그를 꽂고 있습니다.
④ 플러그를 뽑고 있습니다.



ຂໍ້ 3 ແລະ 4 ແມ່ນການຊອກຫາຄໍາສັບ ທີ່ເໝາະສົມ ເພື່ອຕື່ມໃສ່ບົດສົນທະນາ. ຂໍ້ 5 ແມ່ນການອ່ານບົດເລື່ອງແລ້ວເລືອກເອົາຄໍາຕອບທີ່ເໝາະສົມ. ຈົ່ງຄິດທົບທວນເຖິງຄໍາສັບ ແລະ ໄວຍາກອນ ທີ່ໄດ້ຮຽນຜ່ານມາ ແລ້ວລອງຕອບຄໍາຖາມ.

[3~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄໍາຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

가: 에어컨은 언제부터 사용할 수 있어요? ເຮົາສາມາດ ໃຊ້ແອ ນັບແຕ່ເມື່ອໃດເປັນຕົ້ນໄປ?
나: 에어컨 같은 ________ 시설은 6월 말부터 사용할 수 있어요.
ສິ່ງອໍານວຍຄວາມສະດວກເຊັ່ນ ເຄື່ອງທໍາຄວາມເຢັນ ແມ່ນສາມາດໃຊ້ໄດ້ນັບແຕ່ ເດືອນ 6 ເປັນຕົ້ນໄປ.

① 난방 ② 냉방 ③ 선풍기 ④ 전기장판

4.

가: 주말에 같이 계단을 청소할까요? ວັນທ້າຍອາທິດນີ້ ເຮົາເຮັດອະນາໄມຄັນໄດນໍາກັນບໍ?
나: 네, 그래요. 같이 ____________. ເຈົ້າ, ເອົາແບບນັ້ນເນາະ. ເຮົາເຮັດອະນາໄມນໍາກັນ.

① 청소합니다 ② 청소합시다 ③ 청소했습니다 ④ 청소해야 합니다

5. 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ ແລ້ວຕອບຄໍາຖາມ.

기숙사는 여러 사람이 함께 생활하는 곳입니다. 그러니까 서로 예의를 지키고 다른 사람에게 피해를 주지 않아야 합니다. 늦은 시간에 시끄럽게 떠들지 마십시오. 그리고 시설도 깨끗하게 사용해야 합니다. 샤워실과 세탁실은 항상 깨끗하게 관리합시다.
ຫໍພັກແມ່ນສະຖານທີ່ ທີ່ຄົນຫຼາຍຄົນອາໄສຢູ່ຮ່ວມກັນ. ສະນັ້ນ, ພວກເຮົາຕ້ອງຮັກສາມາລະຍາດ ການຢູ່ຮ່ວມກັນ ແລະ ບໍ່ສ້າງຄວາມເດືອດຮ້ອນໃຫ້ແກ່ຜູ້ອື່ນ. ຫ້າມໃຊ້ສຽງດັງໃນເວລາກາງຄືນ ແລະ ຕ້ອງນໍາໃຊ້ສິ່ງອໍານວຍຄວາມ ສະດວກຕ່າງໆ ຢ່າງສະອາດ. ຕ້ອງຮັກສາດູແລ ໃຫ້ຫ້ອງອາບນໍ້າ ແລະ ຫ້ອງຊັກເຄື່ອງໃຫ້ສະອາດ.

글의 내용과 맞지 않는 것은 무엇입니까? ສິ່ງທີ່ບໍ່ຖືກຕ້ອງກັບເນື້ອໃນ ບົດເລື່ອງແມ່ນຫຍັງ?

① 서로 배려해야 합니다. ② 시설을 아껴 써야 합니다.
③ 시끄럽게 떠들면 안 됩니다. ④ 샤워실은 관리인이 청소합니다.

정답 1. ① 2. ② 3. ② 4. ② 5. ④



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດຕື່ມໃສ່ບ່ອນຫວ່າງ.

1. 휴게실은 공공장소이므로 휴게실에서는 다른 사람을 배려해야 합니다. 담배를 ________ 냄새 나는 음식을 먹으면 안 됩니다.
ຍ້ອນວ່າ ຫ້ອງນັ່ງຫຼິ້ນແມ່ນເປັນສະຖານທີ່ ສາທາລະນະ ຈຶ່ງຕ້ອງຄິດເຖິງຄົນອື່ນ ເວລາຢູ່ຫ້ອງນັ່ງຫຼິ້ນ. ຫ້າມສູບຢາ ຫຼື ກິນອາຫານທີ່ມີກິ່ນ.

① 피워야　　② 피워서
③ 피우거나　　④ 피우지만

2. 지하철 안에서는 작은 소리로 말해야 합니다. 시끄럽게 ________ 다른 사람에게 피해를 줄 수 있습니다.
ຢູ່ໃນລົດໄຟໃຕ້ດິນ ຕ້ອງເວົ້າສຽງຄ່ອຍ. ຖ້າລົມກັນສຽງດັງ ຈະເຮັດໃຫ້ເກີດການລົບກວນແກ່ຜູ້ອື່ນໄດ້.

① 자면　　② 쉬면
③ 떠들면　　④ 일하면

3. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

제가 살고 있는 기숙사에는 세탁실, 샤워실, 식당, 휴게실, 체력 단련실 등이 있습니다. 방에는 침대와 옷장, 책상밖에 없지만 이런 공간이 있어서 기숙사 생활이 편리합니다.
ຫໍພັກທີ່ຂ້ອຍອາໄສຢູ່ດຽວນີ້ ແມ່ນມີຫ້ອງຊັກເຄື່ອງ, ຫ້ອງອາບນ້ຳ, ໂຮງອາຫານ, ຫ້ອງນັ່ງຫຼິ້ນ, ຫ້ອງອອກກຳລັງ ກາຍ ແລະ ອື່ນໆ. ເຖິງແມ່ນວ່າ ໃນຫ້ອງຈະມີແຕ່ ຕຽງນອນ, ຕູ້ໃສ່ເຄື່ອງ ແລະ ໂຕະ, ແຕ່ວ່າ ຍ້ອນມີ ພື້ນທີ່ ສິ່ງອຳນວຍຄວາມສະດວກ ແບບນີ້ ຈຶ່ງເຮັດໃຫ້ການອາໄສ ຢູ່ຫໍພັກມີຄວາມສະດວກສະບາຍ.

① 기숙사 위치　　② 기숙사 시설
③ 기숙사 예절　　④ 기숙사 규칙

정답 1. ③ 2. ③ 3. ②



## 발음 ການອອກສຽງ




ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

*ໃນພາສາເກົາຫຼີ ເວລາທີ່ມີພະຍັນຊະນະ 2 ຕົວຕິດກັນ ຈະມີການອອກສຽງທີ່ຫຼາກຫຼາຍ. ແຕ່ວ່າ ສຳລັບໃນ ກໍລະນີຕໍ່ໄປນີ້ ແມ່ນຈະບໍ່ມີການປ່ຽນແປງໃນການອອກສຽງ: 'ㄴ, ㅁ, ㅇ + ㄴ, ㅁ, ㅇ', 'ㄹ + ㄹ', 'ㄹ + ㄴ, ㅁ, ㅇ'.

(1) 언니, 엄마, 빨리
(2) 설마, 얼마, 설명
(3) 빨리 하세요.
(4) 오렌지가 얼마예요?




# 일할 맛이 나요

## ມີຄວາມມ່ວນຊື່ນ ກັບການເຮັດວຽກ

**학습 안내**
ຄຳແນະນຳ ໃນການຮຽນ

- ☐ ຈຸດປະສົງໃນການຮຽນ — ການແນະນຳບັນຍາກາດຂອງສະຖານທີ່ເຮັດວຽກ, ການອະທິບາຍກ່ຽວກັບ ຂໍ້ຂັດແຍ້ງ ຂອງເພື່ອນຮ່ວມງານ
- ☐ ໄວຍາກອນ — -는/(으)ㄴ 편이다, -다고 하다
- ☐ ຄຳສັບ ແລະ ສຳນວນຄຳເວົ້າ — ບັນຍາກາດ ຂອງສະຖານທີ່ເຮັດວຽກ, ຂໍ້ຂັດແຍ້ງຂອງເພື່ອນຮ່ວມງານ
- ☐ ຂໍ້ມູນກ່ຽວກັບວັດທະນາທຳ — ຄຳເວົ້າກ່ຽວກັບຊັ້ນຕຳແໜ່ງ ຢູ່ບ່ອນເຮັດວຽກ



## 대화 1 ບົດສົນທະນາ 1






ບາຣູ ກັບ ຣີຮັນ ກຳລັງສົນທະນາກ່ຽວກັບ ບັນຍາກາດຂອງບໍລິສັດ.

바루 리한 씨 회사는 분위기가 어때요?
ຣີຮັນ ບັນຍາກາດ ຂອງບໍລິສັດເປັນແນວໃດ?

리한 동료들끼리 서로 위해 주니까 항상 즐겁게 일하는 편이에요.
ຂ້ອນຂ້າງມ່ວນຊື່ນ ກັບການເຮັດວຽກ ຢູ່ຕະຫຼອດ ເພາະວ່າ ບັນດາເພື່ອນຮ່ວມງານ ໃຫ້ການຊ່ວຍເຫຼືອເຊິ່ງກັນແລະກັນ.

바루 회사 분위기도 자유로운 편이에요?
ບັນຍາກາດ ຂອງບໍລິສັດ ກໍຂ້ອນຂ້າງເປັນອິດສະຫຼະບໍ?

리한 글쎄요. 규율은 좀 엄격한데요, 윗사람들이 아랫사람을 많이 배려해 줘서 일하기는 편해요.
ບໍ່ແນ່ໃຈ, ລະບຽບການເຮັດວຽກມີຄວາມເຂັ້ມງວດແຕ່ວ່າ ຜູ້ມີຕຳແໜ່ງສູງກໍໃຫ້ກຽດລູກນ້ອງ ສະນັ້ນ ການເຮັດວຽກຂ້ອນຂ້າງສະບາຍ.

바루 정말 부러워요. 그러면 훨씬 일할 맛이 나겠어요.
ອິດສາແທ້ເດ, ຖ້າເປັນແນວນັ້ນ, ລົດຊາດການເຮັດວຽກຄືຊິດີເລີຍ

리한 맞아요. 회사 오는 게 즐거우니까 일도 더 잘돼요.
ຖືກຕ້ອງແລ້ວ, ເພາະວ່າ ເຂົ້າມາໃນບໍລິສັດແລ້ວ ມີຄວາມເບີກບານ ເຮັດວຽກກໍໄດ້ດີ.

> **끼리** ກຽວກັນ
> - 오랜만에 고향 친구들끼리 노래방에 갔어요.
>   ດົນໆ ຈຶ່ງໄດ້ໄປຮ້ອງຄາຣາໂອເກະກັບໝູ່ໄທບ້ານດຽວກັນ.

> **맛이 나다** ມີຄວາມມ່ວນຊື່ນກັບ
> ມັກວຽກໃດວຽກໜຶ່ງ ຫຼື ມີຄວາມມ່ວນຊື່ນກັບວຽກນັ້ນ.
> - 수업 분위기가 좋으니까 요즘 공부할 맛이 나요.
>   ເພາະວ່າ ບັນຍາກາດໃນການຮຽນດີ ສະນັ້ນ ຈຶ່ງຄວາມ່ວນຊື່ນ ກັບການຮຽນໃນຊ່ວງນີ້.
> - 가족들이 맛있게 먹어 주니까 요즘은 요리할 맛이 나네요.
>   ເພາະວ່າ ໄດ້ແຕ່ງອາຫານແຊບໃຫ້ຄອບຄົວກິນ ສະນັ້ນ ຈຶ່ງມ່ວນຊື່ນກັບການແຕ່ງກິນຢູ່ໃນຊ່ວງນີ້.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨의 회사 분위기가 어때요? ບັນຍາກາດ ໃນບໍລິສັດ ຂອງຣີຮັນເປັນແນວໃດ?
2. 바루 씨는 왜 리한 씨를 부러워해요? ເປັນຫຍັງ ບາຣູ ຈຶ່ງອິດສາ ຣີຮັນ?

**정답** 1. 동료들끼리 서로 위해 주니까 즐겁게 일하는 편이에요. 2. 리한 씨의 회사 분위기가 좋아서요.





## 어휘 1 ຄຳສັບ 1 직장의 분위기 ບັນຍາກາດ ຂອງສະຖານທີ່ເຮັດວຽກ



ເຈົ້າຢາກເຮັດວຽກ ໃນບໍລິສັດ ທີ່ມີບັນຍາກາດແບບໃດ? ເຮົາໄປຮຽນຮູ້ຄຳສັບກ່ຽວກັບບັນຍາກາດຂອງສະຖານທີ່ເຮັດວຽກເລີຍບໍ?



동료
ເພື່ອນຮ່ວມງານ



상사
ຫົວໜ້າ



부하
ລູກນ້ອງ



사이가 좋다
ຄວາມສຳພັນ ດີ



사이가 나쁘다
ຄວາມສຳພັນ ບໍ່ດີ



격려하다
ໃຫ້ກຳລັງໃຈ



서로 위해주다
ຊ່ວຍເຫຼືອ ເຊິ່ງກັນແລະກັນ



분위기가 좋다
ບັນຍາກາດດີ



분위기가 나쁘다
ບັນຍາກາດບໍ່ດີ



자유롭다
ເປັນອິດສະຫຼະ



규율이 엄격하다
ກົດລະບຽບ ເຂັ້ມງວດ

- 사장님은 직원들을 **격려해** 주세요. ຫົວໜ້າຄວນໃຫ້ກຳລັງໃຈລູກນ້ອງແດ່.
- 동료들이 **서로 위해 주니까** 분위기가 좋아요. ເພາະເພື່ອນຮ່ວມງານຊ່ວຍເຫຼືອເຊິ່ງກັນແລະກັນ ຈຶ່ງເຮັດໃຫ້ບັນຍາກາດການເຮັດວຽກດີ.
- 회사 **규율이 엄격해서** 넥타이를 매야 해요. ກົດລະບຽບ ຂອງບໍລິສັດເຂັ້ມງວດ ສະນັ້ນ ຕ້ອງໃສ່ເນັກໄທສ໌.



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 빈칸에 맞는 표현을 골라 대화를 완성하세요. ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1) 가: 리한 씨는 투안 씨랑 안 친한 것 같아요. ຣີຮັນ ຄືວ່າບໍ່ສະໜິດກັບ ຕວນ.
나: 네, 지난번에 말다툼을 한 이후로 ______.
ແມ່ນແລ້ວ,ຫຼັງຈາກຜິດຖຽງກັນກ່ອນໜ້ານີ້ ຄວາມສຳພັນກໍເລີຍບໍ່ຄ່ອຍດີປານໃດ.

① 사이가 좋아졌어요　　② 사이가 별로 안 좋아졌어요

2) 가: 신입사원이 들어왔는데 일이 너무 느려서 답답해요.
ມີພະນັກງານໃໝ່ເຂົ້າມາແຕ່ວ່າເຮັດວຽກຊັກຊ້າຫຼາຍກໍເລີຍຮູ້ສຶກອຶດອັດໃຈ.
나: 많이 가르쳐 주세요. 아직 일을 잘 모르는 ______(이)잖아요.
ຈົ່ງສອນໃຫ້ຫຼາຍໆແດ່ ຍ້ອນຍັງເປັນພະນັກງານຜູ້ນ້ອຍ ບໍ່ຮູ້ເຮັດວຽກດີເທື່ອເດ.

① 상사　　② 부하 직원

정답 1) ② 2) ②

## 문법 1 ໄວຍາກອນ 1   -는/(으)ㄴ 편이다



'-는/(으)ㄴ 편이다' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ ເພື່ອຊີ້ບອກວ່າແທນທີ່ຈະເນັ້ນເພື່ອຊອກຫາຂໍ້ເທັດຈິງ, ໃຫ້ຊີ້ບອກວ່າມັນລວມຢູ່ ຫຼື ມີຄວາມໃກ້ຄຽງໃນດ້ານໃດໃສ່ແທນ.

| 동사(ຄຳກຳມະ) | 형용사(ຄຳຄຸນນາມ) | |
|---|---|---|
| **-는 편이다** | 자음(ພະຍັນຊະນະ) → **-은 편이다** | 모음(ສະຫຼະ) 자음(ພະຍັນຊະນະ) 'ㄹ'<br>→ **-ㄴ 편이다** |
| 많이 먹다 → 많이 먹**는 편이다**<br>자주 가다 → 자주 가**는 편이다**<br>잘 만들다 → 잘 만드**는 편이다** | 좋다 → 좋**은 편이다** | 크다 → **큰 편이다**<br>멀다 → **먼 편이다** |

ສ່ວນຫຼາຍຕໍ່ໜ້າຂອງຄຳກຳມະມັກຈະມີຄຳວິເສດ ເຊັ່ນ '잘, 잘 못, 많이, 자주' ເຫຼົ່ານີ້ເປັນຕົ້ນ.

- 가: 비빔밥을 좋아하세요? ເຈົ້າມັກບີບິມປັບບໍ?
  나: 네, 자주 **먹는 편이에요**. ເຈົ້າ, ຂ້ອຍມັກ ກິນເລື້ອຍໆ.
- 가: 지훈 씨 일하는 곳은 어때요? ບ່ອນເຮັດວຽກຂອງຈີຮຸນເປັນແນວໃດ?
  나: 분위기가 **좋은 편이에요**. ບັນຍາກາດຂ້ອນຂ້າງດີ.
- 한국의 여름 날씨는 비가 오고 **더운 편이에요**. ຢູ່ເກົາຫຼີລະດູຮ້ອນຂ້ອນຂ້າງມີຝົນ ແລະ ຮ້ອນ.



ເຂົ້າໃຈການໃຊ້ '-는/(으)ㄴ 편이다' ແລ້ວບໍ? ຈົ່ງຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນຄືດັ່ງຕົວຢ່າງ.

2. '-는/(으)ㄴ 편이다'를 사용해서 〈보기〉처럼 대화를 완성하세요.
ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ '-는/(으)ㄴ 편이다' ຄືດັ່ງຕົວຢ່າງ.

보기



가: 직장 분위기가 어때요? ບັນຍາກາດ ໃນທີ່ເຮັດວຽກ ເປັນແນວໃດ?
나: 자유로운 편이에요. ສະບາຍມີອິດສະຫຼະດີ.

1) 

2) 

3) 

4) 

정답 1) 분위기가 나쁜 2) 서로 위해주는 3) 규율이 엄격한 4) 분위기가 좋은

### 유용한 표현 ສຳນວນທີ່ສຳຄັນ

**손발이 잘 맞아요.** ເຂົ້າຂາກັນດີ.

가: 투안 씨 팀은 항상 분위기가 좋은 것 같아요. ທີມງານຂອງ ຕວນ, ຄືວ່າມີບັນຍາກາດດີຢູ່ເລື້ອຍໆ.
나: 네, 팀원들끼리 **손발이 잘 맞아요.** ແມ່ນແລ້ວ, ທີມງານດຽວກັນແຮງ**ເຂົ້າຂາກັນດີ.**



## 대화 2 ບົດສົນທະນາ 2

Track 119



ຈິຮຸນ ກຳລັງຖາມ ຕວນ ກ່ຽວກັບເລື່ອງທີ່ຜິດຖຽງກັບ ບາຣູ, ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມຫຼັງ.

지 훈　투안 씨, 조금 전에 바루 씨하고 왜 싸운 거예요?
ຕວນ, ມື້ກີ້ນີ້ເປັນຫຍັງ ຈຶ່ງຜິດກັບ ບາຣູ?

투 안　별일 아니에요. 바루 씨가 제 말에 대답을 **하도** 안 해서 저를 무시하는 줄 알았어요. 그런데 기계 소리 때문에 못 들었다고 **하더라고요**.
ບໍ່ມີເລື່ອງຫຍັງ, ບາຣູ ບໍ່ຕອບຄວາມຂ້ອຍຈັກຄວາມ ຂ້ອຍເລີຍຄິດວ່າ ລາວຕັ້ງເຮັດບໍ່ສົນໃຈຂ້ອຍ ແຕ່ລາວເວົ້າວ່າ ບໍ່ໄດ້ຍິນ ຍ້ອນສຽງຈັກດັງໂພດ.

지 훈　아, 그럼 서로 오해한 거네요. 이젠 화해했지요?
ໂອຍ, ຄັນຊັ້ນກໍເປັນການເຂົ້າໃຈຜິດກັນຊື່ໆ, ແຕ່ດຽວນີ້ ປັບຄວາມເຂົ້າໃຈກັນແລ້ວບໍ?

투 안　그럼요. 저도 사과했고, 바루 씨도 미안하다고 했어요.
ແນ່ນອນຢູ່ແລ້ວ, ຂ້ອຍ ກໍໄດ້ຂໍໂທດແລ້ວ, ບາຣູ ກໍໄດ້ວ່າ ຂໍໂທດເຊັ່ນກັນ.

지 훈　잘했어요. 동료끼리 잘 지내야지요.
ດີແລ້ວ, ເພື່ອນຮ່ວມງານດຽວກັນ ຕ້ອງມີຄວາມປອງດອງກັນ.

**하도 ສຸດໆ**
ໃຊ້ເນັ້ນໜັກຄຳເວົ້າ ທີ່ຮຸນແຮງ ຫຼື ຫຼວງຫຼາຍ.
· 하도 바빠서 밥 먹을 시간도 없다.
ຫຍຸ້ງສຸດໆ ບໍ່ມີເວລາຮອດກິນເຂົ້າ.

**-더라고요 ແທ້ໂອ**
ເປັນຄຳທີ່ໃຊ້ບອກຄູ່ສົນທະນາ ກ່ຽວກັບສິ່ງທີ່ຕົນເອງ ມີປະສົບການມາກ່ອນ ໃນອະດີດ ແລະ ຍັງເປັນຄວາມຈິງຢູ່ໃນປະຈຸບັນ.
· 한국 음식이 참 맛있다고 하더라고요.
ອາຫານເກົາຫຼີ ແຊບແທ້ໂອ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 바루 씨는 왜 투안 씨의 말을 못 들었어요? ບາຣູ ເປັນຫຍັງ ຄືບໍ່ໄດ້ຍິນຄຳເວົ້າ ຂອງຕວນ?
2. 투안 씨와 바루 씨는 서로 화해했어요? ຕວນກັບ ບາຣູໄດ້ປັບຄວາມເຂົ້າໃຈກັນແລ້ວບໍ?

정답　1. 기계 소리 때문에 못 들었어요.　2. 네, 두 사람은 서로 화해했어요.

**Tip 간접화법** ການເວົ້າຊ້ຳຄືນ

간접화법은 다른 사람의 말을 옮겨 말할 때 사용하는 화법으로 문장의 종결 유형에 따라서 다르게 실현된다. 옮겨 말하는 문장이 평서문일 때는 '-다고 하다'를, 명령문일 때는 '-(으)라고 하다'를, 의문문일 때는 '-냐고 하다'를, 청유문일 때는 '-자고 하다'를 사용한다.

ການເວົ້າຊ້ຳຄືນ ເປັນວິທີການເວົ້າ ໃນເວລາເອົາຄຳເວົ້າ ຂອງຄົນອື່ນມາເວົ້າຄືນ ເຊິ່ງມັນຈະແຕກຕ່າງກັນ ປະໂຫຍກເດີມຕາມຊະນິດ ຫຼື ປະເພດ ຂອງປະໂຫຍກນັ້ນ, ເວລາຈະເວົ້າປ່ຽນແທນ ປະໂຫຍກບອກເລົ່າ ຈະໃຊ້ກັບ '-다고 하다'; ປະໂຫຍກຄຳສັ່ງຈະໃຊ້ກັບ '-(으)라고 하다'; ປະໂຫຍກຄຳຖາມ ຈະໃຊ້ກັບ '-냐고 하다' ແລະ ປະໂຫຍກຊັກຊວນ ຈະໃຊ້ກັບ '-자고 하다'.



## 어휘 2 ຄຳສັບ 2 　 동료와의 갈등 ການຂັດແຍ່ງກັບ ເພື່ອຮ່ວມງານ



ຄຳສັບ ທີ່ກ່ຽວຂ້ອງກັບ ການຄັດແຍ່ງ ກັບເພື່ອຮ່ວມງານ ໃນສະຖານທີ່ເຮັດວຽກມີແບບໃດແດ່ ພວກເຮົາໄປຮຽນຮູ້ນຳກັນເລີຍບໍ?



때리다
ຕີ



맞다
ຖືກ




욕을 하다
ປ້ອຍດ່າ



짜증을 내다
ງຸດງິດ



화가 나다
ໃຈຮ້າຍ



화를 내다
ຮ້າຍ





싸움을 하다
ຕີກັນ



말다툼을 하다
ຖຽງກັນ

- 장난이 심한 동생 때문에 **화가 났어요.** 그래서 동생에게 **화를 냈어요.**
  ໃຈຮ້າຍ ຍ້ອນນ້ອງຫຼອກຫຼິ້ນແຮງເກີນໄປ, ສະນັ້ນ ຈຶ່ງຮ້າຍໃຫ້ນ້ອງ.
- 친구끼리 서로 **싸움을 하면** 안 돼요.
  ຖ້າເປັນໝູ່ກຸງວກັນ ແລ້ວຕີກັນບໍ່ໄດ້.
- 사소한 일 때문에 **말다툼을 했어요.**
  ຜິດຖຽງກັນ ຍ້ອນເລື່ອງໄຮ້ສາລະ.



오해하다
ເຂົ້າໃຈຜິດ



오해를 풀다
ປັບຄວາມເຂົ້າໃຈ




사과하다
ຂໍໂທດ



화해하다
ຄືນດີກັນ

- 엄마는 내가 꽃병을 깼다고 **오해했지만** 곧 **오해를 풀었어요.**
  ແມ່ເຂົ້າໃຈຜິດວ່າ ຂ້ອຍເຮັດໂຖດອກໄມ້ແຕກ ແຕ່ແມ່ກໍຄືງໄດ້ເຂົ້າໃຈໃນເວລາຕໍ່ມາ.
- 친구에게 미안하다고 **사과하고** 우리는 서로 **화해했어요.**
  ຂ້ອຍ ເວົ້າຂໍໂທດກັບໝູ່ ແລະ ພວກເຮົາຄືນດີກັນແລ້ວ.



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 빈칸에 맞는 표현을 골라 대화를 완성하세요.
ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)
가: 둘이 왜 싸운 거예요? ເປັນຫຍັງສອງຄົນຈຶ່ງຜິດກັນ?
나: 제 잘못이에요. 제가 바루 씨 말을 ______________. ຂ້ອຍຜິດເອງ, ຂ້ອຍເຂົ້າໃຈຜິດບາຣູເອງ.

① 오해했어요　　② 오해를 풀었어요

2)
가: 지훈 씨하고 싸웠어요? ເຈົ້າໄດ້ຕີ ຈີຮຸນບໍ?
나: 자꾸 저를 무시하는 것 같아서 참다가 ______________.
ຄືວ່າຢາກເຮັດໃສ່ຂ້ອຍຢູ່ຕະຫຼອດ ອົດບໍ່ໄດ້ກໍໃຈຮ້າຍ.

① 화를 냈어요　　② 화해했어요

정답 1) ① 2) ①

## 문법 2 ໄວຍາກອນ 2 -다고 하다




'-다고 하다' ມັນໃຊ້ໃນເວລາທີ່ເອົາຄຳເວົ້າຂອງຜູ້ອື່ນມາເວົ້າອີກເທື່ອໜຶ່ງ. ກໍລະນີເປັນປະໂຫຍກບອກເລົ່າແມ່ນໃຊ້ '-다고 하다', ກາລະອະດີດແມ່ນໃຊ້ '-았/었다고 하다', ແລະ ກາລະອະນາຄົດເຮົາໃຊ້ 'ຄຳຄຸນນາມ/ຄຳກຳມະ -(으)ㄹ 거라고 하다'.

| 동사(ຄຳກຳມະ) | 형용사(ຄຳຄຸນນາມ) | 명사(ຄຳນາມ) | |
|---|---|---|---|
| **-ㄴ/는다고 하다** | **-다고 하다** | 자음(ພະຍັນຊະນະ)<br>**→ 이라고 하다** | 모음(ສະຫຼະ)<br>**→ 라고 하다** |
| 가다 → **간다고 하다**<br>먹다 → 먹**는다고 하다** | 바쁘다 → 바쁘**다고 하다**<br>많다 → 많**다고 하다** | 학생 → 학생**이라고 하다**<br>가수 → 가수**라고 하다** | |

- 이 사람이 한국에서 가장 인기 있는 **가수라고 해요**. ເຂົາເຈົ້າເວົ້າວ່າ ຜູ້ນີ້ເປັນນັກຮ້ອງທີ່ໂດ່ງດັງທີ່ສຸດໃນເກົາຫຼີ.
- 가: 투안 씨는 이제 고향에 돌아가는 거예요? ວີຣະ ຈະກັບບ້ານເກີດບໍ?
  나: 네, 다음 달에 고향으로 **간다고 해요**. ເຈົ້າ, ລາວເວົ້າວ່າ ລາວຈະກັບບ້ານເກີດເດືອນໜ້າ.
- 가: 요즘 공장이 좀 바빠진 것 같아요. ຊ່ວງນີ້ ຢູ່ໂຮງງານຄືຊິຫຍຸ້ງຫຼາຍ.
  나: 네, 주문이 늘어서 일이 좀 **많다고 해요**. ແມ່ນແລ້ວ. ໄດ້ຍິນວ່າ (ລູກຄ້າ) ສັ່ງຂອງເພີ່ມ ວຽກກໍເລີຍຫຼາຍຂຶ້ນ.



ເຂົ້າໃຈການໃຊ້ '-다고 하다' ແລ້ວບໍ? ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນຄືດັ່ງຕົວຢ່າງ.

2. '-다고 하다'를 사용해서 〈보기〉처럼 대화를 완성하세요.
ຈົ່ງຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນ ໂດຍການໃຊ້ '-다고 하다' ຄືດັ່ງຕົວຢ່າງ.






투안 씨가 수피카 씨하고 말다툼을 하다. ຕວນ ຜິດຖຽງກັບ ສຸພິກາ.
투안 씨가 수피카 씨하고 말다툼을 했다고 해요.
ລາວເວົ້າວ່າ ຕວນ ກັບ ສຸພິກາ ຜິດຖຽງກັນ.

1) 투안 씨가 이반 씨하고 화해하다
______________________
______________________

2) 
수피카 씨가 투안 씨를 때리다
______________________
______________________

3) 
이반 씨가 수피카 씨에게 사과하다
______________________
______________________

4) 투안 씨가 이반 씨하고 싸움을 하다
______________________
______________________

정답 1) 투안 씨가 이반 씨하고 화해했다고 해요. 2) 수피카 씨가 투안 씨를 때렸다고 해요.
3) 이반 씨가 수피카 씨에게 사과했다고 해요. 4) 투안 씨가 이반 씨하고 싸움을 했다고 해요.



## 활동 ກິດຈະກຳ

직장 분위기에 대한 글입니다. 잘 읽고 질문에 답하세요.

ບົດເລື່ອງກ່ຽວກັບ ບັນຍາກາດໃນສະຖານທີ່ເຮັດວຽກ, ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

NEWS TIMES

### 신바람 나는 직장 분위기 만들기

인주시가 활기찬 직장 분위기를 만들기 위해 직원들을 대상으로 다양한 행사를 마련하여 주위의 관심을 모으고 있다. 인주시는 '생일 케이크 선물하기', '동료와 함께 커피 한 잔'과 같은 행사를 통해 직원들이 출근하고 싶은 직장이 되도록 노력하고 있다. 가을에는 '야구장 가기', '영화 보기' 등과 같이 많은 직원들이 함께 할 수 있는 행사를 준비하고 있다. 인주시의 김민수 시장은 직장 분위기도 이제는 윗사람이 주도하던 엄격한 분위기에서 직 원들이 행복해 할 수 있는 분위기로 바뀌어야 한다고 말했다.



ການສ້າງບັນຍາກາດ ໃນສະຖານທີ່ເຮັດວຽກໃໝ່ໃຫ້ສົດຊື່ນ

ເພື່ອຈະສ້າງສະພາບແວດລ້ອມ ໃນການເຮັດວຽກໃຫ້ສົດໃສ ຢູ່ໃນເມືອງ ອິນຈູ ໃນປະຈຸບັນ ກຳລັງເກັບລວບລວມຄວາມສົນໃຈໃນກິດຈະກຳຕ່າງໆ ໃຫ້ແກ່ບັນດາພະນັກງານ ເຊິ່ງກຳລັງພະຍາຍາມ ເຮັດໃຫ້ມັນກາຍເປັນສະຖານທີ່ ຕ້ອງການເຂົ້າມາ ເຮັດວຽກ ໂດຍຜ່ານກິດຈະກຳຕ່າງໆ; ເປັນຕົ້ນແມ່ນ ກິດຈະກຳການໃຫ້ຂອງຂວັນເຄັກ ວັນເກີດ ເມືອງ ອິນຈູ; ກິດຈະກຳການ ນັ່ງກິນກາເຟຮ່ວມກັນຂອງພະນັກງານ. ຍັງໄດ້ກະກຽມກິດຈະກຳ ທີ່ບັນດາພະນັກງານຫຼາຍຄົນ ສາມາດເຂົ້າຮ່ວມໄດ້ ເຊັ່ນ: ໃນລະດູໃບໄມ້ຫຼົ່ນ "ໄປເບິ່ງການແຂ່ງຂັນກິລາເບສບອນ" ຫຼື ເບິ່ງໜັງເລື່ອງຕ່າງໆ ເຊິ່ງ ທ່ານ ຄິມມິນຊູ ເຈົ້າເມືອງ ອິນຈູ ຍັງໄດ້ເວົ້າຕື່ມວ່າ: ຕັ້ງແຕ່ນີ້ຕໍ່ໄປ ພວກເຮົາຕ້ອງປ່ຽນສະພາບແວດລ້ອມ ທີ່ບັນດາພະນັກງານ ມີແຕ່ຄວາມສຸກ ແທນທີ່ສະ ພາບແວດລ້ອມ ທີ່ມີແຕ່ຫົວໜ້າສັ່ງການຢ່າງເຂັ້ມງວດ ຄືດັ່ງທີ່ຜ່ານມາ.

1. 다음 중 인주시의 신바람 나는 직장 문화 이벤트가 **아닌** 것은 무엇입니까?

ຕໍ່ໄປນີ້ ແມ່ນຫຍັງ ທີ່ບໍ່ແມ່ນກິດຈະກຳ ທາງວັດທະນະທຳ ການເຮັດວຽກໃໝ່ໆ ຂອງ ເມືອງ ອິນຈູ?



① 

② 

③ 

④ 

정답 1. ③

# 직장 내에서의 호칭

## ຊັ້ນຕຳແໜ່ງຢູ່ໃນບ່ອນເຮັດວຽກ




회사에서는 사람들을 부를 때 직책에 '-님'을 붙이세요. 예를 들면 '사장님, 부장님, 과장님, 대리님, 주임님, 반장님' 이렇게 부르면 됩니다.
ຈົ່ງຕື່ມ '-님' ໃສ່ຕຳແໜ່ງໃນເວລາຮ້ອງຄົນຢູ່ໃນບໍລິສັດ, ຕົວຢ່າງ ການຮ້ອງຊື່ງໃນຕຳແໜ່ງຕ່າງເຊັ່ນ: ທ່ານ ຫົວໜ້າ, ທ່ານຮອງຫົວໜ້າ, ທ່ານຫົວໜ້າພະແນກ, ທ່ານຫົວໜ້າສາຂາ, ທ່ານຫົວໜ້າຈຸ, ທ່ານຫົວໜ້າຫ້ອງ.




동료나 비슷한 직급의 사람 부를 때 이름에 '씨'를 붙이세요. 예를 들면 '투안 씨', '지훈 씨' 이렇게 부르면 됩니다. '씨'를 붙일 때는 성을 붙이지 않아도 됩니다.
ເວລາຮ້ອງຊື່ຄົນເພື່ອນຮ່ວມງານທີ່ຢູ່ໃນຕຳແໜ່ງດຽວກັນໃຫ້ຕື່ມ '씨' ໃສ່ຫຼັງຊື່ ຕົວຢ່າງ: ຕວນ 씨; ຈີຮຸນ 씨; ເວລາຕື່ມ 씨ໃສ່ກັບຊື່ແລ້ວບໍ່ຈຳເປັນເອີ້ນຮອດນາມສະກຸນກໍໄດ້.




그러나 직장 밖에서는 개인적으로 친한 사람에게는 '형', '누나'와 같은 호칭을 사용하여 친근함을 표기하기도 합니다.
ແຕ່ວ່າຢູ່ນອກສະຖານທີ່ບ່ອນເຮັດວຽກ ມັກຈະຮ້ອງວ່າ "ອ້າຍ"ຫຼື "ເອື້ອຍ"ກັບຄົນທີ່ສະໜິດແລະຍັງເປັນລັກສະນະທີ່ເປັນກັນເອງ ຫຼື ເປັນມິດທີ່ດີອີກດ້ວຍ.

### 갈등 해결 방법 ວິທີແກ້ໄຂຂໍ້ຂັດແຍ້ງ



서로 다르다는 것을 인정하세요. '상대가 틀려서'가 아니라 '서로 다르기' 때문이에요.
ໃຫ້ເຂົ້າໃຈວ່າ ແຕ່ລະຄົນແມ່ນແຕກຕ່າງກັນ. ບໍ່ແມ່ນຝ່າຍກົງກັນກັບຂ້າມຜິດ ແຕ່ຍ້ອນວ່າແຕ່ລະຄົນມີຄວາມແຕກຕ່າງກັນ.



이야기를 잘 들어 주세요. 상대방의 생각, 감정, 상황 등에 대해 정확히 이해하면 갈등의 원인을 찾을 수 있어요.
ຈົ່ງຟັງສົນທະນາໃຫ້ດີ, ຖ້າເຂົ້າໃຈລະອຽດກ່ຽວກັບ ສະຖານະການ, ຄວາມຮູ້ສຶກ, ຄວາມຄິດ ຂອງຄູ່ກໍລະນີ ແລ້ວຈະສາມາດຊອກຫາສາເຫດ ຂອງຄວາມຂັດແຍ້ງໄດ້.




자신의 입장 상황, 가치관 등에 대해 상대에게 적극적으로 공개하고 정확히 알리기 위해 노력하세요.
ຈົ່ງພະຍາຍາມເຮັດໃຫ້ຝ່າຍກົງກັນຂ້າມຮູ້ ກ່ຽວກັບຄວາມສຳຄັນ ຫຼື ສະຖານະການ ຂອງຕົນອອກມາຢ່າງລະອຽດສຸດກົກສຸດປາຍ.




부탁이나 거절을 할 때는 '미안합니다만', '죄송합니다만' 등의 용어로 시작하는 것이 좋아요.
ເວລາຈະຂໍຮ້ອງ ຫຼື ເວລາຈະປະຕິເສດໃຫ້ໃຊ້ຄຳເວົ້າທີ່ວ່າ: ຂໍໂທດ; ຂໍໂທດເດີ ຂຶ້ນຕົ້ນກ່ອນ ຈະເປັນການດີກວ່າ.




화가 나면 숫자를 1부터 10까지 세어 보세요. 화를 참지 못하면 나중에 후회하는 일이 생길 거예요.
ຖ້າຢາກຮ້າຍໃຫ້ນັບເລກ ແຕ່ 1 ເຖິງ 10 ລອງເບິ່ງ; ຖ້າອົດຮ້າຍບໍ່ໄດ້ ມັນຈະເກີດບັນຫາ ທີ່ເສຍໃຈມາພາຍຫຼັງ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຄຳຖາມຂໍ້ 1 ຫາ 2 ແມ່ນເປັນການເບິ່ງຮູບ ແລ້ວເລືອກຄຳຕອບ ທີ່ເໝາະສົມກັບຄຳຖາມ. ກ່ອນການຟັງ ຈົ່ງກວດກາເບິ່ງຄຳຖາມກ່ອນ.

[1~2] 다음 그림을 보고 알맞은 대답을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.




1. 
이 사람은 누구입니까? ຄົນນີ້ແມ່ນໃຜ?
① ② ③ ④

2. 
이 사람은 지금 무엇을 하고 있습니까? ດຽວນີ້, ຄົນນີ້ ກຳລັງເຮັດຫຍັງ?
① ② ③ ④



ຄຳຖາມຂໍ້ 3 ແລະ 4 ແມ່ນໃຫ້ເລືອກເອົາຄຳເວົ້າຕໍ່ໄປ ທີ່ເໝາະສົມ. ສ່ວນ ຂໍ້ 5 ແມ່ນເປັນການຟັງບົດສົນທະນາ ແລ້ວເລືອກເອົາຮູບພາບ ທີ່ເໝາະສົມ. ກ່ອນການຟັງ ຈົ່ງກວດເບິ່ງເນື້ອໃນ ຄຳຕອບອີກຄັ້ງໜຶ່ງກ່ອນ.

[3~4] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບທີ່ເໝາະສົມ.

3. ① 그건 오해예요. ② 벌써 화해했어요.
③ 오해가 풀려서 다행이에요. ④ 빨리 화해했으면 좋겠어요.

4. ① 네, 규율이 좀 엄격해요. ② 네, 서로 위해 주는 편이에요.
③ 상사가 좀 무서운 편이에요. ④ 분위기가 자유로운 편은 아니에요.

5. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

남자의 회사의 분위기는 어떻습니까?
ບັນຍາກາດໃນບໍລິສັດ ຂອງຜູ້ຊາຍຄົນນັ້ນ ເປັນແນວໃດ?

① 
② 
③ 
④ 



### 듣기 대본 ເນື້ອໃນບົດຟັງ

1. ① 남: 상사입니다. ນີ້ ແມ່ນຫົວໜ້າ.
   ② 남: 동료입니다. ນີ້ ແມ່ນເພື່ອນຮ່ວມງານ.
   ③ 남: 윗사람입니다. ນີ້ ແມ່ນຜູ້ມີຕຳແໜ່ງສູງ.
   ④ 남: 부하 직원입니다. ນີ້ ແມ່ນພະນັກງານຊັ້ນຜູ້ນ້ອຍ.
2. ① 여: 때리고 있습니다. ກຳລັງຕີບກັນຢູ່.
   ② 여: 화를 내고 있습니다. ກຳລັງຮ້າຍຢູ່.
   ③ 여: 사과를 하고 있습니다. ກຳລັງຂໍໂທດຢູ່.
   ④ 여: 싸움을 하고 있습니다. ກຳລັງຕີກັນຢູ່.
3. 남: 죄송해요. 제가 오해를 했어요. ຂໍໂທດ, ຂ້ອຍເຈົ້າໃຈຜິດ.
4. 여: 직장 분위기가 좋은 편인 것 같아요. ບັນຍາກາດ ຢູ່ໃນບ່ອນເຮັດວຽກ ຂ້ອນຂ້າງວ່າດີ.
5. 남: 수피카 씨 회사는 어때요? ຊຸພິກາ ຢູ່ໃນບໍລິສັດ ເປັນແນວໃດ?
   여: 동료들이 너무 좋아요. 서로 위해 주고, 배려해 주는 편이에요.
   ເພື່ອນຮ່ວມງານທຸກຄົນ ດີຫຼາຍ, ຂ້ອນຂ້າງເບິ່ງແຍງ ຊ່ວຍເຫຼືອເຊິ່ງກັນແລະກັນດີ.
   남: 정말 부럽네요. ອິດສາແທ້ເດ.

정답 1. ② 2. ② 3. ③ 4. ② 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ

L-38

1. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   남자의 회사는 분위기가 어떻습니까? ບັນຍາກາດຂອງບໍລິສັດຜູ້ຊາຍຄົນນັ້ນ ເປັນແນວໃດ?

   ① 상사가 엄격합니다. ② 일이 많지 않습니다.
   ③ 동료들끼리 잘 지냅니다. ④ 규율이 아주 엄격합니다.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 바트 씨 회사는 분위기가 어때요? ບັດທ໌ ບັນຍາກາດການເຮັດວຽກ ໃນບໍລິສັດເປັນແນວໃດ?
   남: 좋아요. 동료들끼리 사이도 좋고 상사들도 많이 배려해 줘요. 그래서 일이 많아도 모두들 즐겁게 일해요.
   ດີ, ໝູ່ເພື່ອນຮ່ວມງານກໍດີ ແລະ ຫົວໜ້າກໍກໍໃຫ້ກຽດ ສະນັ້ນ ເຖິງແມ່ນວ່າວຽກຫຼາຍ ແຕ່ໝົດທຸກຄົນກໍເຮັດວຽກຢ່າງມີຄວາມສຸກ.
   여: 정말 부러워요. 우리 회사는 규율이 엄격해서 회사 분위기가 딱딱하거든요.
   ອິດສາເຈົ້າແທ້ໆ. ບໍລິສັດຂອງຂ້ອຍ ມີກົດລະບຽບຫຼາຍບັນຍາກາດ ໃນການເຮັດວຽກ ແມ່ນແບບແຂງກະດ້າງ.





## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາຄຳສັບ ທີ່ເໝາະສົມ. ຈົ່ງຄິດທວນຄືນເບິ່ງຄຳສັບທີ່ໄດ້ຮຽນຜ່ານມາ ແລ້ວຕອບຄຳຖາມ.

[1~2] 다음 그림을 보고 맞는 단어나 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳສັບ ຫຼື ປະໂຫຍກທີ່ຖືກຕ້ອງ.

1. 

① 상사 ② 부하
③ 동료 ④ 친구

2. 

① 때리고 있습니다.
② 사과를 하고 있습니다.
③ 말다툼을 하고 있습니다.
④ 다른 사람에게 맞고 있습니다.



ຂໍ້ 3 ແລະ 4 ແມ່ນໃຫ້ເລືອກເອົາຄຳສັບ ທີ່ເໝາະສົມ. ສ່ວນ ຂໍ້ 5 ແມ່ນອ່ານບົດເລື່ອງ ແລ້ວໃຫ້ເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

[3~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.
여: 아직도 수미 씨에게 화가 났어요? ຍັງຢາກຮ້າຍໃຫ້ ຊູມີ ຢູ່ບໍ?
남: 아니요, 벌써 ______________. ບໍ່, ຄືນດີກັນແລ້ວ.

① 오해했어요 ② 화해했어요 ③ 짜증을 냈어요 ④ 싸움을 했어요

4.
남: 수미 씨 직장은 규율이 엄격한 편이에요? ຊູມີ, ລະບຽບຂອງບ່ອນເຮັດວຽກ ຂ້ອນຂ້າງເຂັ້ມງວດບໍ?
여: 아니요, 좀 ______________. 그래서 출퇴근 시간이 따로 없어요.
ບໍ່, ຂ້ອນຂ້າງເປັນອິດສະຫຼະ, ດັ່ງນັ້ນ ຈຶ່ງບໍ່ມີການກຳນົດເວລາເຂົ້າວຽກ-ເລີກວຽກໄວ້ເລີຍ.

① 나빠요 ② 엄격해요 ③ 위해줘요 ④ 자유로워요

5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

좋은 직장 분위기를 만들기 위해서는 모든 사람의 노력이 필요합니다. 직장에서는 서로에게 웃는 얼굴로 이야기하는 게 좋습니다. 그리고 서로를 배려하는 마음을 갖는다면 화내는 일이 없어질 것입니다. _____㉠_____ 전에 상대방의 마음을 한 번 더 생각하는 것도 즐거운 직장을 만드는 방법입니다.

ເພື່ອເປັນການສ້າງບັນຍາກາດ ໃນສະຖານທີ່ການເຮັດວຽກ ໃຫ້ດີຂຶ້ນ ທຸກຄົນຈຶ່ງຈຳເປັນຕ້ອງໄດ້ ມີຄວາມພະຍາຍາມ, ການໂອ້ລົມກັນໃນບ່ອນເຮັດວຽກ ດ້ວຍໃບໜ້າທີ່ຍິ້ມແຍ້ມແຈ່ມໃສ ແມ່ນຈະດີຫຼາຍ; ຖ້າທຸກຄົນມີຈິດໃຈທີ່ໃຫ້ກຽດ ເຊິ່ງກັນແລະກັນແລ້ວ ຈະບໍ່ມີເລື່ອງທີ່ຈະຢາກຮ້າຍເກີດຂຶ້ນໄດ້ ㉠ ກ່ອນທີ່ຈະຮ້າຍຕ້ອງຄິດເຖິງ ຈິດໃຈຂອງຝ່າຍກົງກັນ ຂ້າມຕື່ມກ່ອນ ສິ່ງຕ່າງໆເຫຼົ່ານັ້ນ ເປັນວິທີທີ່ຈະສ້າງບັນຍາກາດມ່ວນຊື່ນ ໃນບ່ອນເຮັດວຽກນັ້ນເອງ.

㉠에 들어갈 알맞은 말을 고르십시오. ຈົ່ງເລືອກເອົາຄຳທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ ㉠.

① 웃기 ② 화내기 ③ 배려하기 ④ 오해하기

정답 1. ① 2. ③ 3. ② 4. ④ 5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

저는 고향에 있는 가족이 생각날 때 ________을/를 봅니다. 가족들 얼굴을 보면 기분이 좀 좋아집니다.

ເວລາຂ້ອຍຄິດຮອດບ້ານເກີດ ກໍຈະເອົາຮູບຄອບຄົວອອກມາເບິ່ງ. ຖ້າຫາກໄດ້ເຫັນໜ້າ ຄອບຄົວແລ້ວ ເຮັດໃຫ້ອາລົມ ດີຂຶ້ນ.

① 신문　　② 사진
③ 영화　　④ 통장

2.

우리 회사는 분위기가 아주 좋습니다. 동료들끼리 ________ 위해 주고 항상 웃으면서 이야기를 나눕니다.

ບັນຍາກາດການເຮັດວຽກ ໃນບໍລິສັດຂອງພວກເຮົາ ດີຫຼາຍໆ. ໝູ່ເພື່ອນຮ່ວມງານທຸກຄົນ ຍິ້ມແຍ້ມແຈ່ມໃສ ຢູ່ຕະຫຼອດ ການເວົ້າຈາສົນທະນາ ກໍດີນຳກັນ.

① 서로　　② 벌써
③ 전혀　　④ 아직

3.

직장에서 즐겁게 ________ 동료들과 잘 지내는 것이 중요합니다. 서로 배려하고 웃으면서 이야기하는 것이 좋습니다.

ໃນບ່ອນເຮັດວຽກ ສິ່ງສຳຄັນທີ່ສຸດຄື ໝູ່ເພື່ອນຮ່ວມງານນຳກັນ ເຮັດວຽກຮ່ວມກັນຢ່າງມີຄວາມສຸກ, ມີຄວາມເອົາໃຈໃສ່ ເຊິ່ງກັນ ແລະ ກັນ ຍິ້ມແຍ້ມແຈ່ມໃສ, ເວົ້າຈາສົນທະນາດີນຳກັນ ເປັນສິ່ງທີ່ດີ.

① 정리하니까　　② 정리하려면
③ 생활하니까　　④ 생활하려면

정답 1. ② 2. ① 3. ④



## 발음 ການອອກສຽງ



P-17

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພາສາເກົາຫຼີ ເມື່ອສອງພະຍັນຊະນະມາຄວບກັນ ຈະຜັນສຽງໄດ້ຫຼາຍແບບ. ແຕ່ວ່າ ໃນກໍລະນີ ພະຍັນ ຊະນະເຄົ້າ + ພະຍັນຊະນະສຽງສັ້ນ ຈະບໍ່ມີການອອກສຽງຫຼາຍແບບແຕ່ຢ່າງໃດເລີຍ.

(1) 딸기, 얼굴, 날개, 갈비
(2) 슬기, 즐기다, 질기다
(3) 딸기가 맛있어요.
(4) 즐거운 방학이에요.



# 오늘 회식을 하자고 해요

ມື້ນີ້ ຂ້ອຍໄດ້ຮັບແຈ້ງວ່າ ພວກເຮົາຈະມີງານລ້ຽງຫ້ອງການ

**학습 안내** ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ — ການປະກາດກ່ຽວກັບ ວັນເວລາງານລ້ຽງຫ້ອງການ, ການນຳສະເໜີພະນັກງານໃໝ່
- □ ໄວຍາກອນ — -자고 하다, -(으)라고 하다
- □ ຄຳສັບ ແລະ ສຳນວນຄຳເວົ້າ — ງານລ້ຽງຫ້ອງການ, ການປະຊຸມ ຢູ່ບ່ອນເຮັດວຽກ
- □ ຂໍ້ມູນກ່ຽວກັບວັດທະນາທຳ — ວັດທະນາທຳງານລ້ຽງຫ້ອງການຂອງເກົາຫຼີ



## 대화 1 ບົດສົນທະນາ 1

Track 121



ຫົວໜ້າໂຮງງານ ກຳລັງປະກາດກ່ຽວກັບວັນເວລາງານລ້າງ ຂອງບໍລິສັດ ໃຫ້ກັບບັນດາພະນັກງານ. ກ່ອນອື່ນ ຈົ່ງຟັງບົດສົນທະນາ ກ່ອນສອງຄັ້ງ ແລ້ວເວົ້າຕາມ.

**공장장** 여러분, 이번 주 금요일 저녁에 회식하자고 한 거 모두 기억하시지요? 한 명도 빠짐없이 참석하는 겁니다!
ສະບາຍດີທຸກຄົນ, ໃນວັນສຸກຂອງອາທິດນີ້ ຕອນແລງ ຈະມີງານລ້ຽງ ຂອງບໍລິສັດ ທຸກຄົນຍັງຈື່ຢູ່ແມ່ນບໍ? ພວກເຮົາ ຄວນເຂົ້າຮ່ວມໝົດທຸກຄົນ.

**모니카** 설마 오늘도 삼겹살은 아니지요?
ມື້ນີ້ກໍແມ່ນປີ້ງຊີ້ນສາມຊັ້ນ ອີກແມ່ນບໍ?

**공장장** 다들 좋아하는 것 같아서 이번에도 삼겹살집으로 정했는데, 별로예요?
ຍ້ອນທຸກໆຄົນມັກ ເທື່ອນີ້ ກໍໄດ້ເລືອກເອົາ ຮ້ານບາບີຄິວຊີ້ນສາມຊັ້ນ, ບໍ່ມີໃຜຕິທີ່ບໍ່ມັກ?

**모니카** 아니요, 그런 건 아니에요. 대신 2차는 치킨 먹으러 가요. 날도 더운데 시원한 맥주에 치킨 좋잖아요.
ບໍ່, ບໍ່ແມ່ນແນວນັ້ນ. ຮອບທີສອງ ແມ່ນໄປກິນໄກ່ແທນເອົາ. ອາກາດ ຮ້ອນແນວນີ້ ກິນເບຍເຢັນໆກັບຊີ້ນໄກ່ ແມ່ນດີບໍ່ແມ່ນຫວາ.

**공장장** 당연하지요. 좋습니다. 그럼 1차는 삼겹살, 2차는 치맥입니다. 오늘 배 터지게 먹어 봅시다.
ແນ່ນອນວ່າ ມັນດີ. ສະນັ້ນ ຮອບທີ 1 ແມ່ນກິນຊີ້ນສາມຊັ້ນ. ຮອບທີ 2 ແມ່ນກິນຊີ້ນໄກ່ແກ້ມເບຍ. ມື້ນີ້ ຈົ່ງກິນໃຫ້ອີ່ມໆເນາະ.

**모니카** 네, 모처럼 포식하겠네요.
ເຈົ້າ, ຈະກິນໃຫ້ຫຼາຍໆ ພາຍຫຼັງທີ່ລໍຖ້າມາດົນ.

> **빠짐없이** ບໍ່ມີຂໍ້ຍົກເວັ້ນ, ທັງໝົດ.
> · 여행에 가져갈 준비물을 빠짐없이 챙겼다.
> ຂ້ອຍ ໄດ້ກະກຽມມັ້ຽນເຄື່ອງ ສຳລັບການທ່ອງທ່ຽວທັງໝົດ ແລ້ວ.

> **모처럼** ເປັນຄັ້ງທຳອິດ ພາຍຫຼັງທີ່ຖ້າມາດົນ.
> · 모처럼 가족과 외식을 하려고 해요.
> ເປັນເທື່ອທຳອິດທີ່ຈະໄດ້ໄປກິນເຂົ້າຢູ່ນອກບ້ານກັບຄອບຄົວ.

> **배 터지게 먹다** ກິນໃຫ້ອີ່ມໆ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 이번 주 금요일에 어디에서 회식을 해요? ໃນວັນສຸກ ອາທິດນີ້ ຈະມີງານລ້ຽງຫ້ອງການຢູ່ໃສ?
2. 회식 2차는 무엇을 먹으러 가요? ໃນຮອບທີ 2 ຂອງງານລ້ຽງ ຈະໄປກິນຫຍັງ?

정답 1. 삼겹살집에서 회식을 해요. 2. 맥주에 치킨을 먹으러 가요.





## 어휘 1 ຄຳສັບ 1 　 회식 ງານລ້ຽງຫ້ອງການ



ງານລ້ຽງຫ້ອງການ ຫຼື ງານລ້ຽງບໍລິສັດໝາຍຄວາມວ່າ ອອກໄປຮັບປະທານອາຫານ ແລະ ດື່ມເຫຼົ້າກັບເພື່ອນຮ່ວມງານ. ສະນັ້ນ ພວກເຮົາໄປຮຽນຮູ້ກ່ຽວກັບ ງານລ້ຽງຫ້ອງການ ແລະ ຄຳສັບທີ່ກ່ຽວຂ້ອງນຳກັນລອງເບິ່ງບໍ?



회식을 하다
ຈັດງານລ້ຽງຫ້ອງການ



참석하다
ເຂົ້າຮ່ວມ



빠지다
ບໍ່ເຂົ້າຮ່ວມ



한턱내다
ດູແລ (ການຢູ່ກິນ), ຈ່າຍໃຫ້.



한잔하다
ດື່ມ



2차에 가다
ໄປຕໍ່ຮອບ 2



술을 받다
ຮັບການເຍັ້ນເຫຼົ້າ



건배하다
ຕຳຈອກ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 대화를 읽고 맞는 그림을 〈보기〉에서 고르세요.
ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຮູບພາບຈາກ < ກອບ > ທີ່ຖືກຕ້ອງກັບບົດສົນທະນານັ້ນ.



보기

가: 리한 씨, 오늘 보너스 받았다면서요?
ຣິຮັນ ໄດ້ຍິນວ່າ ມື້ນີ້ໄດ້ຮັບໂບນັດສ໌ບໍ?
나: 네, 갑자기 부자가 된 것 같아요. 제가 오늘은 한턱낼게요.
ແມ່ນແລ້ວ. ຄ້າຍວ່າກາຍເປັນເສດຖີທັນທີເລີຍ.
ມື້ນີ້ ຂ້ອຍຈະຈ່າຍລ້ຽງເຈົ້າເດີ.



그림 ①

1)
가: 오늘 승진하신 김 부장님 축하드립니다.
나: 감사합니다. 자, 우리 다 같이 건배합시다.
그림 ☐

2)
가: 리한 씨, 제 술 한 잔 받으세요.
나: 어이쿠, 감사합니다.
그림 ☐

보기

①



②



③



④



정답 1) ② 2) ③

## 문법 1 ໄວຍາກອນ 1 -자고 하다




'-자고 하다' ມັນໃຊ້ໃນເວລາທີ່ເອົາຄຳເວົ້າຂອງຜູ້ອື່ນມາເວົ້າອີກເທື່ອໜຶ່ງ. ໃນປະໂຫຍກຊັກຊວນ ເຮົາໃຊ້ '-자고 하다' ໂດຍບໍ່ຈຳແນກວ່າ ທາງຫຼັງຂອງຄຳກຳມະມີຕົວສະກົດ ຫຼືບໍ່.

- 가: 지훈 씨가 뭐라고 해요? ຈີຮຸນ ເວົ້າ(ວ່າ)ຫຍັງ?
  나: 오늘 같이 **운동하자고 해요**. ລາວຊວນວ່າ ມື້ນີ້ ໄປອອກກຳລັງກາຍນຳກັນ.
- 가: 이번 주말에 어디로 갈까요? ທ້າຍອາທິດນີ້(ພວກເຮົາ)ຈະໄປໃສ?
  나: 날씨가 좋으니까 같이 등산을 **가자고 하는데요**. ອາກາດດີ ເລີຍ(ຢາກ)ຊວນໄປປີນພູນຳກັນ.
- 가: 오늘 퇴근하고 약속 있어요? ມື້ນີ້ ຫຼັງເລີກການເຈົ້າມີນັດບໍ?
  나: 노이 씨가 영화를 **보자고 하는데** 같이 갈래요? ນ້ອຍຊວນໄປເບິ່ງໜັງ, ໄປນຳກັນບໍ?



ເຂົ້າໃຈການໃຊ້ '-자고 하다' ແລ້ວບໍ? ສະນັ້ນ ຈົ່ງລອງປ່ຽນປະໂຫຍກຕໍ່ໄປນີ້ ເປັນປະໂຫຍກທາງອ້ອມ ຄືດັ່ງຕົວຢ່າງເບິ່ງ.

1. 대화를 읽고 맞는 그림을 〈보기〉에서 고르세요.
   ຈົ່ງຕື່ມໃສ່ປະໂຫຍກໃຫ້ສົມບູນ ໂດຍການໃຊ້ '-자고 하다' ຄືດັ່ງຕົວຢ່າງ.

**보기**




지훈 씨가 <u>이따가 만나자고 해요.</u> ຈີຮຸນ ບອກຂ້ອຍວ່າ ຈັກໜ້ອຍພົບກັບລາວ.

1) 술을 마셔요.
지훈 씨가 ______________.

2) 같이 저녁을 먹어요.
지훈 씨가 ______________.

3) 

지훈 씨가 ______________.

4) 2차로 노래방에 가요.
지훈 씨가 ______________.

**정답** 1) 술을 마시자고 해요 2) 같이 저녁을 먹자고 해요 3) 다음 주에 회식을 하자고 해요 4) 2차로 노래방에 가자고 해요



### 유용한 표현 ສຳນວນທີ່ສຳຄັນ

바람 좀 쐬고 올게요. ຂ້ອຍຈະອອກໄປຕາກອາກາດຢູ່ຂ້າງນອກ.

가: 어디 가요? ໄປໃສບໍ?
나: **바람 좀 쐬고 올게요.** 머리가 아파서요. ຮູ້ສຶກເຈັບຫົວ ຊິອອກໄປຕາກອາກາດຢູ່ຂ້າງນອກ.

##  대화 2 ບົດສົນທະນາ 2

Track 122



ຫົວໜ້າໂຮງງານ ກຳລັງນຳສະເໜີ ບັນດາພະນັກງານໃໝ່. ກ່ອນອື່ນ ຈົ່ງຟັງບົດສົນທະນາ ກ່ອນສອງຄັ້ງ ແລ້ວເວົ້າຕາມ.

공장장 자, 여기 좀 잠깐 보세요. 소개할 사람이 있는데, 타타 씨예요. 다음 달부터 같이 일하게 됐어요.
ຈົ່ງມາເບິ່ງທາງນີ້ກ່ອນທຸກຄົນ. ຈະມີຄົນແນະນຳມາໃຫ້ຮູ້ຈັກ. ລາວຊື່ວ່າ ຕ້າຕ້າ. ເດືອນໜ້າເປັນຕົ້ນໄປ ຈະເຮັດວຽກຮ່ວມ ກັບພວກເຮົາ.

타 타 안녕하세요. 타타 이스모노입니다. 타타라고 불러 주세요.
ສະບາຍດີ. ຂ້ອຍແມ່ນ ຕ້າຕ້າ ອິສີໂມໂນ. ຈົ່ງເອີ້ນ ຕ້າຕ້າກໍໄດ້.

지 훈 타타 씨, 환영합니다. 공장장님, 새 식구도 생기고, 요즘 날씨도 좋은데 단합 대회라도 한번 하는 게 어떨까요?
ຍິນດີຕ້ອນຮັບ ຕ້າຕ້າ. ໃນເມື່ອພວກເຮົາຮັບສະມາຊິກໃໝ່ ແລະ ປັດຈຸບັນ ອາກາດກໍດີ ພວກເຮົາເຕົ້າລວມກັນ ເປັນແນວໃດ? ຫົວ ໜ້າ.

공장장 그럴까요? 좋아요. 다른 분들은 어떠세요?
ເອົາແນວນັ້ນບໍ? ດີໆ. ຄົນອື່ນໆເດ ຄິດແນວໃດ?

모 두 좋습니다.
ດີຄືກັນ.

공장장 그럼, 다음 주에 일 끝나면 오랜만에 한번 뭉칩시다.
ສະນັ້ນ ອາທິດໜ້າ ຖ້າເຮັດວຽກແລ້ວ ກໍລວມກັນເທື່ອໜຶ່ງ.

> **-는 게 어떨까요?**
> ກ່ຽວກັບ.....ເປັນແນວໃດບໍ?
> ແມ່ນໃນກໍລະນີ ທີ່ເປັນການຂໍຄຳແນະນຳຈາກຄົນອື່ນ.
> • 주말에 날씨가 좋으면 가까운 곳으로 여행을 가는 게 어떨까요?
> ໃນທ້າຍອາທິດຖ້າຫາກອາ ກາດດີ ພວກເຮົາໄປທ່ຽວ ແຖວໃກ້ໆນີ້ ເປັນແນວໃດບໍ?

> **생기다** ປະກົດຂຶ້ນ, ເກີດຂຶ້ນໃໝ່
> ໝາຍເຖິງສິ່ງ ທີ່ເກີດຂຶ້ນໃໝ່.
> • 회사 앞에 치킨집이 새로 생겼어요.
> ຮ້ານປີ້ງໄກ່ ຫາກໍສ້າງຂຶ້ນໃໝ່ ຢູ່ໜ້າບໍລິສັດ.

ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 공장장이 소개하는 사람은 누구예요? ຜູ້ທີ່ຫົວໜ້າໂຮງງານ ແນະນຳນັ້ນ ແມ່ນໃຜ?
2. 언제 단합 대회를 해요? ເມື່ອໃດ ທີ່ຈະເຕົ້າລວມໜ່ວຍງານກັນ?

정답 1. 다음 달부터 같이 일하게 될 새 직원이에요. 2. 다음 주에 일이 끝나면 해요.

### Tip -아/어 달라고 하다, -아/어 주라고 하다

동사 '주다'는 목적어를 받는 대상에 따라 간접화법에서 사용되는 동사가 달라진다. 목적어를 받는 대상이 화자 자신인 경우 '-아/어 달라고 하다'를 사용한다.

ຄຳກຳມະ '주다' ແມ່ນການໃຫ້ ໂດຍອີງຕາມຈຸດປະສົງຂອງ ປະທານຂອງປະໂຫຍກ ໂດຍໃຊ້ປ່ຽນຄຳກຳມະ ໃນປະໂຫຍກ ໂດຍທາງອ້ອມ. ໃນກໍລະນີຂອງ '-아/어 달라고 하다' ແມ່ນປະທານ ຂອງປະໂຫຍກກະທຳ ໂດຍອີງຈຸດປະສົງ ຂອງຕົວກຳ ປະໂຫຍກ.

1) 영수: 점심 좀 사주세요. ຈົ່ງຊື້ເຂົ້າສວຍ ມາໃຫ້ແດ່.
 민수: 뭐라고 했어요? ເຈົ້າເວົ້າຫຍັງບໍ?
 영수: 점심 좀 사달라고 했어요. ເວົ້າວ່າ ຊື້ເຂົ້າສວຍມາໃຫ້ແດ່.
2) 수지: 사장님이 이거 민수 씨에게 가져다주라고 하셨어요. ຫົວໜ້າເວົ້າວ່າ ໃຫ້ນຳເອົາອັນນີ້ມາໃຫ້ ມິນຊຸ.
 민수: 네, 고마워요. ເຈົ້າ, ຂອບໃຈເດີ.



## 어휘 2 ຄຳສັບ 2 — 직장에서의 모임 ກອງປະຊຸມຫ້ອງການ

ຢູ່ບ່ອນເຮັດວຽກ ມີກອງປະຊຸມອັນໃດແດ່? ລອງໄປຮຽນຮູ້ກ່ຽວກັບ ກອງປະຊຸມຫ້ອງການ ແລະ ຄຳສັບທີ່ກ່ຽວຂ້ອງເບິ່ງບໍ?




환영하다
ຍິນດີຕ້ອນຮັບ, ຕ້ອນຮັບ




환송하다
ລາກ່ອນ, ບອກລາ




축하하다
ສະແດງຄວາມຍິນດີ



친해지다
ໃກ້ສິດ, ເປັນໝິດ




단합대회
ການເຕົ້າລວມ, ການຮ່ວມຊຸມນຸມ



등반 대회
ງານກິດຈະກຳໄຕ່ພູ




야유회
ກິນເຂົ້າປ່າ




체육대회
ງານກິດຈະກຳກິລາ

- 신입사원을 **환영하는** 파티가 있어요. ມີງານລ້ຽງ ຕ້ອນຮັບພະນັກງານໃໝ່.
- 카림 씨를 **환송하려고** 공항에 갔어요. ໄປສະໜາມບິນ ເພື່ອອຳລາ ຄາຣີມ.
- 김 부장님, 승진을 **축하합니다**. ຫົວໜ້າພະແນກ ຄິມ, ຂໍສະແດງຄວາມຍິນດີນຳ ທີ່ໄດ້ເລື່ອນຊັ້ນ.
- 우리는 회식 자리에서 **친해지게** 되었어요. ພວກເຮົາ ສະໜິດກັນຕັ້ງແຕ່ ງານລ້ຽງຂອງບໍລິສັດ.



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 대화를 완성하세요. ຈົ່ງເບິ່ງຮູບພາບ ແລ້ວເຮັດໃຫ້ບົດສົນທະນາຄົບຖ້ວນ.

1)



가: 리한 씨, 승진 ______________.
ຣີຮັນ ສະແດງຄວາມຍິນດີນຳ ທີ່ໄດ້ເລື່ອນຕຳແໜ່ງ.
나: 네, 감사합니다. ເຈົ້າ, ຂອບໃຈເດີ.

2)



가: 오늘 저녁에 회식이 있어요? ມື້ນີ້ ຕອນແລງ ມີງານລ້ຽງຫ້ອງການບໍ?
나: 네, 새로 온 리한 씨를 ______________ 자리예요.
ເຈົ້າ, ເປັນງານລ້ຽງຕ້ອນຮັບ ຣີຮັນ ທີ່ມາໃໝ່.

3)

가: 어제 단합 대회 재미있었어요?
ມື້ວານ ງານກິດຈະກຳຊຸມນຸມ ມ່ວນບໍ?
나: 네, 회사 사람들하고 회사가 아닌 곳에서 만나니까 더 __________ 것 같아요.
ເຈົ້າ, ເປັນການພົບປະກັນ ລະຫວ່າງ ຄົນພາຍໃນບໍລິສັດ ແລະ ນອກບໍລິສັດອາດ ເຮັດໃຫ້ພວກເຮົາສະໜິດກັນ.

정답 1) 축하해요 2) 환영하는 3) 친해진



## 문법 2 ໄວຍາກອນ 2　-(으)라고 하다

G39-2

'-(으)라고 하다' ມັນໃຊ້ໃນເວລາທີ່ເອົາຄຳເວົ້າຂອງຜູ້ອື່ນມາເວົ້າອີກເທື່ອໜຶ່ງ. ໃນກໍລະນີເປັນປະໂຫຍກຄຳສັ່ງແມ່ນໃຊ້ '-(으)라고 하다'.

| 자음(ພະຍັນຊະນະ) → **-으라고 하다** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-라고 하다** |
|---|---|
| 읽다 → 읽**으라고 한다** | 사다 → 사**라고 한다**<br>만들다 → 만들**라고 한다** |

- 가: 공장장님이 뭐라고 하세요? ຫົວໜ້າໂຮງງານ ລາວເວົ້າຫຍັງ?
  나: 오늘 모두 회식에 **참석하라고 하세요**. ລາວບອກວ່າ ມື້ນີ້ໃຫ້ເຂົ້າຮ່ວມງານລ້ຽງບໍລິສັດໝົດທຸກຄົນເດີ.
- 가: 사장님께서 아직 안 오셨네요. ທ່ານປະທານຍັງບໍ່ທັນມາເທື່ອ.
  나: 네, 조금 늦으실 것 같아요. 우리 먼저 **먹으라고 하세요**.
  ແມ່ນແລ້ວ. ຄືຊິມາຊ້າໜ້ອຍໜຶ່ງ. ລາວບອກວ່າ ໃຫ້ກິນກ່ອນໂລດ.
- 가: 어렵지 않았어요? ບໍ່ຍາກບໍ?
  나: 조금 어려워서 한국인 친구한테 **도와 달라고 했어요**. ຍາກໜ້ອຍໜຶ່ງ ກໍເລີຍຫາໃຫ້ໝູ່ຄົນເກົາຫຼີຊ່ວຍ.



ເຂົ້າໃຈການໃຊ້ '-(으)라고 하다' ແລ້ວບໍ? ຈົ່ງປ່ຽນປະໂຫຍກຕໍ່ໄປນີ້ ເປັນປະໂຫຍກທາງອ້ອມຄືດັ່ງຕົວຢ່າງ.

2. '-(으)라고 하다'를 사용해서 〈보기〉처럼 문장을 완성하세요.
ຈົ່ງເຮັດໃຫ້ປະໂຫຍກສົມບູນ ຄືດັ່ງຕົວຢ່າງ ໂດຍການໃຊ້ '-(으)라고 하다'.

보기




지훈 씨가 이따 전화하라고 했어요.
ຈີຮຸນ ໄດ້ເວົ້າວ່າ ຈັກໜ້ອຍຈະໂທລະສັບຫາ.

1) 먼저 가세요.
지훈 씨가 ________________.

2) 늦지 마세요.
지훈 씨가 ________________.

3)



두꺼운 옷을 입으세요.
지훈 씨가 ________________.

4) 여기에 담으세요.
지훈 씨가 ________________.

정답 1) 먼저 가라고 해요 2) 늦지 말라고 해요 3) 두꺼운 옷을 입으라고 해요 4) 여기에 담으라고 해요



### 유용한 표현 ສຳນວນທີ່ສຳຄັນ

손 좀 봐야 할 것 같아요. ຄຶດວ່າ ຈະຕ້ອງໄດ້ແປງ.

가: 에어컨을 켜도 별로 시원하지 않네요. ເຖິງແມ່ນວ່າ ເປີດແອແລ້ວ ກໍຍັງບໍ່ເຢັນປານໃດເລີຍ.
나: 네, **손을 좀 봐야 할 것 같아요.** ແມ່ນແລ້ວ, ຄຶດວ່າ ຈະຕ້ອງໄດ້ແປງ.



## 활동 ກິດຈະກຳ

회식을 알리는 글입니다. 잘 읽고 질문에 답하세요.
ເປັນບົດເລື່ອງກ່ຽວກັບ ການແຈ້ງງານລ້ຽງຫ້ອງການ. ຈົ່ງຕັ້ງໃຈອ່ານ ແລ້ວຕອບຄຳຖາມ.

〈한국 상사 회식 안내〉

ການແຈ້ງກ່ຽວກັບ ງານລ້ຽງຂອງປະທານບໍລິສັດເກົາຫຼີ

김민수 씨 승진 축하 겸 단합대회입니다.
한 사람도 빠지지 말고 참석해 주세요.

ເປັນງານໂຮມຊຸມນຸມ ເພື່ອສະແດງຄວາມຍິນດີກັບ ທ່ານ ຄິມມິນຊຸ ທີ່ໄດ້ຮັບການເລື່ອນຕຳແໜ່ງ. ຂໍໃຫ້ເຂົ້າຮ່ວມໝົດທຸກຄົນ ຈົ່ງຢ່າມີໃຜຂາດ.

장소: 한국 식당
ສະຖານທີ່: ຮ້ານອາຫານເກົາຫຼີ
시간: 3월 25일 (목) 오후 6시
ເວລາ: ວັນທີ 25 ເດືອນ 3 (ວັນພະຫັດ) ຕອນແລງເວລາ 6 ໂມງ.
전화번호: 02-400-5000
ເບີໂທລະສັບ: 02-400-5000

1. 동료에게 회식을 안내하는 문자를 고르세요.
ຈົ່ງເລືອກເອົາຂໍ້ຄວາມ ເພື່ອສົ່ງຂ່າວຫາ ເພື່ອນຮ່ວມງານກ່ຽວກັບ ງານລ້ຽງຫ້ອງການ.

① 10:25 OnLine
민수 씨, 이따 한잔 하지 않을래요? 6시에 한국 식당 앞에서 만나요.

② 10:25 OnLine
민수 씨, 저는 오늘 저녁에 회식이 있어서 생일 파티에 못 가요. 수루 씨에게 생일 축하한다고 전해주세요.

③ 10:25 OnLine
오늘 저녁에 회식이 있어요. 한국 식당에서 6시에 만나요. 꼭 참석하세요.

④ 10:25 OnLine
민수 씨, 승진 축하해요. 언제 술 한잔해요. 승진 턱 내세요.

정답 1. ③

# 한국의 회식 문화

ວັດທະນາທຳ ງານລ້ຽງຫ້ອງການຂອງເກົາຫຼີ



## 회식 ງານລ້ຽງຫ້ອງການ

한국의 회식 문화는 단순히 동료들과 함께 술과 음식을 즐기는 것을 넘어 직장생활의 연장선상으로 인식되는 특별한 자리입니다.

ວັດທະນາທຳງານ ລ້ຽງຫ້ອງການ ຂອງເກົາຫຼີ ບໍ່ແມ່ນເປັນພຽງແຕ່ງານລ້ຽງ ກິນເຂົ້າ ແລະ ດື່ມເຫຼົ້າກັບບັນດາເພື່ອນຮ່ວມງານເທົ່ານັ້ນ.

회식은 한국 특유의 조직 문화로, 회사 조직원들의 관계에 긍정적인 영향을 끼치는 요소로 여겨지고 있습니다.

ງານລ້ຽງຫ້ອງການ ເປັນເອກະລັກພິເສດ ທາງວັດທະນາທຳ ຂອງການເຮັດວຽກ ແລະ ມັນຍັງເປັນການສ້າງໂອກາດ ໃຫ້ສາຍພົວພັນລະຫວ່າງພະນັກງານດີຂຶ້ນ ແລະ ສະໜິດສະໜົມຫຼາຍຂຶ້ນ.

## 술자리 예절 ມາລະຍາດໃນການດື່ມເຫຼົ້າ

회식에 가면 보통 식사만 하는 것이 아니라 술자리도 마련됩니다. 마시는 술의 종류는 보통 소주, 맥주 혹은 한국 고유의 술인 막걸리입니다. 종교적인 문제로 술을 마시지 않는다면 이를 미리 사람들에게 알려 양해를 구하는 것이 좋습니다. 혹시 술을 마시지 않는데 잔에 받았을 경우, 그냥 내려놓지 말고 가볍게 입에 댄 후 테이블에 내려놓으면 됩니다.

ຖ້າຫາກເຈົ້າເຂົ້າຮ່ວມ ງານລ້ຽງຫ້ອງການ ປົກກະຕິແລ້ວ ຈະບໍ່ມີພຽງແຕ່ກິນອາຫານເທົ່ານັ້ນ ຍັງຈະມີການດື່ມເຫຼົ້ານຳ. ປົກກະຕິເຫຼົ້າທີ່ດື່ມຈະປະກອບມີ ເຫຼົ້າໂຊຈູ, ເບຍ ແລະ ເຫຼົ້າໝັກໂຄລີ. ຖ້າຫາກຄົນໃດໜຶ່ງ ທີ່ບໍ່ສາມາດດື່ມເຫຼົ້າໄດ້ ດ້ວຍເຫດຜົນທາງສາສະໜາ ແມ່ນຕ້ອງໄດ້ແຈ້ງທຸກຄົນກ່ອນໜ້ານັ້ນ ແມ່ນເປັນການດີ. ບາງຄັ້ງ ບໍ່ສາມາດດື່ມເຫຼົ້າໄດ້ ແຕ່ກໍລະນີທີ່ໄດ້ຮັບຈອກເຫຼົ້າ ກໍຂໍແນະນຳໃຫ້ຖືຈອກຕຳຈອກພໍໃຫ້ຖືກປາກແລ້ວຈຶ່ງຄ່ອຍວາງຈອກລົງກໍໄດ້.

## 술을 받거나 따를 때 다음과 같이 하세요.

ຈົ່ງພ້ອມກັນປະຕິບັດ ໃນເມື່ອເວລາຮັບຈອກເຫຼົ້າ ແລະ ເຢັ້ນເຫຼົ້າ.

상사에게 술을 따를 때

ເມື່ອເຢັ້ນເຫຼົ້າ ໃຫ້ກັບຜູ້ຕຳແໜ່ງສູງ ຫຼື ອາວຸໂສກວ່າ



두 손으로 따릅니다.

ໃຊ້ສອງມືເຢັ້ນ.

상사에게 술을 받을 때

ເມື່ອຮັບການເຢັ້ນເຫຼົ້າ ຈາກຜູ້ຕຳແໜ່ງສູງ ຫຼື ອາວຸໂສກວ່າ



두 손으로 받습니다.

ໃຊ້ສອງມື ຮັບການເຢັ້ນເຫຼົ້າ.

상사 앞에서 술을 마실 때

ເມື່ອດື່ມເຫຼົ້າຢູ່ຕໍ່ໜ້າ ຜູ້ທີ່ຕຳແໜ່ງສູງ ຫຼື ອາວຸໂສກວ່າ



고개를 상사 반대쪽으로 돌립니다.

ແມ່ນຕ້ອງຫຼຽວໄປເບື້ອງກົງກັນຂ້າມກັບຜູ້ທີ່ມີຕຳແໜ່ງສູງ ຫຼື ອາວຸດໂສກວ່າ.



## EPS-TOPIK 듣기 ພາກຟັງ EPS-TOPIK



ແຕ່ຂໍ້ 1 ຫາ 2 ແມ່ນເປັນການເບິ່ງຮູບພາບແລ້ວ ເລືອກເອົາຄໍາຕອບ ທີ່ເໝາະສົມກັບຄໍາຖາມ. ກ່ອນທີ່ຈະຟັງບົດສົນທະນາ ຈົ່ງທໍາຄວາມເຂົ້າໃຈກ່ຽວກັບຄໍາຖາມ ແລະ ຮູບເສຍກ່ອນ.

[1~2] 다음 그림을 보고 알맞은 대답을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄໍາຕອບທີ່ເໝາະສົມ.






1. 오늘 뭐 해요? ມື້ນີ້ ເຮັດຫຍັງ?

① ② ③ ④



2. 이 사람은 지금 무엇을 하고 있습니까?
ບຸກຄົນດັ່ງກ່າວນີ້ ດຽວນີ້ກໍາລັງເຮັດຫຍັງ?

① ② ③ ④

ຂໍ້ 3 ແລະ 4 ແມ່ນເປັນການເລືອກເອົາສໍານວນ ທີ່ເໝາະສົມເຊື່ອມຕໍ່ໃສ່ກັນ. ສໍາລັບ ຂໍ້ 5 ແມ່ນເປັນການຟັງບົດສົນທະນາ ແລ້ວເລືອກເອົາຮູບພາບ ທີ່ເໝາະສົມກັບບົດສົນທະນານັ້ນ. ກ່ອນການຟັງບົດສົນທະນາ. ຈົ່ງກວດກາຮູບພາບ ແລະ ເນື້ອໃນຂອງຄໍາຕອບໃຫ້ດີກ່ອນ.

[3~4] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄໍາຖາມ ແລ້ວເລືອກຄໍາຕອບທີ່ເໝາະສົມ.

3. ① 아니요, 모두 참석하라고 했어요. ② 네, 회식을 할 거라고 했어요.
③ 아니요, 이제 2차에 간다고 했어요. ④ 네, 민수 씨가 한턱낸다고 했어요.

4. ① 네, 그래서 오늘 환송회를 할 거예요. ② 네, 그래서 오늘 체육대회를 해요.
③ 네, 그래서 오늘 환영 파티를 할 거예요. ④ 네, 그래서 오늘 생일 파티를 해요.

5. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄໍາຕອບ ທີ່ເໝາະສົມ ສໍາລັບແຕ່ລະຄໍາຖາມ.

두 사람은 무엇에 대해서 이야기하고 있습니까? ທັງສອງຄົນນີ້ ແມ່ນກໍາລັງສົນທະນາກັນ ກ່ຽວກັບເລື່ອງຫຍັງ?

①



②



③



④




### 듣기 대본 ເນື້ອໃນບົດຟັງ

1. ① 남: 등산을 해요. ໄຕ່ພູ.
   ② 남: 2차에 가요. ໄປຕໍ່ຮອບສອງ.
   ③ 남: 회식을 해요. ເຮັດງານລ້ຽງຫ້ອງການ.
   ④ 남: 수영을 해요. ລອຍນໍ້າ.
2. ① 여: 술을 마시고 있습니다. ກຳລັງດື່ມເຫຼົ້າ.
   ② 여: 2차에 가고 있습니다. ກຳລັງໄປຕໍ່ຮອບສອງ.
   ③ 여: 건배를 하고 있습니다. ກຳລັງຕຳຈອກ.
   ④ 여: 노래를 부르고 있습니다. ກຳລັງຮ້ອງເພງ.
3. 남: 회식이 끝난 거예요? ງານລ້ຽງຫ້ອງການ ສິ້ນສຸດແລ້ວບໍ?
4. 여: 오늘 새로운 직원이 왔다고 들었어요. ມື້ນີ້ໄດ້ຍິນວ່າ ມີພະນັກງານໃໝ່ມາ.
5. 남: 어제 단합대회는 어땠어요? ມື້ວານ ການເຕົ້າໂຮມເປັນແນວໃດ?
   여: 좋았어요. 동료들하고 같이 얘기를 많이 했어요. ດີ. ໄດ້ມີໂອກາດຫຼາຍລົມກັບ ບັນດາເພື່ອນຮ່ວມງານ.
   남: 동료들하고 많이 친해졌을 것 같아요. ຄືຊິໄດ້ໃກ້ສິດ ກັບບັນດາເພື່ອນຮ່ວມຫຼາຍເນາະ.

정답 1. ① 2. ③ 3. ③ 4. ③ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ  L-39

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   남자는 내일 무엇을 하려고 합니까? ຜູ້ຊາຍຄົນນັ້ນ ມື້ອື່ນ ມີແຜນຈະເຮັດຫຍັງບໍ?

   ① 한턱내려고 합니다. ② 야근을 하려고 합니다.
   ③ 작업을 끝내려고 합니다. ④ 동료를 축하해 주려고 합니다.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 바트 씨, 대리로 승진한 거 축하해요. ບັດ ຂໍສະແດງຄວາມຍິນດີນຳ ທີ່ໄດ້ເລື່ອນຕຳແໜ່ງເປັນຮອງຫົວໜ້າ.
   남: 고마워요. 이게 모두 여러분이 도와준 덕분이에요. 내일 제가 한턱낼 테니까 다 같이 맛있는 거 먹으러 가요.
   ຂອບໃຈ. ອັນນີ້ ກໍແມ່ນຍ້ອນການຊ່ວຍເຫຼືອຂອງໝົດທຸກຄົນ. ມື້ອື່ນ ຈະລ້ຽງໝົດທຸກຄົນ ຈຶ່ງໄປກິນອາຫານແນວແຊບໆ ນຳກັນ.
   여: 와, 정말요? 내일은 야근이 없으니까 작업 끝나면 바로 퇴근할 수 있어요.
   ວາ! ແມ່ນແທ້ບໍ? ເນື່ອງຈາກມື້ອື່ນ ບໍ່ໄດ້ເຮັດວຽກພາກກາງຄືນ ຫຼັງຈາກວຽກສຳເລັດແລ້ວ ສາມາດເລີກວຽກໄດ້ເລີຍ.

정답 1. ①



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ແມ່ນເບິ່ງຮູບ ແລ້ວໃຫ້ຄວາມໝາຍວ່າແມ່ນຫຍັງ. ຈົ່ງຄິດທົບທວນບັນດາຄຳສັບ ທີ່ຮຽນມາ ເພື່ອແກ້ໄຂບັນຫາເຫຼົ່ານີ້.

[1~2] 다음 그림을 보고 맞는 문장을 고르십시오.

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ.

1. 

① 회식입니다.
② 등산입니다.
③ 소풍입니다.
④ 체육대회입니다.

2. 



① 환영하는 자리예요.
② 환송하는 자리예요.
③ 축하하는 자리예요.
④ 친해지는 자리예요.



ສຳລັບຂໍ້ 3 ແລະ 4 ເປັນການເລືອກເອົາຄຳສັບທີ່ຖືກຕ້ອງ. ສຳລັບຂໍ້ 5 ແມ່ນເປັນການຊອກຫາຫົວຂໍ້ຂອງບົດເລື່ອງ. ຈົ່ງຄິດທົບທວນກ່ຽວກັບບັນດາຄຳສັບ ແລະ ໄວຍາກອນທີ່ຮຽນຜ່ານມາ ເພື່ອແກ້ໄຂບັນຫາເຫຼົ່ານີ້.

[3~4] 빈칸에 들어갈 가장 알맞은 것을 고르십시오.

ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

가: 오늘 회식을 한다고 해요? ໄດ້ຍິນວ່າ ມື້ນີ້ ເຮັດງານລ້ຽງຫ້ອງການບໍ?
나: 네, 한사람도 빠짐없이 ________ 했어요. ເຈົ້າ. ບໍ່ມີໃຜຂາດ, ໄດ້ເຂົ້າຮ່ວມໝົດທຸກຄົນ.

① 빠지라고 ② 마시라고 ③ 참석하라고 ④ 축하하라고

4.

가: 리한 씨가 이제 고향으로 돌아간다고 해요. ຣີຮັນ ຄືໄດ້ຍິນວ່າ ຫາກໍກັບມາແຕ່ບ້ານເກີດບໍ?
나: 그래요? 그럼 곧 ________ 파티를 해야겠네요. ແມ່ນບໍ? ສະນັ້ນ ຕ້ອງໄດ້ເຮັດງານລ້ຽງຕ້ອນຮັບໄດ່ນີ້.

① 생일 ② 승진 ③ 환송 ④ 환영

5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

보통 회식이라고 하면 삼겹살을 먹고, 술을 마시는 것을 생각하기 쉽습니다. 하지만 요즘은 술자리 대신 같이 공연을 관람하거나 운동을 하면서 단합을 도모하기도 합니다. 술이 없는 회식 문화가 더 많은 직원의 참여를 유도하고 있습니다.

ປົກກະຕິແລ້ວ ຖ້າຫາກໄດ້ຍິນວ່າ ຈະມີງານລ້ຽງຫ້ອງການແລ້ວ ຈະມີແນວຄິດວ່າ ຈະຕ້ອງກິນຊີ້ນໝູສາມຊັ້ນ ແລະ ດື່ມເຫຼົ້າ. ແຕ່ວ່າ ໃນປັດຈຸບັນນີ້ ແທນງານລ້ຽງ ກໍຍັງມີພ້ອມກັນໄປເບິ່ງການສະແດງ ຫຼື ອອກກຳລັງກາຍ. ພາຍຫຼັງອອກກຳລັງກາຍ ຫຼື ເບິ່ງການສະແດງແລ້ວ ກໍເຕົ້າໂຮມກັນ. ວັດທະນາທຳງານລ້ຽງ ທີ່ບໍ່ມີການດື່ມເຫຼົ້າ ແມ່ນຈະມີພະນັກງານ ສົນໃຈເຂົ້າຮ່ວມຫຼາຍກວ່າ.

글의 주제로 알맞은 것은 무엇입니까? ຫົວຂໍ້ທີ່ເໝາະສົມຂອງບົດເລື່ອງ ແມ່ນຫຍັງ?

① 회식 문화가 바뀌고 있습니다.
② 보통 회식에서는 술을 마십니다.
③ 회식에서 공연을 보기도 합니다.
④ 회식에 모든 직원이 참여해야 합니다.



1. ④ 2. ① 3. ③ 4. ③ 5. ①



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 우리 회사는 한 달에 한 번 ________을/를 합니다. 회사 동료들과 함께 밥을 먹으면서 친해질 수 있습니다.

ບໍລິສັດຂອງພວກເຮົາ ໃນເດືອນໜຶ່ງ ຈະໄດ້ມີງານລ້ຽງຫ້ອງການເທື່ອໜຶ່ງ. ໃນຂະນະທີ່ໄດ້ມີໂອກາດ ກິນເຂົ້າຮ່ວມກັບ ເພື່ອນຮ່ວມ ງານ ກໍສາມາດເຮັດໃຫ້ມີສາຍພົວພັນໃກ້ສິດຂຶ້ນ.

① 승진　　② 휴가
③ 구경　　④ 회식

2. 주말에 백화점에 ________ 갔습니다. 백화점에서 부모님께 드릴 선물도 사고 친구 결혼식 때 입을 옷도 샀습니다.

ໃນທ້າຍອາທິດ ໄດ້ໄປຈັບຈ່າຍຊື້ເຄື່ອງຂອງຢູ່ທີ່ຮ້ານຊັບພະສິນຄ້າ. ໄດ້ຊື້ຂອງຂວັນໃຫ້ກັບພໍ່ແມ່ ແລະ ເຄື່ອງນຸ່ງໃນເວລາໄປງານດອງໝູ່ ຢູ່ຮ້ານຊັບພະສິນຄ້ານີ້.

① 선물하러　　② 산책하러
③ 쇼핑하러　　④ 운동하러

3. 퇴근 후에 모임이 있다고 하면 보통 회식을 떠올립니다. 하지만 요즘은 회식 대신에 같이 공연을 ________ 운동을 하기도 합니다.

ຫຼັງຈາກເລີກວຽກ ຖ້າຫາກວ່າມີການໂຮມຊຸມນຸມແລ້ວ ປົກກະຕິກໍຈະຕໍ່ດ້ວຍງານລ້ຽງຫ້ອງການ. ແຕ່ວ່າ ໃນປັດຈຸບັນນີ້ ມີການເບິ່ງການສະແດງ ຫຼືວ່າ ອອກກຳລັງກາຍຮ່ວມກັນ ແທນທີ່ຈະມີງານລ້ຽງຫ້ອງການ.

① 보려고　　② 보거나
③ 알리려고　　④ 알리거나

정답 1. ④ 2. ③ 3. ②



### 발음 ການອອກສຽງ



P-18

**ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.**

ໃນພາສາເກົາຫຼີ ສອງພະຍັນຊະນະຊ້ອນກັນ ແມ່ນອອກສຽງໄດ້ໃນຫຼາຍສຽງ. ແຕ່ໃນກໍລະນີ ການອອກສຽງ ທາງດັງ ແລະ ສຽງສະຫຼຸດ ແມ່ນຈະບໍ່ມີການປ່ຽນແປງໃນການອອກສຽງ.

(1) 운동, 친구, 안개, 신부
(2) 감기, 침대, 금방, 냄비
(3) 강당, 공장, 공기, 당장
(4) 한국 친구가 많아요.
(5) 공장에서 일해요.
(6) 감기에 걸렸어요.



# 불쾌감을 느꼈다면 그건 성희롱이에요

## ຖ້າຫາກວ່າ ຮູ້ສຶກບໍ່ເພິ່ງພໍໃຈ ສະແດງວ່າ ແມ່ນການຄຸກຄາມທາງເພດ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການແນະນຳ ກ່ຽວກັບການປ້ອງກັນ ການລ່ວງລະເມີດທາງເພດ, ເຂົ້າຮ່ວມການເຝິກອົບຮົມ ປ້ອງກັນການກົດຂີ່ທາງເພດ |
| □ ໄວຍາກອນ | –냐고 하다, 간접화법의 축약형 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ການຄຸກຄາມທາງເພດ, ວິທີການປ້ອງກັນ ການຖືກຄຸກຄາມທາງເພດ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ຄວາມໝາຍ ຂອງການຖືກຄຸກຄາມທາງເພດ ແລະ ການລົງໂທດ |



## 대화 1 ບົດສົນທະນາ 1






ມິນອູ ກຳລັງໃຫ້ຄຳແນະນຳກ່ຽວກັບ ການປະພຶດຂອງ ຄານ ຢູ່. ທັງສອງຄົນກຳລັງລົມຫຍັງກັນ, ກ່ອນອື່ນ ຈົ່ງຟັງບົດສົນທະນາ ກ່ອນສອງຄັ້ງ ແລ້ວເວົ້າຕາມ.

민 우 칸, 아까 지은 씨 표정이 많이 안 좋더라.
ຄານ, ມື້ກີ້ ສີໜ້າຂອງ ຈີອຶນ ແມ່ນເບິ່ງບໍ່ດີເລີຍໃດ່ທັນ.

칸 그러게 말이야. 친하다고 생각해서 한 얘긴데 지은 씨가 화를 내서 나도 깜짝 놀랐어.
ຂ້ອຍກໍຄິດແບບນັ້ນແຫຼະ. ຍ້ອນຄິດວ່າສະໜິດກັນ ກໍເລີຍເວົ້າແບບນັ້ນໄປ ແຕ່ວ່າ ຈີອຶນ ກໍໃຈຮ້າຍ, ຂ້ອຍເອງກໍຕົກໃຈຄືກັນ.

민 우 그런데, 농담이라도 상대방이 불쾌감이나 수치심을 느꼈다면 성희롱이 될 수 있다고 들었어.
ເຖິງຢ່າງໃດກໍຕາມ, ຂ້ອຍໄດ້ຍິນມາວ່າ ເຖິງຈະແມ່ນການເວົ້າຫຼິ້ນກໍຕາມ, ແຕ່ຖ້າຫາກເຮັດໃຫ້ຝ່າຍກົງກັນຂ້າມຮູ້ສຶກ ບໍ່ເພິ່ງພໍໃຈ ຫຼື ຮູ້ສຶກອັບອາຍ ກໍສາມາດເປັນການຄຸກ ຄາມທາງເພດໄດ້ຄືກັນ.

칸 정말? 그런 의도는 아니었는데…….
ແມ່ນແທ້ບໍ? ແຕ່ວ່າຂ້ອຍບໍ່ໄດ້ເຈຕະນາແບບນັ້ນ....

민 우 나는 칸을 잘 아니까 괜찮지만 다른 사람들은 오해할 수 있어. 성적 농담은 아주 예민한 문제잖아.
ຍ້ອນຂ້ອຍຮູ້ຈັກ ຄານ ດີ ກໍເລີຍບໍ່ເປັນຫຍັງ, ແຕ່ສຳລັບຄົນອື່ນ ກໍອາດຈະເຂົ້າໃຈຜິດໄດ້. ການເວົ້າຕະຫຼົກ ໃນທາງລາມົກ ແມ່ນເປັນເລື່ອງ ທີ່ອ່ອນໄຫວ, ບໍ່ແມ່ນບໍ?

칸 앞으로는 정말 조심해야겠다.
ຕໍ່ໄປ ຂ້ອຍ ຕ້ອງລະວັງໃຫ້ຫຼາຍແລ້ວ.

> **그러게** ຂ້ອຍ ກໍຄິດແບບນັ້ນຄືກັນ
> ເປັນຄຳທີ່ໃຊ້ ໃນເວລາທີ່ສະແດງເຖິງການເຫັນດີ ເຫັນພ້ອມ ກັບຄຳເວົ້າຂອງຝ່າຍກົງກັນຂ້າມ.
> · 가: 이 음식 맛이 좀 이상해
> ອາຫານນີ້ ລົດຊາດແປກໆ.
> 나: 그러게. 날씨가 더워서 상한것 같아.
> ຂ້ອຍ ກໍຄິດແບບນັ້ນຄືກັນ. ເບິ່ງຄືວ່າມັນບູດ ຍ້ອນອາກາດຮ້ອນ.



> **–다면** ຖ້າຫາກວ່າ
> ເປັນຄຳເວົ້າທີ່ສະແດງເຖິງ ການຄາດເດົາ ຫຼື ການຄາດຄະເນ ສະຖານະການ ຫຼື ຄວາມຈິງໃດໜຶ່ງ.
> · 가: 내일 시험이 너무 걱정이에요.
> ຂ້ອຍ ກັງວົນນຳການເສັງມື້ອື່ນຫຼາຍ.
> 나: 열심히 공부했다면 좋은 결과가 있을 거예요.
> ຖ້າຫາກວ່າ ໄດ້ຕັ້ງໃຈຮຽນແລ້ວ, ຜົນກໍຈະອອກມາດີຢູ່ດອກ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 지은 씨는 왜 칸 씨에게 화를 냈어요? ເປັນຫຍັງ ຈີອຶນ ຈຶ່ງຮ້າຍ ຄານ?

정답 1. 칸 씨가 성적 농담을 했기 때문이에요.





## 어휘 1 ຄຳສັບ 1

## 성희롱 ການຄຸກຄາມທາງເພດ

ພວກເຮົາ ລອງມາເບິ່ງວ່າ ຄຳສັບທີ່ກ່ຽວກັບ ການຄຸກຄາມທາງເພດ ແມ່ນມີແນວໃດແດ່ບໍ?



| 불쾌감<br>ຄວາມຮູ້ສຶກ ບໍ່ເພິ່ງພໍໃຈ/ບໍ່ດີໃຈ | 수치심<br>ຄວາມຮູ້ສຶກ ອັບອາຍ | 거부감<br>ຄວາມຮູ້ສຶກ ປະຕິເສດ/ຄວາມຮູ້ສຶກບໍ່ມັກ | 성적 농담<br>ການເວົ້າຕະຫຼົກໃນທາງລາມົກ |
|---|---|---|---|
| 신체 접촉<br>ການຈັບເນື້ອ ຕ້ອງໂຕ | 음담패설<br>ການສະແດງຄວາມຄິດເຫັນແບບລາມົກ | 음란물<br>ສື່ລາມົກອະນາຈານ | 동영상<br>ວິດີໂອ |



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.



1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.



① •      • ㉠ 신체 접촉

② •      • ㉡ 음담패설

③ •      • ㉢ 음란물

정답 ①㉡ ②㉢ ③㉠

# 문법 1 ໄວຍາກອນ 1 -냐고 하다




ມັນໃຊ້ໃນເວລາທີ່ເອົາຄຳເວົ້າຂອງຜູ້ອື່ນມາເວົ້າອີກເທື່ອໜຶ່ງ. ໃນກໍລະນີເປັນປະໂຫຍກຄຳຖາມແມ່ນໃຊ້ '-냐고 하다'.

| 동사(ຄຳກຳມະ) | 형용사(ຄຳຄຸນນາມ) | 명사(ຄຳນາມ) |
|---|---|---|
| **-느냐고 하다** | 자음(ພະຍັນຊະນະ) → **-으냐고 하다**<br>모음(ສະຫຼະ) → **-냐고 하다** | 자음(ພະຍັນຊະນະ) → **이냐고 하다**<br>모음(ສະຫຼະ) → **냐고 하다** |
| 오다 → 오**느냐고 하다**<br>먹다 → 먹**느냐고 하다** | 좋다 → 좋**으냐고 하다**<br>바쁘다 → 바쁘**냐고 하다** | 학생 → 학생**이냐고 하다**<br>친구 → 친구**냐고 하다** |

- 리한 씨가 나한테 몇 시에 회사에 **오느냐고 했어요**. ລີຮັນໄດ້ຖາມຂ້ອຍວ່າ ຈະມາບໍລິສັດຈັກໂມງ?
- 민우 씨가 칸 씨에게 왜 기분이 **좋으냐고 했어요**. ມິນອູໄດ້ຖາມ ທ້າວ ຄັນວ່າ ເປັນຫຍັງ ຄືອາລົມດີແທ້?
- 가: 회식은 재미있었어요? ງານລ້ຽງບໍລິສັດມ່ວນບໍ?
  나: 네, 그런데 노이 씨 어디 **갔느냐고 하는** 사람들이 많았어요.
  ມ່ວນ, ແຕ່ວ່າ ຜູ້ໃດກໍຖາມວ່າ ນ້ອຍ(ໄດ້)ໄປໃສ?
- 가: 어제 회식 때 기분 나빴지요? ຕອນງານລ້ຽງບໍລິສັດມື້ວານນີ້, ເຈົ້າອາລົມບໍ່ດີບໍ?
  나: 네, 그 일을 친구에게 이야기했는데, 성희롱이 **아니냐고 하던데요**.
  ແມ່ນແລ້ວ, ຂ້ອຍອາລົມບໍ່ດີ. ຂ້ອຍເວົ້າເລື່ອງນັ້ນສູ່ລາວຟັງ, ລາວກໍ (ໄດ້) ຖາມຂ້ອຍວ່າ ບໍ່ແມ່ນເວົ້າເລື່ອງລາມົກບໍ?

ໃນພາສາເວົ້າແມ່ນມັກຈະໃຊ້ '-느냐고', '-냐고'.



ເຂົ້າໃຈການໃຊ້ '-냐고 하다' ແລ້ວບໍ? ສະນັ້ນ, ຈົ່ງປ່ຽນປະໂຫຍກໃຫ້ການເປັນປະໂຫຍກລາຍງານ ຄືດັ່ງຕົວຢ່າງ.

2. '-냐고 하다'를 사용해서 〈보기〉처럼 문장을 완성하세요.
ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ ໂດຍການໃຊ້ '-냐고 하다'.







상담센터에서 거부감이 들었냐고 물어봤어요.
ສູນໃຫ້ຄຳປຶກສາໄດ້ຖາມຂ້ອຍວ່າ ຂ້ອຍໄດ້ມີຄວາມຮູ້ສຶກບໍ່ມັກຫຍັງບໍ່.

1) 불쾌감을 느꼈어요?
상담센터에서 ______________.

2) 

상담센터에서 ______________.

3) 

상담센터에서 ______________.

4) 

상담센터에서 ______________.

정답 1) 불쾌감을 느꼈느냐고 물어봤어요 2) 음담패설을 자주 하느냐고 물어봤어요 3) 성적 농담을 했느냐고 물어봤어요 4) 사무실에서 음란물을 보느냐고 물어봤어요



## 대화 2 ບົດສົນທະນາ 2

Track 125



ຜູ້ບັນຍາຍກຳລັງເວົ້າກ່ຽວກັບ ການຄຸກຄາມທາງເພດ ແລະ ຄວາມຮຸນແຮງທາງເພດ ທີ່ເກີດຂຶ້ນຢູ່ໃນບ່ອນເຮັດວຽກ. ພວກເຂົາກຳລັງເວົ້າກ່ຽວກັບຫຍັງ, ກ່ອນອື່ນ ຈົ່ງຟັງບົດສົນ ທະນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

강연자 직장 내에는 발생하는 성희롱은 대부분 직장 동료를 가족처럼 대하는 태도에서 시작합니다. 이러한 관계 속에서 너무 편하게 이야기를 하거나 신체 접촉을 하게 되면, 이것이 성범죄로 이어지는 경우가 많죠. 그리고 상대방의 행동 때문에 불쾌한 감정이 생겼을 때는 이것을 분명하게 표현해야 합니다. 또한 성희롱이나 성폭력을 당했을 때는 사건을 정확하게 기록해 두고 증거를 확보하는 게 좋습니다. 우리 모두가 성범죄의 피해자도, 가해자도 될 수 있다는 사실, 반드시 기억하시기 바랍니다.

ຜູ້ບັນຍາຍ: ໂດຍສ່ວນຫຼາຍ ການຄຸກຄາມທາງເພດ ທີ່ເກີດຂຶ້ນຢູ່ໃນບ່ອນເຮັດວຽກ ແມ່ນເລີ່ມມາຈາກ ແນວຄວາມຄິດ ທີ່ວ່າເພື່ອນຮ່ວມງານ ແມ່ນຄືກັບຄອບຄົວ. ໃນການພົວພັນແບບນີ້ເຮັດໃຫ້ມີການເວົ້າຈາທີ່ເປັນກັນເອງ ຫຼື ມີການຈັບເນື້ອຕ້ອງໂຕທີ່ກາຍເປັນຄວາມຜິດຖານການລະເມີດທາງເພດ ໃນຫຼາຍກໍລະນີ ແລະ ໃນເວລາ ທີ່ ການປະພຶດຂອງຝ່າຍ ກົງກັນຂ້າມ ເຮັດໃຫ້ເກີດຄວາມບໍ່ເພິ່ງພໍໃຈ ແມ່ນຕ້ອງເວົ້າ ອອກມາໃຫ້ຊັດເຈນ. ນອກຈາກນີ້, ໃນເວລາທີ່ຖືກຄຸກ ຄາມທາງເພດ ແລະ ໄດ້ຮັບຄວາມຮຸນແຮງທາງເພດ, ຕ້ອງມີການບັນ ທຶກເຫດການໄວ້ຢ່າງແນ່ນອນ ແລະ ເກັບຫຼັກ ຖານໄວ້ແມ່ນຈະເປັນ ການດີ. ຂ້າພະເຈົ້າກໍຫວັງວ່າ ທຸກຄົນ ຈະຈື່ໄວ້ວ່າ ພວກເຮົາທຸກຄົນສາມາດເປັນທັງຜູ້ກະທຳ ແລະ ຜູ້ຖືກກະທຳ ໃນການລ່ວງລະເມີດທາງເພດໄດ້.

> **-거나** ຫຼື
> ແມ່ນສະແດງເຖິງການສາມາດ ທີ່ຈະເລືອກລະຫວ່າງ ສິ່ງທີ່ເວົ້າຢູ່ທາງໜ້າ ຫຼື ທາງຫຼັງໄດ້.
> - 주말에 시간이 있으면 책을 읽거나 영화를 봅니다.
>   ໃນວັນເສົາ-ອາທິດ, ຖ້າມີເວລາແມ່ນຂ້ອຍຈະອ່ານປຶ້ມ ຫຼື ເບິ່ງໜັງ.

> **-기 바라다** -ຫວັງວ່າ
> ໃຊ້ໃນເວລາ ທີ່ຄາດຫວັງວ່າສິ່ງ ໃດສິ່ງໜຶ່ງຈະເປັນໄປຕາມທີ່ຄິດ ຫຼື ຫວັງໄວ້.
> - 올해에는 꼭 취직하기를 바랍니다.
>   ປີນີ້ ຂ້ອຍຫວັງວ່າຂ້ອຍຈະໄດ້ເຮັດວຽກ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 강연자는 무엇에 대해 이야기하고 있어요? ຜູ້ບັນຍາຍແມ່ນກຳລັງເວົ້າກ່ຽວກັບຫຍັງ?
2. 성희롱이나 성폭력을 당했을 때는 어떻게 하면 좋을까요?
   ໃນເວລາທີ່ຖືກ ຄຸກຄາມທາງເພດ ແລະ ໄດ້ຮັບຄວາມຮຸນແຮງທາງເພດ ແມ່ນຄວນເຮັດແນວໃດ?

정답 1. 직장 내에서 발생하는 성범죄에 대해 이야기하고 있어요. 2. 사건을 정확하게 기록해 두고 증거를 확보하는 게 좋아요.



## 어휘 2 ຄຳສັບ 2 — 성희롱 대처 방법 ວິທີການປ້ອງກັນ ການຖືກຄຸກຄາມທາງເພດ



ເຮົາລອງມາເບິ່ງວ່າສຳນວນ ທີ່ກ່ຽວກັບວິທີການປ້ອງກັນ ການຖືກຄຸກຄາມທາງເພດ ມີຫຍັງແດ່?



성범죄
ການລະເມີດທາງເພດ



가해자
ຜູ້ກະທຳ/ໂຈດ



피해자
ຜູ້ຖືກກະທຳ/ຈຳເລີຍ



증거
ຫຼັກຖານ




증인
ພະຍານ




의사를 표현하다
ການສະແດງ ເຈດຈຳນົງ ຫຼື ທັດສະນະຄະຕິ




신고하다
ລາຍງານ, ແຈ້ງ




강요하다
ບັງຄັບ




요구하다
ຮ້ອງຂໍ/ຮຽກຮ້ອງ




불이익을 주다
ເຮັດໃຫ້ເສຍປະໂຫຍດ

- 원하지 않는 일에는 분명하게 **의사를 표현하세요**.
  ກະລຸນາສະແດງເຈດຈຳນົງ ຫຼື ທັດສະນະຄະຕິ ຢ່າງຊັດເຈນ ຕໍ່ສິ່ງທີ່ຕົນບໍ່ມັກ.
- 집에 도둑이 들어서 112에 **신고했어요**.
  ມີໂຈນເຂົ້າບ້ານ, ຂ້ອຍເລີຍແຈ້ງໄປທີ່ເບີ 112.
- 놀기만 좋아하는 아이에게 공부하라고 **강요해도** 소용없어요.
  ການບັງຄັບໃຫ້ເດັກ ທີ່ມັກແຕ່ການຫຼິ້ນ ໃຫ້ຮຽນໜັງສື ແມ່ນບໍ່ມີຄວາມໝາຍຫຍັງ.
- 일하다가 사고를 당하면 회사에 보상금을 **요구할** 수 있어요.
  ຖ້າຫາກເກີດອຸບັດຕິເຫດ ໃນຂະນະເຮັດວຽກ ແມ່ນສາມາດຮຽກຮ້ອງຄ່າເສຍຫາຍ ຈາກບໍລິສັດໄດ້.
- 승진할 때 외국인이라고 해서 **불이익을 주면** 안 돼요.
  ໃນເວລາ ທີ່ເລື່ອນຕຳແໜ່ງ ເຖິງວ່າເປັນຄົນຕ່າງດ້າວ ກໍຕ້ອງໄດ້ຮັບຜົນປະໂຫຍດຄືກັນ.



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.

① 


② 


③ 


㉠ 강요하다　　㉡ 신고하다　　㉢ 의사를 표현하다

정답 ①㉢ ②㉡ ③㉠

## 문법 2 ໄວຍາກອນ 2 간접화법의 축약형




ຮູບແບບການຫຍໍ້ປະໂຫຍກອ້ອມ, ປະໂຫຍກອ້ອມແມ່ນປະໂຫຍກທີ່ຜູ້ເວົ້າເອົາຄຳເວົ້າຂອງຜູ້ອື່ນມາເວົ້າອີກເທື່ອໜຶ່ງໃນຮູບແບບປະໂຫຍກຕ່າງໆ ຄື '-다고 하다', '-(으)라고 하다', '-자고 하다', '-냐고 하다' ເຊິ່ງຄຳຫຍໍ້ຂອງແຕ່ລະຮູບປະໂຫຍກແມ່ນ '-대요', '-(으)래요', '-재요', '-냬요'.

- 가: 오늘 저녁에 모두 다 **참석한대요**? ມື້ນີ້ຕອນແລງ ທຸກຄົນບອກວ່າ ຈະເຂົ້າຮ່ວມໝົດບໍ?
  나: 김 과장님은 일이 있어서 못 **오신대요**. ຫົວໜ້າຄິມເວົ້າວ່າ ມີວຽກຊິມາບໍ່ໄດ້.
- 가: 수루 씨가 **뭐래요**? ຊູລູເວົ້າວ່າແນວໃດ?
  나: 상담센터에 가서 상담을 받을 **거래요**. ລາວວ່າຈະໄປປຶກສາກັບສູນບໍລິການໃຫ້ຄຳປຶກສາ.
- 가: 과장님께서 뭐라고 말씀하셨어요? ຫົວໜ້າຄິມເວົ້າວ່າແນວໃດ?
  나: 이번 주말에 단합 대회를 **하재요**. ເພິ່ນຊວນເຂົ້າຮ່ວມກອງປະຊຸມໃຫຍ່ໃນທ້າຍອາທິດນີ້.
- 가: 상담센터에서 뭐라고 해요? ສູນບໍລິການໃຫ້ຄຳປຶກສາເພິ່ນວ່າແນວໃດ?
  나: 증거나 증인이 **있냬요**. ເພິ່ນຖາມວ່າ ມີຫຼັກຖານພະຍານບໍ?



ເຂົ້າໃຈການໃຊ້ ຮູບແບບຫຍໍ້ຂອງປະໂຫຍກທາງອ້ອມ(ປະໂຫຍກລາຍງານ) ແລ້ວບໍ? ສະນັ້ນ, ຈົ່ງເຮັດໃຫ້ປະໂຫຍກຄົບຖ້ວນຄືດັ່ງຕົວຢ່າງ.

2. 간접화법 축약형을 사용해서 〈보기〉처럼 문장을 완성하세요.
ຈົ່ງນຳໃຊ້ ຮູບແບບຫຍໍ້ຂອງປະໂຫຍກລາຍງານ ແລ້ວເຮັດໃຫ້ປະໂຫຍກຄົບຖ້ວນຄືດັ່ງຕົວຢ່າງ.

보기




지훈 씨가 <u>오늘 회식이 있대요.</u>
ເຈຮຸນ ເວົ້າວ່າ ມື້ນີ້ ຈະມີງານລ້ຽງຫ້ອງການ.

1) 내일 휴가를 쓸 거예요.
지훈 씨가 ________________.

2) 같이 저녁을 먹읍시다.
지훈 씨가 ________________.

3) 내일 좀 일찍 나오세요.
지훈 씨가 ________________.

4) 어디서 한국어를 배웠어요?
지훈 씨가 ________________.

정답 1) 내일 휴가를 쓸 거래요 2) 같이 저녁을 먹재요
3) 내일 좀 일찍 나오래요 4) 어디에서 한국어를 배웠냬요



### 유용한 표현 ສຳນວນທີ່ສຳຄັນ

곧 드릴게요. ຂ້ອຍຈະເອົາມາໃຫ້ດຽວນີ້.

가: 여기요. 국수 아직 안 나왔어요. ຂໍໂທດເດີ້. ຂ້ອຍສັ່ງກຸກຊຸຍັງບໍ່ທັນໄດ້ເທື່ອ.
나: 죄송합니다. **곧 드릴게요.** ຂໍໂທດເດີ. **ຈະເອົາມາໃຫ້ດຽວນີ້ເລີຍ.**

## 활동 ກິດຈະກຳ

성희롱에 관한 O, X 퀴즈입니다. 잘 읽고 질문에 답하세요.
ເປັນຄຳຖາມສັ້ນ ໂດຍການໝາຍ O, X ໃສ່ສິ່ງທີ່ກ່ຽວຂ້ອງ ກັບການຄຸກຄາມທາງເພດ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

1. 맞다고 생각하면 ○, 틀리다고 생각하면 X에 표시하세요.
ຖ້າຄິດວ່າຖືກ ໃຫ້ໝາຍ O, ຖ້າຄິດວ່າຜິດ ໃຫ້ໝາຍ X.

| | | |
|---|---|---|
| 1) 성희롱은 개인적인 문제이므로 개인적으로 해결해야 합니다.<br>ການຄຸກຄາມທາງເພດ ເປັນບັນຫາສ່ວນບຸກຄົນ, ສະນັ້ນ ຕ້ອງໄດ້ຮັບການແກ້ໄຂໂດຍບຸກຄົນ. | ○ | X |
| 2) 가해자가 성희롱을 할 생각이 있었는지가 중요한 기준입니다.<br>ຜູ້ກະທຳ ແມ່ນມີເຈຕະນາຄຸກຄາມທາງເພດ ຫຼືບໍ່; ນັ້ນແມ່ນເປັນພື້ນຖານທີ່ສຳຄັນ. | ○ | X |
| 3) 성희롱에는 남녀를 차별하는 말과 행동도 포함됩니다.<br>ໃນການຄຸກຄາມທາງເພດ ແມ່ນລວມເຖິງ ຄຳເວົ້າກ່ຽວກັບການແບ່ງແຍກ ຍິງ-ຊາຍ ແລະ ລວມທັງການປະພຶດ. | ○ | X |
| 4) 피해자가 싫다고 이야기하지 않으면 성희롱이 아닙니다.<br>ຖ້າຜູ້ຖືກກະທຳ ບໍ່ເວົ້າວ່າບໍ່ມັກ, ສະແດງວ່າ ບໍ່ແມ່ນການຄຸກຄາມທາງເພດ. | ○ | X |

2. 위의 퀴즈의 답과 이에 대한 설명을 확인해 보세요.
ຈົ່ງກວດເບິ່ງ ການອະທິບາຍຄຳຕອບ ຂອງຄຳຖາມຂ້າງເທິງ.

1) X
성희롱은 단순한 성적 욕구에 기초한 행위가 아닙니다. 성희롱은 직장 내의 상하 관계와 관련된 행위로, 업무와 관련하여 성적인 언어나 행동 등으로 불이익을 주거나 성적 수치심을 유발하는 행위입니다. 따라서 성희롱은 더 이상 개인의 문제가 아닌 사회문제로 생각해야 합니다.
ການຄຸກຄາມທາງເພດ ບໍ່ແມ່ນພຽງແຕ່ການການປະພຶດທີ່ສະແດງເຖິງ ຄວາມຕ້ອງການທາງເພດເທົ່ານັ້ນ. ການຄຸກຄາມທາງເພດ ແມ່ນ ການ ພົວພັນແບບຫົວໜ້າລູກນ້ອງ ຢູ່ບ່ອນເຮັດວຽກ ໂດຍມີການ ປະພຶດ, ໂດຍການ ໃຊ້ຄຳເວົ້າແບບລາ ມົກ ຫຼື ການກະທຳ ໃນເວລາທີ່ເຮັດວຽກ; ເຊິ່ງເຮັດໃຫ້ອີກຝ່າຍໜຶ່ງ ເສຍປະໂຫຍດ ຫຼື ເກີດຄວາມອັບອາຍ. ສະນັ້ນ ການຄຸກຄາມທາງເພດ ຈຶ່ງບໍ່ ແມ່ນບັນ ຫາສ່ວນຕົວ ແລະ ຕ້ອງຄິດວ່າ ນີ້ແມ່ນບັນຫາ ທາງສັງຄົມ.

2) X
성희롱인지 아닌지를 판단하는 기준 가운데 가장 중요한 것은 피해자가 어떤 영향을 받았는가 하는 것입니다. 성적인 농담이나 음담패설이 직장생활의 활력소라고 생각하고 행동이나 말을 하는 것이 상대방에게 성적 수치심이나 불쾌감을 줄 수 있습니다.
ການທີ່ຈະຕັດສິນວ່າສິ່ງນັ້ນ ແມ່ນການຄຸກຄາມທາງເພດ ຫຼື ບໍ່ນັ້ນ, ສິ່ງທີ່ສຳຄັນທີ່ສຸດ ແມ່ນການເບິ່ງວ່າ ສິ່ງນັ້ນເກີດຜົນກະທົບແນວໃດ ຕໍ່ຜູ້ຖືກກະທຳ. ການເວົ້າຕະຫຼົກ ໃນທາງລາມົກ ຫຼື ການສະແດງ ຄວາມຄິດເຫັນແບບລາມົກ ທີ່ຄິດວ່າເປັນການສ້າງບັນຍາກາດ ໃນ ເວລາເຮັດ ວຽກ ແລ້ວມີການ ເວົ້າ ຫຼື ການກະທຳແບບນັ້ນ, ມັນກໍສາມາດເຮັດໃຫ້ຜູ້ອື່ນ ຮູ້ສຶກບໍ່ມັກ ຫຼື ບໍ່ພໍໃຈກໍເປັນໄດ້.

3) ○
남자와 여자를 차별하는 행동과 말이 상대방에게 불쾌감을 느끼게 했다면 그것도 성희롱입니다. 예를 들어 "여자들은 모를 거야." 라든가 "남자가 뭘 알겠어?" 등의 말을 듣고 상대방이 기분이 나빴다면 성희롱이 됩니다.
ຄຳເວົ້າ ຫຼື ການກະທຳ ແບບມີການແບ່ງແຍກເພດຍິງຊາຍ ເຊິ່ງເຮັດ ໃຫ້ຜູ້ອື່ນຮູ້ສຶກບໍ່ເພິ່ງພໍໃຈ ກໍຖືວ່າ ເປັນການຄຸກຄາມທາງເພດ ເຊັ່ນດຽວກັນ. ຕົວຢ່າງ: ການເວົ້າວ່າ "ຜູ້ຍິງບໍ່ຮູ້ດອກ." ຫຼື "ຜູ້ຊາຍຊິຮູ້ ຫຍັງ?" ແລະ ອື່ນໆ, ຖ້າວ່າ ຜູ້ທີ່ຟັງ ແລ້ວຮູ້ສຶກອາລົມບໍ່ດີ ກໍເປັນການ ຄຸກຄາມທາງເພດ.

4) X
피해자가 싫다고 정확하게 표현하지 않았어도 그것이 실제로 원하지 않는 행동이었다는 것을 피해자의 말이나 상황을 보고 판단할 수 있습니다. 따라서 명시적인 거부 의사 표현이 성희롱인지 아닌지를 판단하는 기준이 되지는 않습니다.
ເຖິງແມ່ນວ່າ ຜູ້ຖືກກະທຳບໍ່ໄດ້ເວົ້າ ຢ່າງຊັດເຈນວ່າບໍ່ມັກ, ແຕ່ສາມາດ ຕັດສິນໄດ້ ໂດຍການເບິ່ງໃນຕົວຈິງຜ່ານ ຄຳເວົ້າ ຫຼື ພຶດຕິກຳ ຂອງຜູ້ຖືກກະທຳວ່າ ແມ່ນສິ່ງທີ່ບໍ່ຕ້ອງການໄດ້. ສະນັ້ນ, ການສະແດງອອກ ທີ່ຊັດເຈນ ທີ່ສະແດງເຖິງການປະຕິເສດ ໂດຍຜູ້ຖືກກະທຳ ຈຶ່ງບໍ່ສາມາດເອົາມາເປັນບັນທັດຖານ ໃນການຕັດ ສິນວ່ານັ້ນ ແມ່ນການຄຸກຄາມທາງເພດ ຫຼື ບໍ່ໄດ້.



## 정보 ຂໍ້ມູນທົ່ວໄປ

# 성희롱의 개념과 처벌

### ຄວາມໝາຍ ຂອງການຖືກຄຸກຄາມທາງເພດ ແລະ ການລົງໂທດ

직장 내 성희롱은 사업주, 상급자 또는 근로자가 직장 내 지위를 이용하거나 업무와 관련하여 다른 근로자에게 성적인 언동 등으로 성적 굴욕감 또는 혐오감을 느끼게 하거나 성적 언동 그 밖의 요구 등에 대한 불응을 이유로 고용상 불이익을 주는 것을 말합니다.(남녀고용평등법 제2조 제2항)

ການຄຸກຄາມທາງເພດ ຢູ່ສະຖານທີ່ ໃນບ່ອນເຮັດວຽກ ໝາຍເຖິງເວລາທີ່ ເຈົ້າຂອງກິດຈະການ, ຫົວໜ້າ, ຫຼື ເພື່ອນຮ່ວມງານ ໃຊ້ຕໍາແໜ່ງ, ສິດອໍານາດຂອງຕົນ ຫຼື ສິ່ງທີ່ກ່ຽວກັບວຽກງານ ເຮັດໃຫ້ຜູ້ທີ່ເຮັດວຽກ ນໍາຮູ້ສຶກອັບອາຍ ຫຼື ຄຽດຊັງ ໂດຍທາງວາຈາ ຫຼື ການຄຸກຄາມ ທາງຮ່າງກາຍ; ເຊິ່ງການຮ້ອງຫາ ຫຼື ການທີ່ບໍ່ປະຕິບັດຕາມການຮ້ອງຂໍນັ້ນ ຈະສົ່ງຜົນໃຫ້ມີການເສຍຜົນປະໂຫຍດ ທາງວຽກງານຕໍ່ຜູ້ຖືກກະທໍາ. (ກົດໝາຍເພື່ອຄວາມສະເໝີພາບ ໃນການຈ້າງງານ ຍິງ-ຊາຍ, ມາດຕາ 2, ຂໍ້ 3)

### 직장 내 성희롱의 개념 ຄວາມໝາຍຂອງການຄຸກຄາມທາງເພດ ຢູ່ບ່ອນເຮັດວຽກ




### 성희롱 가해자의 처벌 ການລົງໂທດຕໍ່ຜູ້ທີ່ກະທໍາ ການຄຸກຄາມທາງເພດ




경고, 견책, 정직, 감봉, 해고 등 징계
ມາດຕະການການໃສ່ລະບຽບ, ການຕັກເຕືອນ, ການກ່າວວ່າຕັກເຕືອນ, ການພັກງານ, ການຕັດເງິນ ແລະ ອື່ນໆ

행정적 책임(과태료 등), 민사 책임(손해배상) 발생
ຄວາມຮັບຜິດຊອບ ທາງບໍລິຫານ (ເສຍຄ່າປັບໃໝ, ອື່ນໆ), ຄວາມຮັບຜິດຊອບທາງແພ່ງ (ຈ່າຍຄ່າເສຍຫາຍ)

도덕적 비난과 명예 손상
ການກ່າວວິຈານ ທາງສິນລະທໍາ ແລະ ການທໍາລາຍຊື່ສຽງ



# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາຄໍາຕອບທີ່ຖືກຕ້ອງ. ຈົ່ງກວດເບິ່ງ ເນື້ອໃນຂອງຄໍາຖາມກ່ອນຟັງ.

[1~3] 다음 그림을 보고 알맞은 대답을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄໍາຕອບ ທີ່ເໝາະສົມ.

Track 126

1. 이 사람은 누구입니까? ຄົນຜູ້ນີ້ແມ່ນໃຜ?

① ② ③ ④

2. 이 사람은 지금 무엇을 하고 있습니까?
ຕອນນີ້ ຄົນຜູ້ນີ້ ແມ່ນກໍາລັງເຮັດຫຍັງຢູ່?

① ② ③ ④

3. 이 사람은 지금 무엇을 하고 있습니까?
ຕອນນີ້ ຄົນຜູ້ນີ້ ແມ່ນກໍາລັງເຮັດຫຍັງຢູ່?

① ② ③ ④



ຂໍ້ 4 ແລະ 5 ແມ່ນການຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄໍາຖາມ. ຈົ່ງກວດເບິ່ງເນື້ອໃນ ຂອງຄໍາຖາມ ແລະ ຄໍາຕອບ ກ່ອນທີ່ຈະຟັງ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄໍາຖາມ 2 ຂໍ້.

4. 남자는 무엇에 대해서 이야기하고 있습니까? ຜູ້ຊາຍກໍາລັງເວົ້າກ່ຽວກັບຫຍັງ?

① 성희롱의 종류　　② 성희롱의 처벌
③ 성희롱의 신고 방법　　④ 성희롱의 대처 방법

5. 남자가 증거로 이야기하지 않은 것은 무엇입니까?
ສິ່ງທີ່ຜູ້ຊາຍ ບໍ່ໄດ້ເວົ້າວ່າເປັນຫຼັກຖານ ແມ່ນຫຍັງ?

① 사진　　② 편지
③ 녹음　　④ 날짜



## 듣기 대본 ເນື້ອໃນບົດຟັງ

1. ① 여: 증인입니다. ລາວແມ່ນພະຍານ. ② 여: 증거입니다. ມັນແມ່ນຫຼັກຖານ.
   ③ 여: 피해자입니다. ລາວ ແມ່ນຜູ້ຖືກກະທຳ. ④ 여: 가해자입니다. ລາວ ແມ່ນຜູ້ກະທຳ.
2. ① 남: 음란물을 보고 있습니다. ຂ້ອຍ ກຳລັງເບິ່ງ ສື່ລາມົກອະນາຈານ.
   ② 남: 동영상을 보고 있습니다. ຂ້ອຍ ກຳລັງເບິ່ງວິດີໂອ.
   ③ 남: 성적 농담을 하고 있습니다. ຂ້ອຍ ກຳລັງເວົ້າ ຕະຫຼົກລາມົກ.
   ④ 남: 신체 접촉을 하고 있습니다. ຂ້ອຍ ກຳລັງຖືກເນື້ອ ຕ້ອງໂຕ.
3. ① 여: 강요하고 있습니다. ຂ້ອຍ ກຳລັງ ບີບບັງຄັບ.
   ② 여: 신고하고 있습니다. ຂ້ອຍ ກຳລັງລາຍງານ.
   ③ 여: 요구하고 있습니다. ຂ້ອຍ ກຳລັງຮ້ອງຂໍ.
   ④ 여: 표현하고 있습니다. ຂ້ອຍ ກຳລັງສະແດງອາລົມອອກມາ.

4-5. 남: 직장 안에서의 성희롱이 발생했을 때는 정확하게 자신의 생각을 표현해야 합니다. 만일 직접 말하기 어렵다면 편지를 쓰거나 다른 방법으로 자신의 의사를 표현하는 게 좋습니다. 그리고 상대방이 한 말이나 행동을 증명할 수 있는 증거를 모으십시오. 사진을 찍거나 녹음을 하시고, 날짜와 시간, 장소 등을 정확하게 써 놓아야 합니다.

ໃນເວລາ ທີ່ເກີດມີການຄຸກຄາມທາງເພດ ຢູ່ບ່ອນເຮັດວຽກ ແມ່ນໃຫ້ສະແດງຄວາມຄິດເຫັນ ຂອງຕົນອອກມາຢ່າງຊັດເຈນ. ຖ້າຫາກວ່າການເວົ້າໂດຍກົງມັນຍາກ, ກໍໃຫ້ຂຽນຈົດໝາຍ ຫຼື ເຮັດວິທີທາງອື່ນ ເພື່ອເປັນການສະແດງເຈດຈຳນົງ ຫຼື ຄວາມຄິດເຫັນຂອງຕົນກໍຈະດີ. ແລະຈົ່ງທ້ອນໂຮມຫຼັກຖານ ທີ່ສາມາດອ້າງອີງ ເຖິງຄຳເວົ້າ ຫຼື ການກະທຳຂອງຝ່າຍກົງ ກັນຂ້າມ. ຕ້ອງຖ່າຍຮູບ ຫຼື ອັດສຽງ, ຈົດບັນທຶກເວລາ ວັນທີ, ສະຖານທີ່ ແລະ ອື່ນໆ ໄວ້ຢ່າງຊັດເຈນ.


정답 1. ④ 2. ④ 3. ② 4. ④ 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ


L-40

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   다음 중 들은 내용과 같은 것은 무엇입니까? ຄຳຕອບທີ່ຖືກຕ້ອງກັບເນື້ອໃນ ທີ່ໄດ້ຟັງນັ້ນ ແມ່ນຫຍັງ?

   ① 여자는 센터를 방문한 적이 있습니다.
   ② 남자는 한국어를 배우고 싶어합니다.
   ③ 한국어를 배우려면 이용자 카드가 필요합니다.
   ④ 한국어 수업을 신청하고 나서 상담을 받습니다.

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 어서 오세요. 저희 센터는 처음이시죠? ຍິນດີຕ້ອນຮັບ. ມາທີ່ສູນຂອງພວກເຮົາເປັນຄັ້ງທຳອິດບໍ?
   여: 네, 한국어 수업을 신청하고 싶은데 어떻게 해야 돼요?
   ເຈົ້າ, ຂ້ອຍຕ້ອງການສະໝັກຮຽນ ພາສາເກົາຫຼີ, ຕ້ອງເຮັດແນວໃດ?
   남: 먼저 이용자 카드를 만드셔야 해요. 그 후에 상담을 하고 수업을 신청하시면 돼요.
   ທຳອິດ ແມ່ນຕ້ອງເຮັດໃບສະໝັກ ຜູ້ນຳໃຊ້ກ່ອນ. ຕໍ່ໄປແມ່ນຮັບການປຶກສາ ແລ້ວຈຶ່ງສະໝັກຮຽນໄດ້.

정답 1. ③



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ແມ່ນການເບິ່ງຮູບພາບ ແລ້ວເລືອກເອົາສຳນວນທີ່ຖືກຕ້ອງ. ຈົ່ງຄິດທົບທວນເຖິງຄຳສັບທີ່ຮຽນມາແລ້ວລອງຕອບຄຳຖາມ.

[1~2] 다음 그림을 보고 맞는 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.



① 증인입니다.
② 증거입니다.
③ 가해자입니다.
④ 피해자입니다.

2.




① 경찰에 신고하고 있습니다.
② 성적 언동을 하고 있습니다.
③ 자신의 의사를 표현하고 있습니다.
④ 부하 직원에게 불이익을 주고 있습니다.



ຂໍ້ 3 ແລະ 4 ແມ່ນການຊອກຫາຄຳສັບ ເພື່ອຕື່ມໃສ່ບົດສົນທະນາ. ຂໍ້ 5 ແມ່ນການອ່ານບົດ ເລື່ອງແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[3~5] 빈칸에 알맞은 것은 무엇입니까? ຄຳຕອບ ທີ່ເໝາະສົມທີ່ສຸດ ແມ່ນຫຍັງ?

3.

가: 신체 접촉이나 성적 언동 등의 행동으로 상대방을 불쾌하게 하는 건 큰 잘못이지요?
ການເຮັດໃຫ້ຜູ້ອື່ນຮູ້ສຶກບໍ່ພໍໃຈ ໂດຍການຈັບເນື້ອຕ້ອງໂຕ ຫຼື ການເວົ້າ/ການກະທຳລາມົກ ແລະ ອື່ນໆ ແມ່ນຄວາມຜິດໜັກ, ແມ່ນບໍ?

나: 그럼요, 그건 __________에 해당하는 행동이에요.
ແນ່ນອນ, ນັ້ນແມ່ນ ໝາຍເຖິງການກະທຳ ທີ່ກ່ຽວກັບການລະເມີດທາງເພດ.

① 성범죄 ② 경범죄 ③ 교통 위반 ④ 불법 체류

4.

가: 수루 씨, 제 옆에 앉으세요.
ຊູຣູ, ກະລຸນາ ນັ່ງທາງຂ້າງຂ້ອຍ.

나: 민수 씨, 이런 거 __________ 직장 내 성희롱에 해당하는 거 알지요?
ມິນຊູ, ຖ້າບັງຄັບ ໃຫ້ເຮັດແບບນີ້, ແມ່ນໝາຍເຖິງການຄຸກຄາມທາງເພດ ໃນບ່ອນເຮັດວຽກ ກໍຮູ້ຢູ່, ແມ່ນບໍ?

① 강요하면 ② 신청하면 ③ 신고하면 ④ 표현하면



5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

> 직장 내 성희롱은 직장 상사가 직장 내 지위를 이용하거나 업무와 관련하여 다른 근로자에게 성적 언동 등으로 수치심 또는 불쾌감을 느끼게 하는 것입니다. 그리고 성적 언동 등의 요구를 들어주지 않는다는 이유로 고용상 ______㉠______을/를 주는 것을 말합니다.
>
> ການຄຸກຄາມທາງເພດ ໃນບ່ອນເຮັດວຽກ ແມ່ນການທີ່ຫົວໜ້າ ໃຊ້ໜ້າທີ່ຕຳແໜ່ງ ຫຼື ສິ່ງທີ່ກ່ຽວຂ້ອງ ກັບວຽກງານ ເຊິ່ງເຮັດໃຫ້ພະນັກງານຜູ້ອື່ນ ຮູ້ສຶກບໍ່ພໍໃຈ ຫຼື ບໍ່ມັກ ໂດຍການໃຊ້ວາຈາ ຫຼື ການກະທຳລາມົກ. ແລະ ຍັງໝາຍເຖິງ ການໃຫ້ ㉠ເສຍຜົນປະໂຫຍດໃນການຈ້າງງານ ຍ້ອນເຫດຜົນວ່າ ຜູ້ນັ້ນ ບໍ່ຟັງການຮ້ອງຂໍທາງຄຳເວົ້າ ຫຼື ການກະທຳ ລາມົກນັ້ນ.

㉠에 들어갈 알맞은 말을 고르십시오. ຈົ່ງເລືອເອົາຄຳຕອບ ທີ່ຖືກຕ້ອງທີ່ສຸດຕື່ມໃສ່ບ່ອນຫວ່າງ ㉠.

① 책임　② 증거　③ 불이익　④ 불쾌감

정답 1. ② 2. ③ 3. ① 4. ① 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

1.

> 저는 한국어 수업을 듣기 전에 집에서 혼자 공부합니다. 문법과 단어를 미리 공부하고 수업을 들으면 선생님 말씀을 잘 이해할 수 있습니다.
>
> ກ່ອນທີ່ ຂ້ອຍຈະມາຮຽນພາສາເກົາຫຼີ ຢູ່ຫ້ອງຮຽນ, ຂ້ອຍໄດ້ຮຽນດ້ວຍຕົນເອງຢູ່ເຮືອນແລ້ວ. ຖ້າຮຽນໄວຍາກອນ ແລະ ຄຳສັບກ່ອນແລ້ວຈຶ່ງມາຫ້ອງຮຽນ ແມ່ນຈະສາມາດເຂົ້າໃຈຄຳອະທິບາຍຂອງອາຈານໄດ້ດີ.

① 숙제　② 예약　③ 복습　④ 예습

2.

> 점심시간에 동료와 함께 식당에 갔습니다. 저는 김치찌개를 시키고 동료는 된장찌개를 시켜 먹었습니다.
>
> ຂ້ອຍໄດ້ໄປຮ້ານອາຫານ ກັບເພື່ອນຮ່ວມງານ ໃນເວລາພັກທ່ຽງ. ຂ້ອຍສັ່ງ ແກງກິມຈິ ແລະ ເພື່ອນຮ່ວມງານ ແມ່ນໄດ້ສັ່ງແກງແທນຈັງມາກິນ.

① 식당 예약　② 음식 주문　③ 식당 위치　④ 음식 소개

### 발음 ການອອກສຽງ　P-19



### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພາສາເກົາຫຼີ ເວລາທີ່ມີພະຍັນຊະນະ 2 ຕົວຕິດກັນ ຈະມີການອອກສຽງທີ່ຫຼາກຫຼາຍ. ກໍລະນີຂອງ 'ສຽງກັ້ນ + ສຽງຈາກດັງ', 'ສຽງກັ້ນ' ຈະປ່ຽນເປັນການອອກສຽງ 'ສຽງຈາກດັງ'. ໃນເວລານີ້ ແມ່ນຈະບໍ່ມີການປ່ຽນທີ່ຕັ້ງຂອງການອອກສຽງ.

(1) 막내, 국민, 국물, 밥맛
(2) 꽃만, 있는, 먹는, 닫는
(3) 작년에 무엇을 했어요?
(4) 운동 후에는 밥맛이 좋아요.

정답 1. ④ 2. ②



## 활동 ກິດຈະກຳ

다음을 읽고 질문에 답하세요. ຈົ່ງອ່ານ ແລະ ຕອບຄຳຖາມຕໍ່ໄປນີ້.

### 정리 정돈은 왜 해야 할까요?

ເປັນຫຍັງ ຈຶ່ງຕ້ອງມີການເກັບມ້ຽນ?







1. 물건과 장소의 낭비를 줄일 수 있습니다.
   ສາມາດຫຼຸດພື້ນທີ່ ຫຼື ອຸປະກອນ ທີ່ຟຸ່ມເຟືອຍໄດ້.
2. 안전사고를 예방할 수 있습니다. ສາມາດປ້ອງກັນ ການເກີດອຸບັດຕິເຫດໄດ້.
3. 기계를 오랫동안 잘 사용할 수 있습니다. ສາມາດຊົມໃຊ້ເຄື່ອງຈັກນັ້ນ ໄດ້ຍາວນານ.
4. 제품의 품질이 좋아집니다. ຄຸນນະພາບ ຂອງເຄື່ອງໃຊ້ດີຂຶ້ນ.
5. 생산 품종이 변경될 때 손실을 줄일 수 있습니다.
   ສາມາດຫຼຸດຜ່ອນການສູນເສຍ ໃນເວລາປ່ຽນຊະນິດສິນຄ້າ.
6. 즐거운 직장, 발전하는 회사가 될 수 있습니다.
   ສາມາດເປັນບໍລິສັດ ທີ່ພັດທະນາ, ເປັນສະຖານທີ່ ການເຮັດວຽກທີ່ມ່ວນຊື່ນ.

1. 읽은 내용과 같으면 ○ 다르면 X에 표시하세요.
   ຈົ່ງໝາຍ ○ ໃສ່ເນື້ອໃນ ທີ່ຖືກຕ້ອງກັບບົດອ່ານ ແລະ ຈົ່ງໝາຍ X ໃສ່ກັບເນື້ອໃນທີ່ຕ່າງຈາກບົດເລື່ອງ.

   1) 정리를 잘하면 안전사고를 줄일 수 있습니다. ○ X

   2) 정리를 잘하면 기계를 빨리 바꿀 수 있습니다. ○ X

   3) 정리를 잘하면 회사에서 더 즐겁게 일할 수 있습니다. ○ X

정답 1. 1) O 2) X 3) O



## 정보 ຂໍ້ມູນທົ່ວໄປ

# 작업 도구 정리 정돈

ການເກັບມ້ຽນ ເຄື່ອງມືການເຮັດວຽກ



### 사용 목적에 따른 공구 정리

ເປັນການຈັດການເຄື່ອງມື ຕາມວັດຖຸປະສົງຂອງຊິ້ນໃຊ້

공구는 많은 종류가 있지만 본래의 목적 이외에 사용하는 것은 위험합니다. 알맞은 종류와 크기의 공구를 사용하기 쉬운 곳에 준비해 두세요.

ເຄື່ອງມືອາດມີຫຼາຍປະເພດ ແຕ່ຈະເປັນອັນຕະລາຍ ຖ້າເຮົາໃຊ້ບໍ່ຖືກຕາມວັດຖຸປະສົງເດີມ ຂອງເຄື່ອງມືຈຶ່ງຈັດກຽມສະຖານທີ່ ທີ່ເໝາະສົມກັບການເກັບມ້ຽນເຄື່ອງມືທີ່ໃຫຍ່ ໃຫ້ສາມາດນໍາໃຊ້ໄດ້ງ່າຍ.

### 공구 점검 ການກວດກາເຄື່ອງມື

공구는 항상 점검을 해야 합니다. 고장이 난 것은 폐기하거나 수리해서 사용해야 합니다.

ເຮົາຕ້ອງກວດກາເບິ່ງ ເຄື່ອງມືຢູ່ຕະຫຼອດ, ຖ້າຫາກມີການເປເພ ຕ້ອງເອົາໄປສ້ອມແປງ ຫຼື ຖິ້ມເປັນເຄື່ອງເສດເຫຼືອ.





### 공구 사용 시 주변 정리 정돈

ການເກັບມ້ຽນອ້ອມຮອບ ໃນຂະນະທີ່ໃຊ້ເຄື່ອງມື

공구를 사용할 장소는 잘 정리되어 있어야 합니다. 공구에 손이나 발을 다치거나 공구가 떨어져서 다칠 수도 있습니다.

ຕ້ອງມີການເກັບມ້ຽນສະຖານທີ່ ທີ່ຈະໃຊ້ເຄື່ອງມືໃຫ້ດີ, ຖ້າເຄື່ອງມືຕົກລົງມາ ຖືກມື ຫຼື ຖືກຕີນອາດເຮັດໃຫ້ໄດ້ຮັບບາດເຈັບໄດ້.

### 보관 ການຮັກສາ

공구함을 준비하여 종류와 크기별로 공구를 구별하여 보관해야 합니다. 공구를 안전하고 쉽게 사용할 수 있습니다.

ເຮົາຕ້ອງແຍກເກັບຮັກສາເຄື່ອງມື ຕາມຂະໜາດ ຫຼື ຕາມຊະນິດຕ່າງໆ ໄວ້ຕູ້ເກັບເຄື່ອງມື. ເພື່ອຄວາມປອດໄພ ແລະ ຊອກໃຊ້ເຄື່ອງມືໄດ້ສະດວກງ່າຍຂຶ້ນ.





## EPS-TOPIK 듣기 ພາກຟັງ EPS-TOPIK



1 ແລະ 2 ແມ່ນເປັນການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ກ່ຽວຂ້ອງກັບບົດສົນທະນາດັ່ງກ່າວ ນັ້ນ. ກ່ອນການຟັງບົດສົນທະນາ ຈົ່ງກວດເບິ່ງຕົວຢ່າງກ່ອນ.

[1~2] 들은 것을 고르십시오. ຈົ່ງເລືອກເອົາຄຳຕອບທີ່ໄດ້ຍິນ.




1. ① 폐유　　② 폐수
   ③ 폐기　　④ 폐물

2. ① 작업장이 깨끗해요.　　② 작업장을 치웠어요.
   ③ 작업장이 더러워요.　　④ 작업장을 정리해요.



ຂໍ້ 3 ຫາ 4 ແມ່ນປັນການຟັງບົດສົນທະນາ ແລ້ວເລືອກເອົາຮູບພາບທີ່ກ່ຽວຂ້ອງກັບບົດ ສົນທະນາດັ່ງກ່າວນັ້ນ ກ່ອນການຟັງ ຈົ່ງກວດເບິ່ງຮູບພາບອີກຄັ້ງໜຶ່ງກ່ອນ. ຂໍ້ 5 ແມ່ນເປັນ ການຟັງຄຳເວົ້າຕໍ່ໄປ ຂອງຜູ້ຊາຍ ໃນບົດ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

[3~4] 잘 듣고 내용과 관계있는 그림을 고르십시오.
ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງກັບເນື້ອໃນ.

3. ① 　② 　③ 　③ 

4. ① 　② 　③ 　③ 

5. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

남자가 말한 정리 정돈의 효과로 맞지 않는 것을 고르십시오.
ຈົ່ງເລືອກເອົາສິ່ງທີ່ບໍ່ກ່ຽວຂ້ອງກັບ ຜົນດີຂອງການຈັດມ້ຽນເປັນລະບຽບ ທີ່ຜູ້ຊາຍຄົນນັ້ນໄດ້ກ່າວມາ.

① 품질이 떨어질 수 있어요.
② 안전사고를 예방할 수 있어요.
③ 물건의 낭비를 줄일 수 있어요.
④ 기계를 오래 사용할 수 있어요.



### 듣기 대본 ເນື້ອໃນບົດຟັງ

1. 여: 폐수를 여기에 버리는 거예요? ຖິ້ມນ້ຳເສຍລົງບ່ອນນີ້ບໍ?

   남: 네, 여기가 폐수를 버리는 곳이에요. ແມ່ນແລ້ວ, ທີ່ນີ້ແມ່ນບ່ອນຖິ້ມນ້ຳເສຍ.

2. 여: 작업장이 더러워요. ບ່ອນເຮັດວຽກເປື້ອນ.

   남: 그렇죠? 너무 지저분하네요. ແມ່ນລະ, ຊະຊາຍຫຼາຍແທ້.

3. 남: 사다리가 있으면 올라갈 수 있겠네요. ສາມາດຂຶ້ນໄປໄດ້ ຖ້າມີຂັ້ນໄດ.

   여: 사다리요? 저기에 있네요. ຂັ້ນໄດບໍ? ຢູ່ພຸ້ນເດ.

4. 남: 지금 뭐 하고 있어요? ດຽວນີ້ເຮັດຫຍັງຢູ່?

   여: 냄새가 나서 환기하고 있어요. ມີກິ່ນອອກມາ ກໍເລີຍກຳລັງລະບາຍອາກາດຢູ່.

5. 남: 오늘 교육 시간에는 지난주에 이어서 작업장 정리가 왜 필요한지 설명하겠습니다. 우선 정리를 잘하면 안전사고를 예방할 수 있고, 물건의 낭비를 줄일 수 있어요. 그리고 제품을 잘 관리하니까 품질도 좋아지고요. 무엇보다 기계를 오랫동안 잘 사용할 수 있어요.

   ໃນຊົ່ວໂມງຮຽນມື້ນີ້ ຈະສືບຕໍ່ກັບບົດຮຽນ ທີ່ແລ້ວກ່ຽວກັບການອະທິບາຍເຖິງ ຄວາມຈຳເປັນຂອງການເກັບມ້ຽນເຄື່ອງມືເຮັດວຽກ. ກ່ອນອື່ນ, ຖ້າເຮົາມ້ຽນດີ ຈະສາມາດປ້ອງກັນການເກີດອຸບັດຕິເຫດໄດ້; ສາມາດຫຼຸດພື້ນທີ່ ຫຼື ອຸປະກອນ ທີ່ຟຸມເຟືອຍໄດ້ ແລະ ຍ້ອນເຮົາເກັບຮັກສາດີ ຄຸນນະພາບຂອງເຄື່ອງໃຊ້ ກໍດີຂຶ້ນ; ສິ່ງທີ່ດີຍິ່ງໄປກວ່ານັ້ນ ແມ່ນສາມາດ ຊົມໃຊ້ເຄື່ອງຈັກນັ້ນ ໄດ້ຢ່າງຍາວນານ.

정답 1. ② 2. ③ 3. ③ 4. ① 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ

L-44

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   남자가 사무실에 가는 이유는 무엇입니까? ເຫດຜົນທີ່ຜູ້ຊາຍຄົນນັ້ນ ໄປເຮັດວຽກຢູ່ຫ້ອງການ ແມ່ນຫຍັງ?

   ① 마스크를 잊어버려서 ② 작업장에 먼지가 많아서
   ③ 사무실에서 일해야 해서 ④ 귀마개를 안 가지고 와서

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 바트 씨, 귀마개하고 마스크 가지고 왔지요? ບັດ, ເອົາເຄື່ອງປິດຫູ ແລະ ຜ້າອັດດັງມານຳບໍ?

   남: 오늘 작업은 먼지가 많이 난다고 해서 마스크만 가지고 왔는데요.
   ມື້ນີ້ໄດ້ຍິນວ່າ ມີຝຸ່ນລະອອງຫຼາຍ ເລີຍເອົາຜ້າອັດດັງມານຳ.

   여: 여기는 소음이 심해서 귀마개를 꼭 착용해야 해요. ເພາະວ່າ ຢູ່ທີ່ນີ້ມີສຽງດັງຫຼາຍ ຈະຕ້ອງໄດ້ໃສ່ເຄື່ອງອັດຫູແດ່.

   남: 몰랐어요. 사무실에 가서 얼른 가지고 올게요. ບໍ່ຮູ້ເດ. ຈະກັບໄປຫ້ອງການ ເອົາເຄື່ອງອັດຫູ ແລ້ວຈະກັບມາໄວໆ.


정답 1. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວຊອກຫາສຳນວນ ທີ່ເໝາະສົມ. ຈົ່ງຄິດທວນຄືນຄຳສັບທີ່ໄດ້ຮຽນມາ ແລ້ວຕອບຄຳຖາມ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1. 

① 손수레입니다. ② 배설물입니다.
③ 일륜차입니다. ④ 비닐 끈입니다.

2. 


① 냄새가 심해요. ② 소음이 심해요.
③ 공기가 쾌적해요. ④ 정리가 되어 있어요.



ຂໍ້ 3 ຫາ 5 ແມ່ນເປັນການເລືອກເອົາສຳນວນ ທີ່ເໝາະສົມ ຕື່ມໃສ່ບ່ອນຫວ່າງ. ຈົ່ງຄິດທວນຄືນເນື້ອໃນບົດຮຽນທີ່ໄດ້ຮຽນມາ ແລ້ວຕອບຄຳຖາມ.

[3~5] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.
가: 오늘은 작업장이 아주 쾌적하네요. ມື້ນີ້ ບ່ອນເຮັດວຽກ ແມ່ນຈົບງາມຫຼາຍ.
나: 그렇죠? 청소를 ______________. ແມ່ນລະ, ອະນາໄມຫາກໍແລ້ວ.

① 하지요 ② 했거든요 ③ 하고 싶어요 ④ 할 거예요

4.
가: 며칠 전보다 분뇨가 __________. ສິ່ງເສດເຫຼືອຫຼາຍຂຶ້ນກວ່າ ມື້ທີ່ຜ່ານມາ.
나: 그렇죠? 빨리 치워야겠어요. ແມ່ນລະ, ຈະຕ້ອງໄດ້ມ້ຽນໃນໄວໆນີ້.

① 많아졌어요 ② 많으면 안 돼요
③ 많지 않을 거예요 ④ 많았으면 좋겠어요

5.
공구함을 준비하여 종류와 크기별로 공구를 구별하여 ________해야 합니다.
ຕ້ອງແຍກເກັບຮັກສາເຄື່ອງມືຕາມຂະໜາດ ຫຼື ຕາມຊະນິດຕ່າງໆໄວ້ຕູ້ເກັບເຄື່ອງມື.
이렇게 잘 넣어 두면 공구를 안전하고 쉽게 사용할 수 있습니다.
ຖ້າເກັບມ້ຽນເຂົ້າໄວ້ແບບນີ້ ເຄື່ອງມືກໍຄວາມປອດໄພ ແລະ ຊອກໃຊ້ໄດ້ສະດວກງ່າຍຂຶ້ນ.

① 사용 ② 보관 ③ 준비 ④ 점검

정답 1. ① 2. ② 3. ② 4. ① 5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 새 작업 도구로 작업을 하니까 아주 편합니다. 전에 쓰던 것보다 ________ 작고 가벼워서 좋습니다.
ເຮັດວຽກສະດວກສະບາຍຂຶ້ນ ເພາະວ່າມີເຄື່ອງມືໃໝ່. ດີ, ນ້ອຍກວ່າໂຕ ທີ່ໃຊ້ເທື່ອກ່ອນ ແລະ ເບົາອີກ.

① 혹시　② 계속
③ 가장　④ 훨씬

2. 작업장의 기계가 낡아서 새 기계로 바꾸었습니다. 새 기계로 ________ 더 쉽고 편한 것 같습니다.
ເພາະວ່າ ເຄື່ອງໃຊ້ອຸປະກອນໄດ້ເກົ່າແລ້ວ ຈຶ່ງປ່ຽນໃຊ້ອຸປະກອນອັນໃໝ່. ອຸປະກອນອັນໃໝ່ ແມ່ນສະດວກສະບາຍກວ່າອັນເກົ່າ.

① 작업하니까　② 작업하든지
③ 작업하고자　④ 작업하려고

3. 페인트 작업을 한 다음에는 바닥을 잘 닦아야 합니다. 그렇게 하지 않으면 사람들이 다니다가 ________.
ຫຼັງຈາກທາສີແລ້ວ ຕ້ອງເສັດພື້ນໃຫ້ດີໆ. ຖ້າຫາກ ບໍ່ທຳຄວາມສະອາດ ເວລາມີຄົນຍ່າງກາຍມາ ຈະເຮັດໃຫ້ພື້ນໝື່ນ.

① 찔리면 됩니다　② 찔릴 수 있습니다
③ 미끄러지면 됩니다　④ 미끄러질 수 있습니다

정답 1. ④　2. ①　3. ④

## 발음 ການອອກສຽງ  P-22

ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

'ㄹ' ໃນພາສາເກົາຫຼີ ເມື່ອສອງພະຍັນຊະນະມາຄວບກັນ ຈະຜັນສຽງໄດ້ຫຼາຍແບບ ໃນກໍລະນີພະຍັນຊະນະ ສຽງຕ່ຳ 'ㄴ' + ພະຍັນຊະນະ 'ㄹ' ຫຼືວ່າ ໃນກໍລະນີ 'ㄴ+ㄹ', 'ㄹ+ㄴ' ຈະອອກສຽງ [ㄹㄹ] ທັງສອງ ໂດຍບໍ່ ກ່ຽວກັບລຳດັບຂອງພະຍັນຊະນະແຕ່ຢ່າງໃດ.

(1) 설날, 오늘날, 일 년
(2) 신라, 한라산, 천 리
(3) 컴퓨터는 아주 편리해요.
(4) 설날에는 떡국을 먹어요.



# 호미를 챙겼는데요

ຂ້ອຍໄດ້ກະກຽມຈົກສັ້ນພ້ອມແລ້ວ

**학습 안내** ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການຮ້ອງຂໍປ່ຽນວຽກ, ການຂໍຮ້ອງວຽກເຮັດ |
| □ ໄວຍາກອນ | -는데요, -기 전에 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ກະສິກຳ 1, ກະສິກຳ 2 |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ສື່ລະດູການ ການຜະລິດກະສິກຳ ຂອງເກົາຫຼີ. |



## 대화 1 ບົດສົນທະນາ 1

Track 139



ລີລີ ແລະ ແມ່ເຖົ້າເຈົ້າຂອງຟາມ ກຳລັງສົນທະນາກັນ. ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

주인 아주머니 　리리 씨, 괭이 챙겼어요?
ລີລີ ກະກຽມຈົກນ້ອຍພ້ອມແລ້ວບໍ?

리리 　괭이요? 오늘 고구마 캐는 일을 하신다고 해서 호미를 챙겼는데요.
ຈົກນ້ອຍບໍ? ມື້ນີ້ ເຈົ້າເວົ້າວ່າ ຈະໄປຂຸດມັນດ້າງ ຈຶ່ງກຽມແຕ່ຈົກ ສັ້ນມາ.

주인 아주머니 　오늘 일할 밭은 너무 딱딱해서 호미로 하기 힘들어요. 그리고 괭이로 고구마를 캘 때는 호미로 할 때보다 고구마에 상처가 나기 쉬우니까 조심해야 돼요.
ມື້ນີ້ ດິນຟາມທີ່ຈະໄປເຮັດວຽກ ແມ່ນແຂງຫຼາຍ ສະນັ້ນ ໃຊ້ຈົກສັ້ນແມ່ນລຳບາກ. ອີກອັນໜຶ່ງ ເວລາໃຊ້ຈົກສັ້ນຂຸດມັນດ້າງຂຶ້ນມາ ແມ່ນຈະສ້າງຄວາມເສຍຫາຍໃຫ້ມັນດ້າງຫຼາຍກວ່າ ການໃຊ້ຈົກນ້ອຍ ຕ້ອງລະມັດລະວັງ.

리리 　그렇군요. 그럼 창고에 가서 얼른 가지고 올게요.
ໂອ, ເຂົ້າໃຈແລ້ວ. ສະນັ້ນ ຈະໄປເອົາຈົກນ້ອຍຢູ່ສາງມ້ຽນເຄື່ອງດຽວນີ້.

> **챙기다** ກຽມພ້ອມ, ດູແລ
> - 시험을 보러 갈 때에는 신분증을 챙겨야 해요. ເວລາ ໄປເສັງ ຕ້ອງໄດ້ກຽມພ້ອມບັດປະຈຳໂຕ.
> - 부모님이 집에 안 계시면 제가 동생들을 챙깁니다. ຖ້າພໍ່ແມ່ ບໍ່ຢູ່ເຮືອນ ຂ້ອຍຕ້ອງໄດ້ດູແລນ້ອງ.

> **얼른** ດຽວນີ້, ໄວໆນີ້.
> - 라면은 식기 전에 얼른 먹어야 맛있어요. ໝີ່ ຕ້ອງກິນໄວໆ ກ່ອນມັນຈະເຢັນຈຶ່ງແຊບ.
> - 시험을 볼 때에는 한국어가 얼른 생각이 나지 않아요. ເວລາເຂົ້າຫ້ອງເສັງ ພາສາເກົາຫຼີ ຄິດບໍ່ອອກໄວ.



ບາຣູ ກັບ ມິນຊູ ກຳລັງສົນທະນາກັນ; ກ່ອນອື່ນຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

1. 리리 씨는 오늘 무슨 일을 할 거예요? ລີລີ ໃນມື້ນີ້ ຈະເຮັດວຽກຫຍັງ?
2. 리리 씨는 왜 창고에 가려고 해요? ລີລີ ຕ້ອງໄປສາງເກັບເຄື່ອງ ຍ້ອນຫຍັງ?

정답 1. 고구마 캐는 일을 할 거예요. 2. 괭이를 가지러 창고에 가려고 해요.



## 어휘 1 ຄຳສັບ 1

### 농업 1 ກະສິກຳ 1

ສຳນວນ ທີ່ກ່ຽວຂ້ອງກັບກະສິກຳ ມີຫຍັງແດ່ ພວກເຮົາໄປຮຽນຮູ້ນຳກັນເບິ່ງບໍ?

| 논<br>ທົ່ງນາ | 밭<br>ທົ່ງ | 농장<br>ຟາມ | 과수원<br>ສວນໝາກໄມ້ | 비닐하우스<br>ເຮືອນແກ້ວ |
|---|---|---|---|---|
| 낫<br>ກ່ຽວ | 호미<br>ຈົກສັ້ນ | 괭이<br>ຈົກນ້ອຍ | 곡괭이<br>ຈົກ | 삽<br>ຊ້ວນ |
| 모종삽<br>ຊ້ວນມື | 갈퀴<br>ຄາດ | 쇠스랑<br>ຊ້ວນສາງ | 호스<br>ທໍ່ຢາງ | 물뿌리개<br>ບົວທົດນ້ຳ |
| 파종 상자<br>ຖາດໃສ່ເບ້ຍໄມ້ | 농약 분무기<br>ເຄື່ອງສີດນ້ຳຢາ | 경운기<br>ເຄື່ອງຈັກປູກ | 콤바인<br>ເຄື່ອງຈັກເກັບກ່ຽວ | |



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 사진을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.



① ② ③ ④ ⑤

㉠ 모종삽 ㉡ 쇠스랑 ㉢ 경운기 ㉣ 갈퀴 ㉤ 낫

정답 ① ㉤ ② ㉠ ③ ㉣ ④ ㉡ ⑤ ㉢



## 문법 1 ໄວຍາກອນ 1 -는데요

G45-1

'-는데요' ມັນຖືກໃຊ້ເພື່ອຖ່າຍທອດເຖິງເບື້ອງຫລັງ ຫຼື ສະຖານະການໃດໜຶ່ງ ແລະໃຊ້ຕື່ມທ້າຍຄຳກຳມະໄດ້ເລີຍ ໂດຍບໍ່ຈຳແນກວ່າຄຳກຳມະລົງທ້າຍດ້ວຍຕົວສະກົດ ຫຼືບໍ່.

| 동사(ຄຳກຳມະ) | 형용사(ຄຳຄຸນນາມ) | | 명사(ຄຳນາມ) |
|---|---|---|---|
| **-는데요** | 자음(ພະຍັນຊະນະ) → **-은데요** | 모음(ສະຫຼະ) → **-ㄴ데요** | **인데요** |
| 먹다 → 먹**는데요**<br>오다 → 오**는데요** | 많다 → 많**은데요** | 크다 → **큰데요** | 사람 → 사람**인데요**<br>친구 → 친구**인데요** |

- 농약을 쳐야 **하는데요**. 농약 분무기가 어디에 있는지 모르겠어요.
  ຕ້ອງໄດ້ໃສ່ຢາຂ້າສັດຕູພືດ. ແຕ່ບໍ່ຮູ້ວ່າ ເຄື່ອງສີດຢາຂ້າສັດຕູພືດຢູ່ໃສ?
- 가: 사과 상자들을 트럭에 다 **실었는데요**. 좀 봐 주세요. ແຕ່ບໍ່ຮູ້ວ່າ ເຄື່ອງສີດຢາຂ້າສັດຕູພືດຢູ່ໃສ?
  나: 그래요. 잠깐만 기다리세요. ແມ່ນບໍ? ຖ້າບຶດໜຶ່ງເດີ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

✔ 'ລະຫວ່າງ '-는데/(으)ㄴ데' ກັບ '-는데요/(으)ㄴ데요/인데요'

'-는데' ທີ່ຕື່ມ '요' ໃສ່ ແມ່ນມີຄວາມໝາຍດຽວກັນກັບ '-는데'. ເຊິ່ງວ່າ '요' ມັນສະແດງໃຫ້ເຫັນວ່າປະໂຫຍກດັ່ງກ່າວສິ້ນສຸດແລ້ວ ແລະ ຈຳແນກວ່າມັນບໍ່ກ່ຽວຂ້ອງກັບປະໂຫຍກຫຼັງ. ຫາກບໍ່ມີ '요' ທັງສອງປະໂຫຍກກໍຈະເຊື່ອມເຂົ້າກັນເປັນປະໂຫຍກດຽວ.

- 밖에 비가 많이 **오는데요**. 창문을 닫을까요? ຢູ່ນອກຝົນຕົກແຮງ. ອັດປະຕູບໍ?
- 모니카 씨, 날씨도 **좋은데** 우리 오늘 놀러 갈까요? ໂມນິກາ, ມື້ນີ້ ອາກາດດີ ເຮົາໄປຫຼິ້ນບໍ?
- 이 음식이 **불고기인데요**. 정말 맛있어요. ອາຫານນີ້ ແມ່ນບຸລໂກກີ. ແຊບຫຼາຍໆ.



ເຂົ້າໃຈການໃຊ້ '-는데요' ແລ້ວບໍ? ສະນັ້ນ, ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການ ຂຽນສຳນວນທີ່ເໝາະສົມໃສ່ບ່ອນຫວ່າງຕໍ່ໄປນີ້.

2. '-는데요'를 사용해서 대화를 완성하세요. ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ '-는데요'.

1) 가: ____________________. 괭이 어디 있어요? [고구마를 캐야 하다 ຂຸດມັນດ້າງຂຶ້ນ]
   나: 아까 제가 쓰고 창고에 뒀어요. ຂ້ອຍໄດ້ນຳໃຊ້ມັນ ແລະ ເກັບມ້ຽນໄວ້ ຢູ່ທີ່ສາງເກັບເຄື່ອງ.

2) 가: ____________________. 호스가 없네요. [물을 줘야 하다 ຕ້ອງໄດ້ຫົດນ້ຳ]
   나: 제가 찾아 줄게요. ຂ້ອຍ ຈະໄປຊອກໃຫ້.

3) 가: ____________________. 같이 할 수 있어요? [파종상자를 옮겨야 하다 ຕ້ອງໄດ້ເຄື່ອຍຍ້າຍ ຖາດໃສ່ເບ້ຍ]
   나: 그럼요. 같이 해요. ຖ້າແນວນັ້ນ. ເຮັດນຳກັນ.

정답 1) 고구마를 캐야 하는데요 2) 물을 줘야 하는데요 3) 파종상자를 옮겨야 하는데요

## 대화 2 ບົດສົນທະນາ 2

Track 140



ລີລີ ແລະ ແມ່ເຖົ້າເຈົ້າຂອງຟາມ ກຳລັງສົນທະນາກັນ. ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

주인 아주머니 오늘 고생 많았어요. 내일은 밭에 비료를 뿌릴 거니까 준비 좀 해 줘요.
ມື້ນີ້ ເຮັດວຽກໜັກຫຼາຍແລ້ວ. ມື້ອື່ນ ຈະຊີດຢາໃສ່ຝຸ່ນ ຟາມ ສະນັ້ນ, ຈົ່ງກະກຽມທຸກຢ່າງໃຫ້ພ້ອມ.

리 리 비료요? 모종은 다음 주에 심을 건데 벌써 비료를 뿌려요?
ໃສ່ຝຸ່ນບໍ? ພວກເຮົາຈະລົງເມັດປູກອາທິດໜ້າ ຈະຊີດຢາໃສ່ຝຸ່ນແລ້ວບໍ?

주인 아주머니 모종을 심기 전에 뿌려야 돼요. 비료를 먼저 뿌리고 일주일쯤 지난 후에 심어야 모종이 잘 자라거든요.
ກ່ອນອື່ນ ຕ້ອງຊີດຢາໃສ່ຝຸ່ນ ແລ້ວປະມານອາທິດໜຶ່ງ ຈຶ່ງລົງເມັດປູກ ມັນຈຶ່ງງາມ

리 리 아, 그렇군요. 제가 들어가서 내일 쓸 비료 잘 챙겨 놓을게요.
ອາ. ແມ່ນແລ້ວ. ຂ້ອຍຈະກັບໄປເພື່ອກະກຽມໃສ່ຝຸ່ນ ໃນມື້ອື່ນໃຫ້ດີ.

> **벌써** ແລ້ວ, ຮຽບຮ້ອຍແລ້ວ
> - 벌써 금요일이에요.
>   ແມ່ນວັນສຸກແລ້ວ.
> - 회의 준비를 벌써 다 했어요?
>   ການກະກຽມກອງປະຊຸມ ແມ່ນເຮັດຮຽບຮ້ອຍແລ້ວບໍ?

> **쯤** -ປະມານ
> - 일주일쯤 후에 다시 연락을 주세요.
>   ປະມານຫຼັງອາທິດໜຶ່ງ ຈົ່ງຕິດຕໍ່ອີກເທື່ອໜຶ່ງ.
> - 내일 2시쯤 만날까요?
>   ມື້ອື່ນ ປະມານ 2 ໂມງ ພົບກັນບໍ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 언제 비료를 뿌리려고 해요? ຈະຊີດຢາໃສ່ຝຸ່ນ ເມື່ອໃດ?
2. 모종은 언제 심으려고 해요? ຈະລົງແກ່ນປູກ ເມື່ອໃດ?

정답 1. 내일 뿌리려고 해요. 2. 다음 주에 심으려고 해요.

**Tip 곡류** ພືດທີ່ເປັນເມັດ



**벼** ເຂົ້າເປືອກ



**보리** ເຂົ້າບາເລ



**밀** ເຂົ້າຟາງ



**콩** ຖົ່ວ



## 어휘 2 ຄຳສັບ 2    농업 2 ກະສິກຳ 2



ສຳນວນກ່ຽວກັບ ກະສິກຳວ່າ ມີຫຍັງແດ່ບໍ? ພວກເຮົາໄປກວດກາເບິ່ງນຳກັນບໍ?



키우다/기르다/재배하다
ລ້ຽງ/ປູກ/ເພາະ



거두다/수확하다
ເກັບກ່ຽວ



따다
ເກັບ



캐다
ຂຸດຂຶ້ນ, ຂຸດອອກ



비료를 뿌리다
ໃສ່ຝຸ່ນ



씨앗을 뿌리다
ຫວ່ານແກ່ນ



모종을 심다
ປູກເບ້ຍ



물을 주다
ຫົດນ້ຳ



거름을 주다
ໃຫ້ຝຸ່ນ



잡초를 뽑다
ເສຍຫຍ້າ



벌레를 잡다
ກຳຈັດບົ້ງ, ຂ້າບົ້ງ

농약을 치다
ຊີດຢາຂ້າແມງໄມ້



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

**2. 그림에 맞는 표현을 〈보기〉에서 골라 넣으세요.**
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




**보기**
씨앗을 뿌리다   거름을 주다   캐다
물을 주다   잡초를 뽑다

정답 1) 씨앗을 뿌리다 2) 물을 주다 3) 거름을 주다 4) 잡초를 뽑다 5) 캐다



## 문법 2 ໄວຍາກອນ 2 　 -기 전에




'-기 전에' ມັນຊີ້ບອກວ່າໃຫ້ເຮັດການກະທຳໃນປະໂຫຍກຫລັງກ່ອນຈຶ່ງລົງມືເຮັດການກະທຳປະໂຫຍກໜ້າ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ ແລະ ບໍ່ຈຳແນກວ່າ ຄຳກຳມະລົງທ້າຍດ້ວຍຕົວສະກົດ ຫຼືບໍ່.

- 비닐을 **덮기 전에** 거름을 먼저 주세요. ກ່ອນຈະປົກຫຸ້ມດ້ວຍຜ້າຢາງ ແມ່ນໃຫ້ໃສ່ປຸ໋ຍກ່ອນ.
- 가: 한국에 **오기 전에** 라오스에서 무슨 일을 했어요?
  ກ່ອນມາເກົາ ເຈົ້າໄດ້ເຮັດວຽກຫຍັງຢູ່ລາວ?
  나: 무역 회사에 다녔어요. ເຮັດຢູ່ບໍລິສັດການຄ້າ.



### 대조적 정보 ການປຽບທຽບ

ໃນພາສາເກົາຫຼີ '-기 전에' ແມ່ນໃຊ້ເຊື່ອມຕໍ່ຢູ່ລະຫວ່າງກາງຂອງສອງປະໂຫຍກ ແຕ່ໃນພາສາລາວ 'ກ່ອນ' ຈະຖືກໃຊ້ຢູ່ທາງໜ້າຂອງປະໂຫຍກ.

- 식사 **전에** ກ່ອນຮັບປະທານອາຫານ
- 수업 **전에** ກ່ອນຮຽນ
- 밥 **먹기 전에** ກ່ອນກິນເຂົ້າ
- 수업 **시작하기 전에** ກ່ອນຊິເລີ່ມຮຽນ



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

✔ ລະຫວ່າງ **'-기 전에'** ກັບ **'-(으)ㄴ 후에'**

'-기 전에' ມັນຊີ້ບອກວ່າ ໃຫ້ເຮັດການກະທຳໃນປະໂຫຍກຫຼັງກ່ອນ ປະໂຫຍກໜ້າ. ສ່ວນ '-(으)ㄴ 후에' ມັນຖືກໃຊ້ ເພື່ອຊີ້ບອກໃຫ້ເຮັດການກະທຳໃນປະໂຫຍກໜ້າກ່ອນຈຶ່ງລົງມືກະທຳໃນປະໂຫຍກຫຼັງ.

- 모종을 **심기 전에** 비료를 뿌려요. ກ່ອນປູກເບ້ຍ ໃຫ້ຫວ່ານປຸ໋ຍກ່ອນ.
- 비료를 **뿌린 후에** 모종을 심어요. ຫຼັງຈາກຫວ່ານປຸ໋ຍແລ້ວ ຈຶ່ງປູກເບ້ຍ.



ເຂົ້າໃຈການໃຊ້ '-기 전에' ແລ້ວບໍ? ສະນັ້ນ, ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ດ້ວຍການຂຽນສຳນວນທີ່ເໝາະສົມໃສ່ບ່ອນຫວ່າງ.

2. 그림을 보고 '-기 전에'를 사용해서 대화를 완성하세요.
   ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ '-기 전에'.

1) 

가: 토마토를 딸까요? ຈະເກັບໝາກເລັ່ນບໍ່?
나: 아니요, ____________________.

2)

가: 물을 줄까요? ຈະຫົດນ້ຳບໍ່?
나: 아니요, ____________________.

정답 1) 토마토를 따기 전에 농약을 치세요 2) 물을 주기 전에 잡초를 뽑으세요



## 활동 ກິດຈະກຳ

**작업을 요구할 때는 어떻게 이야기해야 할까요? 〈보기〉처럼 말해 보세요.**

ໃນການຖາມໜ້າວຽກ ຈະຕ້ອງເວົ້າແນວໃດ? ຈົ່ງເວົ້າຄືດັ່ງຕົວຢ່າງ.






잡초를 뽑아야 하는데요
지금 할 수 있어요?
ພວກເຮົາຈະຕ້ອງໄດ້ເສຍຫຍ້າ.
ພວກເຮົາສາມາດເຮັດດຽວນີ້ບໍ?



1) 

벌레를 잡다





2) 

물을 주다





3) 

거름을 주다





4) 

씨앗을 뿌리다



정답 1) 벌레를 잡아야 하는데요. 지금 할 수 있어요? 2) 물을 줘야 하는데요. 지금 할 수 있어요?
3) 거름을 줘야 하는데요. 지금 할 수 있어요? 4) 씨앗을 뿌려야 하는데요. 지금 할 수 있어요?



## 정보 ຂໍ້ມູນທົ່ວໄປ

# 한국 농촌의 사계절

### ສີ່ລະດູການ ການຜະລິດກະສິກຳ ຂອງເກົາຫຼີ



### 봄 ລະດູບານໃໝ່

농사를 지을 준비를 합니다. 비료를 뿌리고 밭을 갈아 씨를 뿌리거나 모종을 심을 준비를 합니다. 토마토, 가지, 오이, 호박, 고추 등을 심습니다.

ຊາວກະສິກອນ ແມ່ນໄດ້ມີການກະກຽມ ການປູກພືດລະດູບານໃໝ່. ພວກເຂົາໄດ້ເລີ່ມໃສ່ປຸ໋ຍ ແລະ ຄູບດິນ ເພື່ອກະກຽມການຫວ່ານເມັດ ຫຼື ປູກຕົ້ນ. ເຊິ່ງຈະປູກພືດ ເຊັ່ນ: ໝາກເລັ່ນ, ໝາກເຂືອ, ໝາກແຕງ, ໝາກອຶ ແລະ ໝາກເຜັດ.



### 여름 ລະດູຮ້ອນ

봄에 심은 채소 등을 수확합니다. 논에 농약을 뿌리고 잡초를 뽑는 작업을 계속 해야 합니다. 밭에 당근, 양파, 파 등을 심고 키웁니다. 또한 겨울철 김장에 필요한 배추도 심습니다.

ລະດູຮ້ອນ ຈະເປັນການເກັບກ່ຽວພືນຜະລິດ ຂອງລະດູບານໃໝ່. ໃນລະດູນີ້ ຍັງຈະສືບຕໍ່ໃສ່ຝຸ່ນ, ຊີດຢາຂ້າສັດຕູພືດ ແລະ ເສຍຫຍ້າ. ໃນລະດູນີ້ ຈະປູກ ກະລົດ, ຜັກບົ່ວຫົວ, ຜັກບົ່ວໃບ ແລະ ອື່ນໆ. ນອກນີ້ ຍັງປູກຜັກກາດ ສຳລັບ ເຮັດກິມຈິໃນລະດູໜາວ.



### 가을 ລະດູໃບໄມ້ຫຼົ່ນ

가을은 수확의 계절입니다. 여름철에 잘 키운 채소와 벼를 거둡니다.

ລະດູໃບໄມ້ຫຼົ່ນ ເປັນລະດູແຫ່ງການເກັບກ່ຽວ ເຊິ່ງຊາວກະສິກອນ ຈະເກັບກ່ຽວພືດຜັກ ແລະ ເຂົ້າ.



### 겨울 ລະດູໜາວ

1년 동안 사용한 농기구를 수리하고 다음 해 농사를 계획합니다. 겨울에도 비닐하우스에서 여러 가지 채소와 과일을 재배합니다.

ລະດູໜາວ ເປັນລະດູທີ່ຊາວກະສິກອນ ໄດ້ສ້ອມແປງເຄື່ອງມືການເຮັດກະສິກຳ ແລະ ວາງແຜນສຳລັບປີຕໍ່ໄປ. ແຕ່ກໍຍັງໄດ້ປູກພືດ ແລະ ໝາກໄມ້ຫຼາກຫຼາຍຊະນິດຢູ່ໃນເຮືອນແກ້ວ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນການຟັງ ຈົ່ງກວດກາເບິ່ງຮູບພາບກ່ອນ.

**[1~2] 다음 그림을 보고 알맞은 대답을 고르십시오.**
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ.

Track 141

1. 이것은 무엇입니까? ອັນນີ້ ແມ່ນຫຍັງບໍ?

① ② ③ ④

2. 이 사람은 무엇을 합니까? ຄົນນີ້ ເຮັດຫຍັງບໍ?

① ② ③ ④



ຂໍ້ 3 ແມ່ນເປັນການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ. ສ່ວນ ຂໍ້ 4 ແລະ 5 ແມ່ນເປັນການຟັງບົດສົນທະນາໜຶ່ງບົດ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

**3. 이야기를 듣고 질문에 알맞은 대답을 고르십시오.**

여자는 이제 무엇을 할 것입니까? ດຽວນີ້ ແມ່ຍິງຄົນນັ້ນ ຈະເຮັດຫຍັງ?

① 밭에 물을 줄 것입니다. ② 잡초를 뽑을 것입니다.
③ 호스를 가지고 올 것입니다. ④ 아주머니를 기다릴 것입니다.

**[4~5] 하나의 이야기를 듣고 두 개의 질문에 대답하십시오.**
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມສອງຂໍ້.

4. 내일 남자가 작업해야 하는 장소는 어디입니까? ໃນມື້ອື່ນ ສະຖານທີ່ ບ່ອນຜູ້ຊາຍຄົນນັ້ນ ຕ້ອງໄດ້ໄປເຮັດວຽກ ແມ່ນຢູ່ໃສ?

① 논 ② 밭 ③ 논과 밭 ④ 과수원

5. 내일 해야 할 작업이 아닌 것은 무엇입니까? ໃນມື້ອື່ນ ວຽກທີ່ຕໍ່ຕ້ອງເຮັດ ແມ່ນວຽກຫຍັງ?

① 
② 
③ 
④ 



### 듣기 대본 ເນື້ອໃນບົດຟັງ

1. ① 여: 경운기입니다. ມັນແມ່ນລົດໄຖ.
   ② 여: 손수레입니다. ມັນແມ່ນລໍ້ຍູ້.
   ③ 여: 콤바인입니다. ມັນແມ່ນເຄື່ອງຈັກເກັບກ່ຽວ.
   ④ 여: 트랙터입니다. ມັນແມ່ນລົດໄຖ.

2. ① 남: 거름을 주고 있습니다. ກຳລັງຫວ່ານຝຸ່ນ.
   ② 남: 농약을 치고 있습니다. ກຳລັງຊີດຢາໄລ່ແມງໄມ້.
   ③ 남: 모종을 심고 있습니다. ກຳລັງປູກເບ້ຍ.
   ④ 남: 벌레를 잡고 있습니다. ກຳລັງກຳຈັດໜອນໄມ້.

3. 여: 밭에 물을 좀 줘야 하는데요. 창고에 호스가 없네요.
   ຕ້ອງໄດ້ຫົດນ້ຳໃສ່ດິນ. ຢູ່ສາງເກັບເຄື່ອງ ບໍ່ມີບົວຫົດນ້ຳ.

   남: 아, 조금 전에 아주머니가 과수원에 물을 주려고 가지고 갔어요.
   ອາ, ຫວ່າງບໍ່ດົນມານີ້ ແມ່ເຖົ້າ ໄດ້ເອົາໄປຫົດນ້ຳ ຢູ່ສວນໝາກໄມ້.

   여: 그래요? 그럼, 물 주기 전에 밭에 잡초 좀 뽑을게요.
   ແມ່ນບໍ? ສະນັ້ນ, ຊິເສຍຫຍ້າກ່ອນ ຈະຫົດນ້ຳ.

4-5. 남: 내일은 무슨 일을 해야 해요? ມື້ອື່ນ ຕ້ອງເຮັດວຽກຫຍັງ?

   여: 논에 농약을 좀 쳐 주세요. ຈົ່ງຊີດຢາຂ້າແມງໄມ້ ໃສ່ທົ່ງນາເຂົ້າ.

   남: 네, 그럴게요. 그건 오전에 끝낼 수 있을 거 같은데, 오후에는 고구마 밭에 가서 거름을 좀 줄까요?
   ເຈົ້າ. ຈະເຮັດຕາມນັ້ນ. ວຽກນັ້ນ ຄາດວ່າຊິແລ້ວພາຍໃນຕອນເຊົ້າ. ຕອນແລງ ຊິໄປສວນມັນດ້າງ ເພື່ອຈະໃສ່ຝຸ່ນບໍ?

   여: 며칠 전에 줬으니까 거름은 안 줘도 되고요, 대신 물을 좀 주세요. 그리고 요새 벌레가 많아진 거 같은데 벌레도 좀 잡아 주고요.
   ໄດ້ໃສ່ຝຸ່ນໃນສອງສາມມື້ກ່ອນແລ້ວ ບໍ່ຜ້າວໃສ່ກໍໄດ້. ພຽງແຕ່ຫົດນ້ຳ ແລະ ກຳຈັດດ້ວງ ເພາະເຫັນວ່າມີດ້ວງເກີດຂຶ້ນຫຼາຍ.

정답 1. ③ 2. ③ 3. ② 4. ③ 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ

L-45

1. 다음을 듣고 이어지는 말로 알맞은 것을 고르십시오.
   ຈົ່ງຟັງ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ ເຊິ່ງຈະເປັນປະໂຫຍກຕໍ່ໄປ.

   ① 고구마를 많이 심었어요.
   ② 어제 줬으니까 괜찮아요.
   ③ 고구마를 심도록 하세요.
   ④ 어제 거름을 많이 샀어요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 고구마 밭에 거름을 좀 줄까요? ຈະໃສ່ຝຸ່ນ ຝານໝາກມັນດ້າງບໍ?

정답 1. ②



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເປັນການເລືອກເອົາສຳນວນທີ່ເໝາະສົມສຳລັບ ຮູບພາບ. ຈົ່ງຄິດທົບທວນ ກ່ຽວກັບພາກສ່ວນຄຳສັບ ທີ່ໄດ້ຮຽນກ່ອນໜ້າ ເພື່ອຕອບຄຳຖາມ ເຫຼົ່ານີ້.

[1~2] 다음 그림을 보고 맞는 단어나 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳສັບ ຫຼື ປະໂຫຍກທີ່ຖືກຕ້ອງ.

1. 

① 낫 ② 삽
③ 괭이 ④ 호미

2. 

① 땅을 파고 있습니다. ② 물을 주고 있습니다.
③ 고구마를 캐고 있습니다. ④ 물건을 운반하고 있습니다.



ຂໍ້ 3 ແລະ 4 ແມ່ນເປັນການເລືອກເອົາສຳສັບທີ່ເໝາະສົມ ເພື່ອໃສ່ບ່ອນຫວ່າງ ຂອງບົດສົນທະນາ. ສ່ວນຂໍ້ 5 ແມ່ນເປັນການອ່ານບົດເລື່ອງ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ. ຈົ່ງຄິດທົບທວນຄຳສັບ ແລະ ໄວຍາກອນທີ່ຮຽນຜ່ານມາ ເພື່ອຕອບຄຳຖາມເຫຼົ່ານີ້.

[3~4] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.
가: 이 파종상자를 어디에 둘까요? ຈະເອົາຖາດນີ້ໄວ້ຢູ່ໃສ?
나: 밭으로 가져갈 거니까 ___________에 실어 놓으세요.
ຂ້ອຍຈະເອົາໄປຟາມ. ສະນັ້ນ ເອົາວາງໄວ້ໃນລົດໄຖ

① 호스 ② 갈고리 ③ 경운기 ④ 물뿌리개

4.
가: 모종을 심기 전에 밭에 비료를 ___________ 돼요.
ກ່ອນທີ່ຈະປູກເບ້ຍ ຕ້ອງໄດ້ໃສ່ຝຸ່ນດິນ.
나: 네, 알겠습니다. ເຈົ້າ, ຮັບຮູ້ແລ້ວ.

① 캐야 ② 따야 ③ 심어야 ④ 뿌려야



5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

토마토는 보통 4월 말에 밭에 모종을 심습니다. 모종을 심기 전에 밭에 비료를 뿌리고 일주일 정도 기다린 후 모종을 심어야 합니다. 모종을 심고 난 후에는 물을 주고 거름도 줍니다. 토마토는 벌레가 많이 생기는 작물이라서 가끔 농약을 쳐야 합니다. 또 잡초가 생기면 잡초를 뽑아서 토마토가 잘 자랄 수 있게 해야 합니다.

ສຳລັບໝາກເລັ່ນ ແມ່ນຈະປູກເບ້ຍໃນທ້າຍເດືອນເມສາ. ກ່ອນທີ່ຈະປູກເບ້ຍ ຕ້ອງໄດ້ໃສ່ຝຸ່ນ ແລ້ວລໍຖ້າປະມານໜຶ່ງອາທິດ ຫຼັງຈາກປູກເບ້ຍແລ້ວ ຈະຕ້ອງໄດ້ຫົດນ້ຳ ແລະ ໃສ່ຝຸ່ນ. ໝາກເລັ່ນ ເປັນພືດທີ່ສາມາດເກີດມີດ້ວງ ແລະ ບົ້ງຫຼາຍ ບາງຄັ້ງ ພວກເຮົາຕ້ອງໄດ້ໃຊ້ຢາຂ້າແມງໄມ້. ພ້ອມກັບນັ້ນ ຕ້ອງໄດ້ເສຍຫຍ້າ ເພື່ອຕົ້ນໝາກເລັ່ນຈຶ່ງຈະເຕີບໂຕງາມ.

토마토를 심을 때 가장 먼저 해야 하는 일은 무엇입니까?
ເວລາປູກໝາກເລັ່ນ ວຽກທີ່ຕ້ອງເຮັດກ່ອນໝູ່ນັ້ນ ແມ່ນວຽກຫຍັງ?

① 거름을 줍니다. ② 모종을 심습니다.
③ 비료를 뿌립니다. ④ 잡초를 뽑습니다.

정답 1. ① 2. ① 3. ③ 4. ④ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

고향에 계신 어머니께 드리려고 옷을 샀습니다. 내일은 우체국에 가서 그 옷을 어머니께 ________로 보내려고 합니다.

ໄດ້ຊື້ເຄື່ອງນຸ່ງໃຫ້ແມ່ ທີ່ຢູ່ບ້ານເກີດ. ມື້ອື່ນຈະໄປ ໄປສະນີ ເພື່ອສົ່ງເຄື່ອງນຸ່ງໄປທາງໄປສະນີໃຫ້ກັບແມ່.

① 우표 ② 편지 ③ 소포 ④ 엽서

2.

저는 버스로 회사에 다니는데 ________ 시간에는 차가 많이 막힙니다. 그래서 내일부터는 지하철로 다니려고 합니다.

ຂ້ອຍຕ້ອງໄດ້ທ່ຽວໄປເຮັດວຽກ ດ້ວຍລົດເມ ໃນເວລາເຂົ້າ ຫຼື ເລີກວຽກ ລົດແມ່ນແອອັດຫຼາຍ. ສະນັ້ນ ນັບແຕ່ມື້ອື່ນ ເປັນຕົ້ນໄປ ຈະທ່ຽວເຮັດວຽກທາງລົດໄຟໃຕ້ດິນ.

① 방문 ② 교육 ③ 출퇴근 ④ 환송회

3.

저는 회사 ________에서 살고 있습니다. 많은 사람들이 함께 생활하기 때문에 규칙을 잘 지켜야 합니다.

ຂ້ອຍແມ່ນກຳລັງອາໄສຢູ່ ຫໍພັກ ຂອງບໍລິສັດ. ຍ້ອນໄດ້ໃຊ້ຊີວິດຮ່ວມກັບຫຼາຍຄົນ ຕ້ອງໄດ້ປະຕິບັດຕາມລະບຽບເປັນຢ່າງດີ.

① 기숙사 ② 자료실 ③ 상담센터 ④ 고용센터

정답 1. ③ 2. ③ 3. ①




# 더 신경 쓰도록 하자

## ພວກເຮົາ ມາເອົາໃຈໃສ່ຕື່ມກັນເທາະ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການຊອກຫາຕົ້ນເຫດຂອງບັນຫາ, ການເວົ້າກ່ຽວກັບມາດຕະການໃນການແກ້ໄຂ |
| □ ໄວຍາກອນ | -도록 하다, -게 되다 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ອຸດສາຫະກຳການລ້ຽງສັດ, ການປະມົງ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ວຽກຢູ່ສະຖານທີ່ ເຮັດວຽກຂອງອຸດສາຫະກຳລ້ຽງສັດ ແລະ ການປະມົງ |



## 대화 1 ບົດສົນທະນາ 1






ຕໍ່ໄປນີ້ແມ່ນບົດສົນທະນາລະຫວ່າງ ສຸພິກາ ແລະ ລຸງເຈົ້າຂອງຟາມ. ກ່ອນອື່ນ, ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

주인 아저씨　이걸 어쩌지. 수피카, 지난번에 바꾼 사료 말이야. 소한테 잘 안 맞는 것 같아.
ຈະເຮັດແນວໃດດີ ກັບອັນນີ້. ສຸພິກາ, ຄືວ່າມັນກ່ຽວກັບອາຫານ ທີ່ເຮົາປ່ຽນເທື່ອແລ້ວນີ້. ເບິ່ງຄືວ່າ ມັນບໍ່ຖືກກັບງົວ.

수피카　그래요? 농협중앙회에서 좋은 거 나왔다고 해서 바꾸신 거잖아요.
ແມ່ນບໍ? ລຸງໄດ້ປ່ຽນມາໃຊ້ອັນນີ້ ຍ້ອນສະຫະພັນການກະເສດລວມໝູ່ແຫ່ງຊາດເວົ້າວ່າ ມັນດີ.

주인 아저씨　추천하길래 믿고 한번 써 봤는데……. 오늘은 배까지 이렇게 불룩해지고 가스도 많이 찬 것 같아.
ຍ້ອນວ່າເຂົາແນະນຳກໍເລີຍເຊື່ອ ແລ້ວກໍລອງໃຊ້ເບິ່ງ, ແຕ່ວ່າ...
ມື້ນີ້ ທ້ອງແຮງເບັ່ງຂຶ້ນ ແລະ ເບິ່ງຄືວ່າຈະມີແກສໃນທ້ອງຫຼາຍ.

수피카　그럼, 어떻게 하죠? ສະນັ້ນ, ເຮົາຄວນເຮັດແນວໃດດີ?

주인 아저씨　우선 아무 것도 먹이지 말고 수의사부터 불러야겠어. 그리고 앞으로는 더 신경 쓰도록 하자. 소들이 고생을 많이 한 것 같아, 휴.
ເບື້ອງຕົ້ນແມ່ນ ບໍ່ຟ້າວເອົາຫຍັງ ໃຫ້ມັນກິນເທື່ອ ແລະ ກໍຕ້ອງເອີ້ນໝໍປົວສັດ ມາເບິ່ງ. ໃນຕໍ່ໜ້າ ພວກເຮົາ ມາເອົາໃຈໃສ່ຕື່ມກັນເທາະ. ງົວທຸກໂຕ ກໍຄືຈະລຳບາກ, ເຮີຍ.

**맞다** ຖືກ/ເໝາະສົມກັບ/ເຂົ້າກັບ
ສິ່ງໜຶ່ງ ຖືກ/ເຂົ້າ ກັບສິ່ງໃດສິ່ງໜຶ່ງ.
- 새로 산 신발이 발에 안 맞아서 다른 신발로 바꿨어요.
  ຍ້ອນເກີບໃໝ່ ທີ່ຊື້ມາມັນບໍ່ເຂົ້າກັບຕີນ, ຂ້ອຍເລີຍໄດ້ປ່ຽນເກີບຄູ່ໃໝ່.

**신경(을) 쓰다** ເອົາໃຈໃສ່/ເປັນຫ່ວງ
- 가: 이반 씨, 감기는 좀 어때요?
  ອີບານ, ເປັນໄຂ້ຫວັດເປັນແນວໃດແລ້ວ?
  나: 많이 나았어요. 신경 써 줘서 고마워요.
  ດີຂຶ້ນຫຼາຍແລ້ວ ຂອບໃຈທີ່ເປັນຫ່ວງເດີ້.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 아저씨는 사료를 왜 바꿨어요? ເປັນຫຍັງ ລຸງຈຶ່ງປ່ຽນອາຫານສັດ?
2. 왜 수의사를 부르려고 해요? ເປັນຫຍັງ ຈຶ່ງຈະຕ້ອງຕິດຕໍ່ຫາໝໍປົວສັດ?

정답　1. 농협중앙회에서 추천해서 바꿨어요.　2. 소에게 문제가 생겨서 수의사를 부르려고 해요.



## 어휘 1 ຄຳສັບ 1 — 축산업 ອຸດສາຫະກຳ ລ້ຽງສັດ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງທີ່ກ່ຽວກັບ ອຸດສາຫະກຳການລ້ຽງສັດ ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່?






ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




정답 1) 닭 2) 소 3) 축사 4) 돼지 5) 건초



## 문법 1 ໄວຍາກອນ 1 -도록 하다




'-도록 하다' ມັນຖືກໃຊ້ຕື່ມທ້າຍຄຳກຳມະເພື່ອສັ່ງວຽກ ຫຼື ໃຫ້ອີກຝ່າຍເຮັດຫຍັງບາງຢ່າງໃຫ້.

- 가: 먼저 먼지부터 **닦도록 하세요**. ກ່ອນອື່ນໝົດ ເຊັດຂີ້ຝຸ່ນຢູ່ໂຕະກ່ອນ.
  나: 그럼 창문을 좀 열게요. ຄັນຊັ້ນ, ຂ້ອຍຈະເປີດປ່ອງຢ້ຽມ.
- 가: 중요한 시험이니까 열심히 **준비하도록 하세요**. ເສັງຊຸດນີ້ສຳຄັນຫຼາຍ ໃຫ້ເຈົ້າຮຽນຫຼາຍໆເດີ.
  나: 네, 최선을 **다하도록 할게요**. ເຈົ້າ, ຂ້ອຍຊິພະຍາຍາມຈົນສຸດຄວາມສາມາດ.



ເຂົ້າໃຈການໃຊ້ '-도록 하다' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ສຳນວນດັ່ງກ່າວ.

2. '-도록 하다'를 사용해서 대화를 완성하세요. ຈົ່ງຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນ ໂດຍການໃຊ້ '-도록 하다'.

1) 가: 사장님, 오늘 아침에는 어떤 일을 하면 돼요? ທ້ າວໜ້າ, ມື້ນີ້ ຕອນເຊົ້າແມ່ນຕ້ອງເຮັດວຽກຫຍັງ?
   나: ______________________. [축사를 청소하다 ເຮັດອະນາໄມຄອກງົວ]

2) 가: 건초는 잘 챙겨 두었지요? ໄດ້ກອງຫຍ້າແຫ້ງປະໄວ້ແລ້ວ ແມ່ນບໍ?
   나: ______________________. [바로 확인하다 ກວດເບິ່ງທັນທີ]

3) 가: 축사에 가서 ______________________. [소 먹이를 주다 ເກືອງົວ]
   나: 네, 창고에 가서 사료 가져올게요. ເຈົ້າ, ຈະໄປເອົາອາຫານຈາກສາງເຄື່ອງມາ.

정답 1) 축사를 청소하도록 하세요 2) 바로 확인하도록 하겠습니다 3) 소 먹이를 주도록 하세요



'ພວກເຮົາລອງມາຮຽນເພີ່ມເຕີມ ອີກໜ້ອຍໜຶ່ງບໍ? ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ '-도록 하다'.

1. 가: 내일 몇 시에 출발해요? ມື້ອື່ນຈະອອກເດີນທາງຈັກໂມງ?
   나: 6시에 출발하니까 __________. ຈະເດີນທາງ 6ໂມງ, ສະນັ້ນ ກໍຢ່າມາຊ້າ.
2. 가: 부탁한 보고서는 어떻게 됐어요? ບົດລາຍງານ ທີ່ບອກໃຫ້ເຮັດໄປ ແມ່ນເປັນແນວໃດແລ້ວ?
   나: 지금 하고 있는데 저녁까지 __________. ກຳລັງເຮັດຢູ່, ແຕ່ຈະເຮັດໃຫ້ແລ້ວໃນຕອນແລງນີ້.
3. 가: 작업장이 좀 지저분한데 청소 좀 해 주세요. ບ່ອນເຮັດວຽກນີ້ຄືຮົກໜ້ອຍໜຶ່ງ, ເຮັດອະນາໄມແດ່ໜ້ອຍໜຶ່ງ.
   나: 네, 이 일만 끝내고 __________. ເຈົ້າ, ຂ້ອຍເຮັດວຽກນີ້ແລ້ວ ຈະເຮັດອະນາໄມ.

정답 1. 늦지 않도록 하세요 2. 끝내도록 할게요 3. 청소하도록 할게요

### 유용한 표현 ສຳນວນທີ່ສຳຄັນ

익숙해졌어요. ລຶ້ງ (ເຄີຍ) ແລ້ວ.

가: 한국에서 생활하는 게 힘들지요? ການອາໄສຢູ່ເກົາຫຼີ ເປັນແນວໃດ?
나: 처음에는 힘들었는데 이제 **익숙해졌어요.** ທຳອິດກໍຫຍຸ້ງຍາກ ແຕ່ວ່າດຽວນີ້ກໍ**ລຶ້ງເຄີຍແລ້ວ.**



## 대화 2 ບົດສົນທະນາ 2

Track 143



ບັດ ແລະ ຄາຣິມ ກຳລັງເຮັດວຽກຢູ່ບ່ອນເຮັດວຽກ. ທັງສອງຄົນກຳລັງເວົ້າຫຍັງຢູ່? ກ່ອນອື່ນ, ຈົ່ງຟັງບົດສົນທະນາກ່ອນສອງຄັ້ງ.

**카림** 그물 좀 미리미리 정리해 놓으라니까 또 그냥 이렇게 됐네.
ເຖິງຂ້ອຍບອກລາວວ່າ ໃຫ້ເກັບມ້ຽນໄວ້ດີໆ, ແຕ່ລາວຖິ້ມປະແຫ ໄວ້ແບບນີ້ອີກແລ້ວ.

**바트** 어디 좀 봐. 몇 번이나 말했는데 또 그런 거야? 카림 형, 이건 실수가 아니야. 이번엔 마문 씨 불러서 단단히 혼을 좀 내.
ມາເບິ່ງແມ. ເວົ້າຕັ້ງຫຼາຍເທື່ອແລ້ວ ກໍຍັງເປັນແບບນີ້ຢູ່ບໍ? ອ້າຍ ຄາຣິມ, ອັນນີ້ບໍ່ແມ່ນເຮັດຜິດແບບບັງເອີນດອກ. ເທື່ອນີ້ແມ່ນລອງເອີ້ນ ມຸນ ມາຕັກເຕືອນເບິ່ງໜ້ອຍໜຶ່ງແດ່

**카림** 한 번 쓴 그물은 다 엉켜서 다시 쓰기 어려우니까 꼭 풀어 놓으라고 했는데. 이것 때문에 오늘도 작업을 제때 못 하게 됐잖아.
ຖ້າເອົາມາໃຊ້ອີກເທື່ອໜ້າມັນກໍຍາກ; ຈຶ່ງໄດ້ບອກວ່າໃຫ້ສ້ອມແຫອອກທຸກເທື່ອ ຫຼັງຈາກໃຊ້ແລ້ວ.ຍ້ອນອັນນີ້ ຈຶ່ງເຮັດໃຫ້ເຮົາບໍ່ສາມາດ ເລີ່ມເຮັດວຽກຕາມເວລາໄດ້.

**바트** 집어등도 새로 안 갈았고, 양망기도 그대로야.
ໄຟລໍ້ປາກໍຍັງບໍ່ປ່ຽນໃໝ່ ແລະ ເຄື່ອງລາກແຫກະຄືກັນ.

**카림** 안되겠다. 당장 마문 씨 좀 불러다가 얘기를 해야겠어.
ບໍ່ໄດ້ລະແບບນີ້. ຕ້ອງເອີ້ນ ມາມຸນ ມາດຽວນີ້ເພື່ອລົມກັນກ່ອນ.

> **그냥** ພຽງແຕ່/ມີແຕ່...ຊື່ໆ
> ① ແມ່ນສິ່ງທີ່ບໍ່ມີການປ່ຽນສະຖານະພາບ ຫຼື ຍັງຄົງຢູ່ແບບນັ້ນ
> ② ບໍ່ມີຄວາມໝາຍຫຍັງ ຫຼື ບໍ່ມີເງື່ອນໄຂ
> · 가: 여기 다 쓴 공구는 제가 정리할까요?
> ໃຫ້ຂ້ອຍເກັບມ້ຽນ ອຸປະກອນທີ່ໄດ້ໃຊ້ແລ້ວບໍ?
> 나: 그냥 두세요. 이따가 다시 쓸 거예요.
> ເອົາປະໄວ້ນັ້ນແຫຼະ. ອີກຈັກໜ້ອຍກໍຈະໃຊ້ອີກ.
> · 가: 케이크는 왜 샀어요? 오늘 누구 생일이에요?
> ເປັນຫຍັງຈຶ່ງຊື້ເຄັກ? ມື້ນີ້ແມ່ນວັນເກີດໃຜບໍ?
> 나: 아니요, 먹고 싶어서 그냥 샀어요.
> ບໍ່, ຍ້ອນວ່າຢາກຊື່ໆ ກໍເລີຍຊື້.

> **당장** ດຽວນີ້/ທັນທີທັນໃດ
> · 회의에 늦지 않으려면 지금 당장 출발해야 합니다.
> ຖ້າບໍ່ຢາກໄປປະຊຸມຊ້າ, ຕ້ອງອອກເດີນທາງ ໃນຕອນນີ້.



ຄັ້ງນີ້ ລອງສວມບົດບາດເປັນ ຄາຣິມ ແລະ ບັດ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງໃຈ ຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 두 사람은 뭘 하고 있어요? ທັງສອງຄົນກຳລັງເຮັດຫຍັງ?
2. 두 사람은 왜 화가 났어요? ເປັນຫຍັງທັງສອງຄົນຈຶ່ງໃຈຮ້າຍ.

정답 1. 그물을 정리하고 있어요. 2. 동료가 일을 제대로 해 놓지 않아서 화가 났어요.

## 어휘 2 ຄຳສັບ 2 어업 ການປະມົງ



ສຳນວນທີ່ກ່ຽວຂ້ອງກັບການປະມົງ ມີຫຍັງແດ່ ລອງໄປເບິ່ງນຳກັນບໍ?

| | | | | |
|---|---|---|---|---|
| <br>그물<br>ແຫຕຶກປາ | <br>통발<br>ແນວຂັງປາ | <br>집어등<br>ໄຟລໍ້ປາ | <br>양망기<br>ເຄື່ອງລາກແຫ | <br>밧줄<br>ເຊືອກ |
| <br>쇠사슬<br>ໂສ້ | <br>고리<br>ຂໍ | 닻<br>ສະໝໍ | <br>도르래<br>ລູກລອກ/ລໍ້ໝູນ | <br>뜰채<br>ເຄື່ອງຊ້ອນປາ |
| <br>낚시 바늘<br>ເບັດຕຶກປາ | <br>부자/부표<br>ເຄື່ອງທຸ່ນເທິງໜ້ານ້ຳ | <br>바늘대<br>ເຂັມແຫ | <br>수중 펌프<br>ເຄື່ອງປັ້ມນ້ຳ | <br>수경<br>ແວ່ນຕາກັນນ້ຳ/<br>ແວ່ນຕາລອຍນ້ຳ |
| <br>갈퀴<br>ຄາດ | <br>스티로폼 상자<br>ກ່ອງໂຟມຮັກສາຄວາມເຢັນ | | | |



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 사진을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.

① ② ③ ④ ⑤

㉠ 닻 ㉡ 통발 ㉢ 부표 ㉣ 양망기 ㉤ 집어등

정답 ① ㉡ ② ㉢ ③ ㉤ ④ ㉠ ⑤ ㉣

## 문법 2 ໄວຍາກອນ 2 -게 되다




'-게 되다' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອຊີ້ບອກວ່າ ສະຖານະການໃດໜຶ່ງໄດ້ບັນລຸ ຫຼື ມີການປ່ຽນແປງໄປ ອັນເປັນຜົນມາຈາກອິດທິພົນຈາກພາຍນອກ.

- 가: 날씨 때문에 오늘도 작업을 못 **하게 되었어**. ເປັນນຳອາກາດ, ມື້ນີ້ ກໍເລີຍເຮັດວຽກບໍ່ໄດ້.
  나: 큰일이다. 내일은 좋아질까? ເປັນເລື່ອງແລ້ວ (ຈັ່ງແມ່ນບໍ່), ມື້ອື່ນຈະດີຂຶ້ນຢູ່ບໍ?
- 가: 이반 씨는 한국 음식을 잘 먹네요. ນ້ອຍ ມັກກິນອາຫານເກົາຫຼີເນາະ!
  나: 처음에는 못 먹었는데 몇 달 지나니까 잘 **먹게 되었어요**. ທຳອິດກິນບໍ່ຄ່ອຍໄດ້ ຜ່ານໄປສອງສາມເດືອນກໍລຶ້ງກິນ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

✔ ລະຫວ່າງ **'-게 되다'** ກັບ **'-아지다/어지다'**

'-게 되다' ກັບ '-아지다/어지다' ທັງສອງແມ່ນປັດໄຈທີ່ຊີ້ບອກເຖິງການປ່ຽນສະພາບຄືກັນໝົດ ແຕ່ວ່າ '-게 되다' ເນັ້ນຢູ່ທີ່ຜົນຂອງການປ່ຽນ ສ່ວນ '-아지다/어지다' ເນັ້ນທີ່ຂັ້ນຕອນຂອງການປ່ຽນ. ນອກນີ້ '-게 되다' ມັກໄປກັບຄຳກຳມະ ແຕ່ '-아지다/어지다' ແມ່ນມັກໄປກັບຄຳຄຸນນາມ.

- 날씨가 **추워졌어요.** 날씨가 추워서 일을 못 **하게 되었어요.**(○)
- 날씨가 춥게 되었어요.(X)



ເຂົ້າໃຈການໃຊ້ '-게 되다' ແລ້ວບໍ? ສະນັ້ນ, ຈົ່ງໃຊ້ສຳນວນນີ້ ເພື່ອຕື່ມໃສ່ປະໂຫຍກໃຫ້ຄົບ ຖ້ວນ.

2. 그림을 보고 '-게 되다'를 사용해서 문장을 완성하세요.
ຈົ່ງເບິ່ງຮູບພາບ ຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ '-게 되다'.

1) 
낚시를 잘 못 했는데 ______________________.
ຂ້ອຍ ເຄີຍຕຶກປາບໍ່ເປັນ, ແຕ່ວ່າ ຍ້ອນຕຶກເປັນປະຈຳ ເຮັດໃຫ້ດຽວນີ້ ຕຶກປາໄດ້ເກັ່ງແລ້ວ.

2) 
날씨가 너무 안 좋아서 ______________________.
ອາກາດບໍ່ດີຫຼາຍ ເຮັດໃຫ້ບໍ່ສາມາດຂີ່ເຮືອໄດ້.

정답 1) 자주 해서 지금은 잘하게 됐어요 2) 배를 못 타게 됐어요



ຄັ້ງນີ້ ລອງສວມບົດບາດເປັນ ຄາຣິມ ແລະ ບັດ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງໃຈ ຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 한국에 처음 왔을 때는 한국어를 잘 못했어요. 하지만 지금은한국 사람과 자주 얘기해서 ______________________.
ເວລາທີ່ຂ້ອຍມາເກົາຫຼີທຳອິດ, ຂ້ອຍເວົ້າພາສາເກົາຫຼີບໍ່ໄດ້. ແຕ່ວ່າ ດຽວນີ້ ຍ້ອນຂ້ອຍເວົ້າກັບຄົນເກົາຫຼີ ເປັນປະຈຳ ຈຶ່ງເຮັດໃຫ້ຂ້ອຍເວົ້າໄດ້ເກັ່ງ.
2. 우리 회사가 이사를 했어요. 그래서 저도 회사 근처로 ______________________.
ບໍລິສັດ ຂອງພວກເຮົາໄດ້ຍ້າຍບ່ອນ. ສະນັ້ນ ເລີຍເຮັດໃຫ້ຂ້ອຍຍ້າຍເຮືອນ ໄປຢູ່ໃກ້ບໍລິສັດນຳ.

정답 1. 잘하게 됐어요 2. 이사하게 됐어요



## 활동 ກິດຈະກຳ

**문제가 생겼을 때는 어떻게 해결하면 좋을까요? 〈보기〉처럼 말해 보세요.**

ໃນເວລາທີ່ມີບັນຫາ, ເຮົາຕ້ອງແກ້ໄຂບັນຫາແນວໃດດີ? ຈົ່ງລອງເວົ້າຄືດັ່ງຕົວຢ່າງ.

보기 ຕົວຢ່າງ



그물이 엉키다, 그물을 풀다

ແຫພັນກັນ, ມາຍແຫອອກ

그물이 모두 엉켜 있으니까
어서 그물을 풀도록 하세요.
ແຫທັງໝົດແມ່ນພັນກັນຢູ່,
ຮີບຟ້າວໄປມາຍແຫອອກໄວໆ.



1)



돼지가 먹이를 기다리다, 사료를 주다

ໝູຖ້າກິນອາຫານຢູ່, ໃຫ້ອາຫານ



2)





축사가 더럽다, 분뇨를 치우다

ຄອກງົວເປື້ອນ, ອະນາໄມຂອງເສຍ (ຂີ້-ຍ່ຽວ)



3)



양망기가 고장나다, 수리하다

ເຄື່ອງລາກແຫເພ, ແປງ



정답 1) 돼지가 먹이를 기다리니까 사료를 주도록 하세요.
2) 축사가 더러우니까 분뇨를 치우도록 하세요.
3) 양망기가 고장이 났으니까 수리하도록 하세요.



## 정보 ຂໍ້ມູນທົ່ວໄປ

# 축산업과 어업 현장의 직업

ວຽກຢູ່ສະຖານທີ່ເຮັດວຽກ ຂອງອຸດສາຫະກຳລ້ຽງສັດ ແລະ ການປະມົງ

### 축산업 ອຸດສາຫະກຳ ການລ້ຽງສັດ



**사료 배합기** ເຄື່ອງປະສົມອາຫານສັດ

사료 배합기에 사료를 투입합니다.
ໃສ່ອາຫານສັດ ໃນເຄື່ອງປະສົມອາຫານສັດ.



**스키드로더** ລົດໄຖຕັກດິນ

스키드로더로 폐기물을 치웁니다.
ອະນາໄມ ຂອງເສຍໂດຍລົດໄຖຕັກດິນ.



**축사** ຄອກລ້ຽງສັດ

축사 지붕을 점검하거나 수리합니다.
ກວດສອບ ຫຼື ສ້ອມແປງຫຼັງຄາຄອກລ້ຽງສັດ.



**분뇨 탱크** ຖັງເກັບຂີ້ສັດ

분뇨 탱크를 조작합니다.
ດຳເນີນງານ ຖັງເກັບຂອງເສຍ.

### 어업 ອຸດສະຫະກຳ ການປະມົງ



배를 타고 바다에 나가 물고기를 잡습니다.
ຂີ່ເຮືອອອກໄປທະເລແລ້ວຈັບປາ.



갯벌에서 조개나 낙지, 굴 등을 캡니다.
ຂຸດເອົາຫອຍແຄງ, ປາໝຶກ, ຫອຍນາງໂລມ ໆລໆ ຢູ່ຂີ້ຕົມຕາມຝັ່ງ.



양식장에서 물고기를 길러서 팝니다.
ລ້ຽງປາຢູ່ໜອງປາ.



염전을 만들어 소금을 생산합니다.
ຜະລິດເກືອຢູ່ນາເກືອ.



# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນຄຳຖາມກ່ຽວກັບ ການຟັງປະໂຫຍກ ແລ້ວເລືອກເອົາຮູບພາບ ທີ່ຖືກຕ້ອງ. ຈົ່ງຟັງໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~2] 그림을 보고 알맞은 것을 고르십시오.
ຈົ່ງເບິ່ງຮູບພາບ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.




1.  ① ② ③ ④

2.  ① ② ③ ④



ສຳລັບຂໍ້ 3 ແລະ 4 ແມ່ນຄຳຖາມກ່ຽວກັບການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຂໍ້ 5 ແມ່ນຄຳຖາມກ່ຽວກັບ ການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງ. ຈົ່ງກວດເບິ່ງເນື້ອໃນກ່ອນຟັງບົດສົນທະນາ.

[3~4] 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບທີ່ຖືກຕ້ອງ.

3. ① 오리를 기르고 있어요. ② 토끼를 본 적이 있어요.
   ③ 오리 농장에 가 볼까요? ④ 토끼 먹이를 사러 왔어요.

4. ① 어제 갈았어요. ② 안 갈게 됐어요.
   ③ 내일 갈 거지요? ④ 빨리 갈도록 할게요.

5. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

남자는 무엇을 확인하려고 합니까? ຜູ້ຊາຍ ແມ່ນຈະກວດສອບຫຍັງ?

① 그물 ② 통발 ③ 양망기 ④ 집어등



### 듣기 대본 ເນື້ອໃນບົດຟັງ

1. ① 여: 소를 길러요. ລ້ຽງງົວ.
   ② 여: 양을 길러요. ລ້ຽງແກະ.
   ③ 여: 닭을 길러요. ລ້ຽງໄກ່.
   ④ 여: 돼지를 길러요. ລ້ຽງໝູ.
2. ① 여: 어선을 준비해요. ກະກຽມເຮືອປະມົງ.
   ② 여: 갈퀴를 준비해요. ກະກຽມຄາດ.
   ③ 여: 통발을 준비해요. ກະກຽມແນວຂັງປາ.
   ④ 여: 그물을 준비해요. ກະກຽມແຫ.
3. 남: 수피카 씨는 농장에서 어떤 일을 해요? ສຸພິກາ ເຮັດວຽກຫຍັງຢູ່ສວນ?
4. 남: 집어등이 좀 어두운 것 같네요. 갈아야겠어요.
   ໄຟລໍ້ປາ ເບິ່ງຄືມືດໆ. ຂ້ອຍຕ້ອງປ່ຽນມັນກ່ອນ.
5. 여: 어제 작업할 때 보니까 양망기가 잘 돌아가지 않던데…….
   ມື້ວານນີ້ ເວລາເຮັດວຽກ, ຂ້ອຍເຫັນວ່າເຄື່ອງລາກແຫ ແມ່ນບໍ່ເຂົ້າມາໄດ້ດີ....
   남: 안 그래도 수리 맡겼으니까 곧 고칠 거예요. 그리고 오늘은 멀리 안 나갈 거니까 괜찮아요. 그물 엉킨 게 있는지만 좀 확인해 봅시다.
   ເຖິງເຈົ້າບໍ່ເວົ້າແນວນັ້ນ ຂ້ອຍກໍ່ຊິເອົາໄປແປງຢູ່. ມື້ນີ້ ເຮົາກໍ່ຈະບໍ່ອອກໄປໄກ ສະນັ້ນ ກໍຄືຈະບໍ່ເປັນຫຍັງ. ມີແຕ່ເຮົາລອງມາ ກວດເບິ່ງວ່າ ມີຫຍັງຄາຢູ່ແຫບໍ່.

정답 1. ① 2. ④ 3. ① 4. ④ 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ

L-46

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자가 창고에 가는 이유는 무엇입니까? ເຫດຜົນທີ່ຜູ້ຍິງ ໄປຫ້ອງມ້ຽນເຄື່ອງແມ່ນຫຍັງ?

   ① 사료를 챙겨 오려고
   ② 창고를 치워 놓으려고
   ③ 분뇨를 처리해 두려고
   ④ 건초의 상태를 알아보려고

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 리리 씨, 어제 축사 청소하고 퇴근했지요? ລີລີ, ມື້ວານນີ້ໄດ້ອະນາໄມຄອກງົວ ແລ້ວຈຶ່ງເລີກວຽກແມ່ນບໍ?
   여: 네, 깨끗이 청소하고 분뇨도 다 처리했어요. 오늘은 무슨 일을 하면 돼요?
   ເຈົ້າ, ໄດ້ອະນາໄມໃຫ້ສະອາດ ແລ້ວກໍໄດ້ມ້ຽນຂີ້-ຍ່ຽວທັງໝົດນຳ. ມື້ນີ້ ຕ້ອງເຮັດວຽກຫຍັງ?
   남: 우선 소한테 먹이를 주세요. 참, 저번에 들여 온 건초는 잘 말랐는지 모르겠네요.
   ເລີ່ມຈາກໃຫ້ອາຫານງົວກ່ອນ. ເອີ! ບໍ່ຮູ້ວ່າຫຍ້າທີ່ມາຮອດເທື່ອກ່ອນນີ້ ແມ່ນແຫ້ງແລ້ວ ຫຼື ບໍ່.
   여: 얼른 먹이부터 주고 나서 창고에 가서 건초를 확인해 볼게요.
   ຈະເລີ່ມຈາກ ໃຫ້ອາຫານງົວກ່ອນ ແລ້ວຈະໄປສາງມ້ຽນເຄື່ອງ ເພື່ອກວດເບິ່ງຫຍ້າແຫ້ງ.

정답 1. ④



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນຄຳຖາມກ່ຽວກັບ ການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ. ຈົ່ງອ່ານໃຫ້ດີ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງກັບຮູບພາບ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ.

1. 

① 부표예요. ② 어선이에요.
③ 수경이에요. ④ 바늘대예요.

2. 

① 사료를 주도록 하세요. ② 먹이를 버리도록 하세요.
③ 돼지를 기르도록 하세요. ④ 분뇨를 치우도록 하세요.



ຂໍ້ 3 ແລະ 4 ແມ່ນຄຳຖາມກ່ຽວກັບ ການເລືອກເອົາຄຳສັບທີ່ຖືກຕ້ອງໃສ່ໃນບ່ອນຫວ່າງ. ຈົ່ງອ່ານໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[3~4] 빈칸에 들어갈 가장 알맞은 단어를 고르십시오. ຈົ່ງເລືອກເອົາຄຳສັບທີ່ຖືກຕ້ອງທີ່ສຸດ ໃສ່ໃນບ່ອນຫວ່າງ.

3. 이 동네에는 소를 키우는 ________ 농가가 많아요. ຢູ່ແຖວບ້ານເຮົາ ແມ່ນມີຟາມລ້ຽງງົວຫຼາຍ.

① 양돈 ② 양우 ③ 양계 ④ 양망

4. ________은/는 조개를 캘 때 사용해요. ຄາດແມ່ນໃຊ້ໃນເວລາທີ່ຂຸດຫອຍຂຶ້ນ.

① 통발 ② 갈퀴 ③ 부표 ④ 밧줄



ຕໍ່ໄປແມ່ນຄຳຖາມກ່ຽວກັບ ການອ່ານບົດເລື່ອງແລ້ວຕອບຄຳຖາມ. ຈົ່ງຄິດທົບທວນ ສິ່ງທີ່ຮຽນຜ່ານມາ ແລ້ວລອງຕອບຄຳຖາມເບິ່ງ.

5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

축산 농가는 여름이 되면 신경 써야 할 일이 많아집니다. 가축들의 위생을 위해 아침저녁으로 축사 청소도 해야 하고, 사료의 상태도 자주 확인을 해야 합니다. 또한 가축들이 더운 여름을 건강하게 보낼 수 있도록 축사를 시원하게 유지하는 것도 중요합니다.
ໃນຟາມລ້ຽງສັດ ແມ່ນມີສິ່ງທີ່ຄວນເອົາໃຈໃສ່ຫຼາຍຂຶ້ນໃນລະດູແລ້ງ. ເພື່ອຄວາມສະອາດຂອງສັດ, ຕ້ອງມີການອະນາໄມ ຄອກທັງເຊົ້າ-ແລງ ແລະ ຕ້ອງກວດສອບສະພາບ ຂອງອາຫານຢ່າງເປັນປະຈຳນຳ. ນອກຈາກນີ້, ເພື່ອເຮັດໃຫ້ສັດມີສຸຂະພາບແຂງແຮງ. ໃນຊ່ວງລະດູແລ້ງ ການຮັກສາໃຫ້ຄອກສັດ ມີຄວາມເຢັນສະບາຍ ກໍມີຄວາມສຳຄັນ.

축산 농가가 여름에 하는 일이 아닌 것을 고르십시오.
ຈົ່ງເລືອກເອົາສິ່ງທີ່ ບໍ່ແມ່ນວຽກທີ່ຕ້ອງເຮັດ ຢູ່ຟາມລ້ຽງສັດ ໃນລະດູແລ້ງ.

① 축사 청소를 자주 하는 것 ② 가축의 위생을 점검하는 것
③ 축사를 시원하게 유지하는 것 ④ 먹이 상태를 매일 확인하는 것



정답 1. ① 2. ④ 3. ② 4. ② 5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

저는 ________에서 일을 합니다. 아침에 제일 먼저 하는 일은 물고기에게 사료를 주는 일입니다.
ຂ້ອຍເຮັດວຽກຢູ່ໜອງປາ. ສິ່ງທີ່ຕ້ອງເຮັດກ່ອນໝູ່ຕອນເຊົ້າແມ່ນວຽກໃຫ້ອາຫານປາ.

① 과수원　② 공사장
③ 양계장　④ 양식장

2.

여름에는 가축들에게 더 신경을 ________. 아침저녁으로 축사 청소도 하고 사료의 상태도 자주 점검하십시오.
ໃນລະດູແລ້ງ ຕ້ອງເອົາໃຈໃສ່ຕໍ່ສັດຫຼາຍຂຶ້ນ. ຕ້ອງອະນາໄມຄອກສັດທັງເຊົ້າ-ແລງ ແລະ ກວດກາເບິ່ງສະພາບຂອງອາຫານສັດເປັນປະຈຳນຳ.

① 꺼 봤습니다　② 꺼야 합니다
③ 써 봤습니다　④ 써야 합니다

3. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

바다에서 일할 때 사용하는 도구는 여러 가지가 있습니다. 물고기를 잡을 때 쓰는 그물, 야간작업을 할 때 필요한 집어등, 그물을 끌어 올리는 양망기 등이 있습니다.
ອຸປະກອນ ທີ່ໃຊ້ໃນເວລາເຮັດວຽກ ຢູ່ທະເລແມ່ນມີຫຼາຍຢ່າງ. ມີແຫທີ່ໃຊ້ໃນເວລາຕຶກປາ, ໄຟລໍ້ປາທີ່ຈຳເປັນໃນເວລາເຮັດວຽກກາງຄືນ, ເຄື່ອງລາກແຫທີ່ໃຊ້ໄວ້ດຶງແຫຂຶ້ນ ແລະ ອື່ນໆ.

① 농업 도구　② 건설업 도구
③ 어업 도구　④ 축산업 도구

정답 1. ④ 2. ④ 3. ③



### 발음 ການອອກສຽງ




**ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.**

ໃນກໍລະນີທີ່ທາງຫຼັງ ຂອງຄຳທີ່ບໍ່ອອກສຽງ ມີຄຳທີ່ບໍ່ອອກສຽງຕາມມາ, ຄຳທີ່ບໍ່ອອກສຽງທີ່ຕາມມານັ້ນ ຈະອອກສຽງເປັນສຽງເນັ້ນ.

(1) 식당, 속담, 꽃집
(2) 답장, 옆집, 국수, 꽃가게
(3) 교실에 책상이 있어요.
(4) 메일에 답장이 없어요.



# 재고를 파악하는 것이 중요해요

ສິ່ງສຳຄັນທີ່ສຸດ ກໍຄືຮູ້ວ່າຈຳນວນສິນຄ້າທີ່ຄ້າງຢູ່ໃນໂຮງງານ

**학습 안내**
ຄຳແນະນຳ ໃນການຮຽນ

- ☐ ຈຸດປະສົງໃນການຮຽນ — ໜ້າທີ່ການດູແລຮັກສາ, ການເວົ້າຜິດພາດ ໃນການເຮັດວຽກ.
- ☐ ໄວຍາກອນ — -는 것이 중요하다, -(으)ㄹ 것이다
- ☐ ຄຳສັບ ແລະ ສຳນວນຄຳເວົ້າ — ການດູແລສິນຄ້າ, ການຜະລິດຜິດພາດ
- ☐ ຂໍ້ມູນກ່ຽວກັບວັດທະນາທຳ — ການຊົມເຊີຍຍ້ອງຍໍ ໃນບ່ອນເຮັດວຽກ



## 대화 1 ບົດສົນທະນາ 1



Track 145



ຕໍ່ໄປ ແມ່ນບົດສົນທະນາກັນ ຂອງຜູ້ຈັດການ ແລະ ຄານ. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

**관리자** 오늘 출고할 상품은 모두 준비됐지요?
ມື້ນີ້ ຈະໄດ້ເອົາເຄື່ອງອອກຈາກໂຮງງານ ທຸກຄົນກຽມພ້ອມແລ້ວບໍ?

**칸** 네, 이쪽에 있는 물건들이 오늘 나갈 상품입니다. 그리고 재고는 여기에 기록해 두었고요.
ເຈົ້າ, ເຄື່ອງສິນຄ້າທີ່ຢູ່ທາງເບື້ອງນີ້ ແມ່ນຈະເອົາອອກໄປໃນມື້ນີ້ ແລະ ຢູ່ນີ້ຈົດບັນທຶກການເກັບເຄື່ອງໄວ້ໃນສາງ (ໂກດັງ).

**관리자** 한번 봅시다. 음, 정리가 잘 되어 있어서 재고 파악이 쉽겠네요. 수고했어요.
ເຮັດລອງເບິ່ງນຳກັນເນາະ. ເອີ, ເພາະວ່າ ມ້ຽນລະອຽດດີ ເຮັດໃຫ້ເຂົ້າໃຈຈົດບັນທຶກໄດ້ງ່າຍດີ. ຊົມເຊີຍເດີ.

**칸** 아닙니다. 창고 정리는 재고를 파악하는 것이 중요하잖아요.
ບໍ່ເປັນຫຍັງ, ການເກັບມ້ຽນສາງ (ໂກດັງ) ແມ່ນສິ່ງສຳຄັນທີ່ສຸດ ເຮັດໃຫ້ຮູ້ຈຳນວນສິນຄ້າທີ່ຄ້າງຢູ່ໃນໂຮງງານ.

**관리자** 그래요. 그럼 칸 씨가 창고 관리 좀 신경 써 주세요. 재고도 얼마나 되는지 계속 확인해 주시고요.
ແມ່ນແລ້ວ. ສະນັ້ນ, ຄານ ຈົ່ງເອົາໃຈໃສ່ກວດເຄື່ອງ ໃນສາງໃຫ້ລະອຽດແດ່ເດີ. ສືບຕໍ່ກວດຄືນເບິ່ງວ່າເຄື່ອງໃນສາງວ່າ ມີຫຼາຍປານໃດ.

> **-고요**
> ນອກຈາກຂໍ້ມູນທີ່ກ່າວມາຂ້າງເທິງແລ້ວ, ນີ້ເປັນການສະແດງໃຫ້ເຮົາຮູ້ເຖິງ ຂໍ້ມູນເພີ່ມເຕີມອື່ນໆ ແລະ ເພື່ອຫຼີກລ່ຽງການນຳໃຊ້ພາສາແບບຊ້ຳຊ້ອນກັນທີ່ລະບຸໄວ້ກ່ອນໜ້ານີ້.
> - 가: 이 노트북 어때요?
>   ຄອມພິວເຕີ ອັນນີ້ເປັນ ແນວໃດ?
>   나: 가벼워서 좋아요. 기능도 많고요.
>   ມັກເພາະວ່າ ມັນເບົາດີ, ສາມາດຫຼິ້ນ ໄດ້ຫຼາຍຢ່າງ.
> - 가: 기숙사가 어때요?
>   ຫໍພັກ ເປັນແນວໃດ?
>   나: 조용해서 좋아요. 방도 넓고요.
>   ມັກ ເພາະວ່າງຽບສະຫງົບດີ, ຫ້ອງ ກໍກວ້າງອີກນຳ.

> **확인하다** ກວດຄືນ, ກວດກາ
> - 회의 내용을 제대로 정리했는지 확인해 주세요.
>   ເນື້ອໃນຂອງການປະຊຸມແມ່ນຕາມແບບນີ້ເລີຍບໍ ລອງກວດຄືນອີກຄັ້ງເບິ່ງ.
> - 거래처에 보낼 물건을 잘 챙겼는지 확인해야 해요.
>   ຂ້ອຍຕ້ອງກວດເບິ່ງວ່າ ວັດຖຸທີ່ສົ່ງໄປນັ້ນ ແມ່ນໄດ້ຂຶ້ນຢູ່ໃນບັນຊີແລ້ວ.



ໄດ້ຕັ້ງໃຈຟັງໃຫ້ດີ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 관리자는 무엇을 확인하고 있어요? ຜູ້ຈັດການ ກຳລັງກວດກາເບິ່ງຫຍັງ?
2. 칸 씨는 무슨 일을 해야 해요? ຄານ ຈະຕ້ອງເຮັດວຽກຫຍັງ?

정답 1. 오늘 출고할 상품을 확인하고 있어요. 2. 창고 관리와 재고 확인을 해야 해요.



## 어휘 1 ຄຳສັບ 1 창고 관리 ການຄຸ້ມຄອງສາງ

ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ສາງເກັບມ້ຽນເຄື່ອງ ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່?

| | | | |
|---|---|---|---|
| 물류 창고<br>າງເກັບເຄື່ອງ | 냉동 창고<br>ສາງເຢັນເກັບເຄື່ອງ | 컨테이너<br>ຕູ້ຄອນເທັນເນີ | |
| 입고하다<br>ເອົາເຂົ້າໄວ້ໃນສາງ | 출고하다<br>ເອົາເຄື່ອງອອກສາງ | 보관하다<br>ເກັບມ້ຽນ, ເກັບຮັກສາ | 저장하다<br>ເກັບຮັກສາ |
| 덮개를 덮다<br>ເອົາຜ້າປົດສິນຄ້າ | 온도를 유지하다<br>ຮັກສາອຸນຫະພູມໄວ້ | 재고를 파악하다<br>ກວດກາສາງ | 관리하다<br>ຈັດການ, ຄວບຄຸມ, ດູແລ |



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.



① ② ③ ④ ⑤

㉠ 컨테이너 ㉡ 입고하다 ㉢ 덮개를 덮다 ㉣ 냉동 창고 ㉤ 관리하다

정답 ① ㉣ ② ㉠ ③ ㉡ ④ ㉤ ⑤ ㉢



## 문법 1 ໄວຍາກອນ 1 -는 것이 중요하다

G47-1

ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອເນັ້ນເຖິງຄວາມຈຳເປັນທີ່ຈະຕ້ອງລົງມືກະທຳສິ່ງໃດໜຶ່ງນັ້ນ.

- 가: 식품 창고에서는 온도를 잘 **유지하는 것이 중요합니다**.
  ການຮັກສາອຸນຫະພູມໃນຫ້ອງເກັບອາຫານໃຫ້ສະໝ່ຳສະເໝີເປັນສິ່ງສຳຄັນ.
  나: 그럼 모든 식품을 같은 온도로 유지합니까? ຄັນຊັ້ນ, ອາຫານທຸກປະເພດຕ້ອງຮັກສາໄວ້ໃນອຸນຫະພູມເທົ່າໆກັນບໍ?
- 가: 밖에 있는 물건에 덮개를 덮어 뒀어요. ຂ້ອຍເອົາຟາອັດເຄື່ອງທີ່ຢູ່ນອກໄວ້.
  나: 네, 잘했어요. 물건이 파손되지 않도록 **하는 게 중요해요**.
  ເອີ, ເຮັດໄດ້ດີຫຼາຍ. ການລະວັງບໍ່ໃຫ້ເຄື່ອງຂອງເສຍຫາຍເປັນສິ່ງສຳຄັນ.



### 대조적 정보 ການປຽບທຽບ

'-는 것이/-는 게' ໃນພາສາລາວມີຄວາມໝາຍວ່າ 'ການ' ມັນຖືກໃຊ້ຢູ່ຕໍ່ໜ້າຂອງຄຳກຳມະ ແຕ່ໃນພາສາເກົາຫຼີ.
'-는 것이/-는 게' ມັນຖືກໃຊ້ຕື່ມທ້າຍຂອງຄຳກຳມະ. ທັງສອງເປັນປັດໄຈໜຶ່ງທີ່ໃຊ້ປ່ຽນຄຳກຳມະເປັນຮູບຄຳນາມ.

- 다른 나라에서 온 사람들끼리 서로 이해를 하는 것이 중요하다.
  ການເຂົ້າອົກເຂົ້າໃຈເຊິ່ງກັນ ແລະກັນຂອງຄົນທີ່ມາຈາກປະເທດອື່ນໆເປັນສິ່ງສຳຄັນ.
- 글로벌 시대에는 외국어를 배우는 것이 중요하다.
  ໃນຍຸກໂລກາວິວັດການຮຽນພາສາຕ່າງປະເທດເປັນສິ່ງສຳຄັນ.



ເຂົ້າໃຈການໃຊ້ '-는 것이 중요하다' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການນຳໃຊ້ສຳນວນຕໍ່ໄປນີ້.

**2. 그림을 보고 '-는 것이 중요하다'를 사용해서 문장을 완성하세요.**
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ '-는 것이 중요하다' ຄືດັ່ງຕົວຢ່າງ.

1) 재고를 파악하다

창고 관리는 ______________________________.
ການຄວບຄຸມສາງ ສິ່ງສຳຄັນທີ່ສຸດ ກໍຄືລະບຸສິນຄ້າ ທີ່ຢູ່ໃນສາງ.

2) 온도를 유지하다

식품을 보관할 때는 ______________________________.
ເວລາເກັບຮັກສາອາຫານ ສິ່ງສຳຄັນທີ່ສຸດ ກໍຄືການຮັກສາອຸນຫະພູມ.

3) 
덮개를 덮다

밖에 물건을 둘 때는 ______________________________.
ເວລາເອົາເຄື່ອງໄວ້ຂ້າງນອກ ສິ່ງສຳຄັນທີ່ສຸດ ຄືການປິດຟາໄວ້.

정답 1) 재고를 파악하는 것이 중요하다 2) 온도를 유지하는 것이 중요하다 3) 덮개를 덮는 것이 중요하다

## 대화 2 ບົດສົນທະນາ 2





ບາຣູ ແລະ ຈີຮຸນ ແມ່ນ ກຳລັງເຮັດວຽກ ຢູ່ບ່ອນເຮັດວຽກ. ທັງສອງຄົນນີ້ ກຳລັງຈະສົນທະນາ ຫຍັງກັນ? ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງກ່ອນ.

바 루 아! 이런 어떡하지…….
ອ່າວ! ບາດນີ້ ຈະເຮັດແນວໃດ....

지 훈 왜요? 무슨 일 있어요?
ເປັນຫຍັງ? ມີວຽກຫຍັງບໍ່?

바 루 실수로 반대쪽에 구멍을 뚫었어요. 이 원목은 못 쓰게 됐는데 어떡하죠?
ຂ້ອຍ ໄດ້ຫຼົງເຈາະຮູໄມ້ນີ້ຜິດເບື້ອງແລ້ວ. ໄມ້ອັນນີ້ ໃຊ້ບໍ່ໄດ້ແລ້ວ ບາດນີ້ ຈະເຮັດແນວໃດບໍ່?

지 훈 일이 아직 손에 익지 않아서 그런 거 같네요. 너무 속상해하지 마세요. 그건 다른 거 만들 때 쓰면 되죠, 뭐.
ເພາະວ່າ ວຽກຕົວນີ້ ເຈົ້າຍັງບໍ່ຖະນັດດີເທື່ອ. ບໍ່ຕ້ອງເສຍໃຈຫຼາຍ, ມັນຍັງສາມາດນຳໃຊ້ແນວອື່ນໄດ້ ບໍ່ເປັນຫຍັງດອກ.

바 루 재단부터 다시 하려면 시간이 많이 걸릴 텐데 …….
ຖ້າວ່າ ຈະເລີ່ມຕົ້ນໃໝ່ ແມ່ນໃຊ້ເວລາດົນເຕີບອີກ.

지 훈 같이 하면 금방 할 수 있을 거예요. 자, 다시 해 봅시다.
ຖ້າພ້ອມໃຈກັນເຮັດ ບຶດດຽວກໍແລ້ວ. ມາ! ມາພວກເຮົາມາເລີ່ມເຮັດອີກຄັ້ງໜຶ່ງ.

> **실수** ຜິດພາດ, ຫຼົງ
> - 술을 마시고 실수로 사장님께 '아저씨'라고 했어요.
>   ດື່ມເຫຼົ້າເມົາແລ້ວ ຫຼົງຮ້ອງຫົວໜ້າວ່າລຸງ.
> - 처음 이 일을 시작했을 때에는 일을 잘 몰라서 실수를 많이 했어요.
>   ເວລາເລີ່ມເຮັດວຽກຕົວນີ້ ແມ່ນບໍ່ຮູ້ວຽກຕົວນີ້ດີປານໃດ ເລີຍເຮັດໃຫ້ເກີດມີຄວາມຜິດພາດຫຼາຍ.

> **-(으)ㄹ 텐데**
> -ໜ້າຈະ.....ແຕ່, ອາດຈະ......ແຕ່
> ແມ່ນໝາຍເຖິງການຄິດ, ຄາດເດົາຂອງຜູ້ເວົ້າ ແລະ ໃຊ້ເພື່ອເປັນເນື້ອໃນຂອງປະໂຫຍກທີ່ຈະເກີດຂຶ້ນ.
> - 오늘 오후에 비가 올 텐데 우산을 가지고 가세요.
>   ມື້ນີ້ຕອນສວຍຝົນໜ້າຈະຕົກກະລຸນາຄັນຮົ່ມໄປນຳແດ່.
> - 지금 밥을 먹지 않으면 배가 고플 텐데…….
>   ຖ້າຫາກຕອນນີ້ ບໍ່ກິນເຂົ້າແລ້ວອາດຈະຫິວເຂົ້າໄດ້.



ຄັ້ງນີ້ ຈົ່ງສວມບົດບາດເປັນ ບາຣູ ກັບ ຈີຮຸນ ແລ້ວເວົ້າຕາມບົດສົນທະນາ. ໄດ້ຕັ້ງໃຈຟັງໃຫ້ດີ ແລະ ເວົ້າຕາມແລ້ວບໍ່? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 바루 씨는 무슨 실수를 했어요? ບາຣູ ເຄີຍເຮັດວຽກຫຍັງຜິດພາດບໍ່?
2. 대화 후 두 사람은 무엇을 할까요? ຫຼັງຈາກສົນທະນາກັນແລ້ວ ທັງສອງຄົນນັ້ນ ຈະເຮັດຫຍັງ?

정답 1. 구멍을 잘못 뚫었어요. 2. 재단을 할 거예요.

## 어휘 2 ຄຳສັບ 2 가구 제조 ຜະລິດເຄື່ອງເຟີນິເຈີ



ສຳນວນທີ່ກ່ຽວຂ້ອງກັບ ການຜະລິດເຟີນິເຈີ ມີຫຍັງແດ່ ລອງໄປເບິ່ງນຳກັນບໍ?



원목을 재단하다
ການຕັດໄມ້



홈을 파다
ຂຸດຮ່ອງ



구멍을 뚫다
ເຈາະອຸບມິ້ງ



연마하다/샌딩하다
ເປັນເງົາມັນ, ຄັດມັນໃຫ້ງາມຂຶ້ນ



사포질하다
ຜັດກະດາດຊາຍ



도장하다
ທາສີ



도색하다
ທາສີ, ລົງສີ



줄자
ວັດແທກ(ໄມ້ແມັດ)



직각자
ມູມສາກ



수평대
ນ້ຳທ່ຽງ



ຈົ່ງຄິດທົບທວນຄຳສັບ ຂ້າງເທິງຄືນອີກຄັ້ງໜຶ່ງ ແລ້ວຕອບຄຳຖາມຕໍ່ໄປນີ້ເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




보기 홈을 파다 원목을 재단하다 도장하다 연마하다 도색하다

정답 1) 원목을 재단하다 2) 홈을 파다 3) 연마하다 4) 도장하다 5) 도색하다

## 문법 2 ໄວຍາກອນ 2 -(으)ㄹ 것이다




'-(으)ㄹ 것이다' ມັນຊີ້ບອກການຄາດຄະເນເຖິງສິ່ງທີ່ຈະເກີດຂຶ້ນໃນອະນາຄົດ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ ຫຼື ຄຳຄຸນນາມ.

| 자음(ພະຍັນຊະນະ) → -을 것이다 | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → -ㄹ 것이다 |
|---|---|
| 먹다 → 먹을 것이다<br>읽다 → 읽을 것이다 | 보다 → 볼 것이다<br>살다 → 살 것이다 |

- 가: 도색 작업이 언제 끝날까요? ງານກົດຈະກຳຈະແລ້ວເມື່ອໃດ?
  나: 3시까지는 **끝날 거예요**. ງານກົດຈະກຳຈະແລ້ວຕອນ 3 ໂມງ.
- 내일부터 날씨가 **맑을 것이다**. ທ້ອງຟ້າຈະປອດໂປ່ງຕັ້ງແຕ່ມື້ອື່ນເປັນຕົ້ນໄປ.
- 앞으로 한국에서 일하는 외국인 근로자의 수가 **증가할 것이다**.
  ໃນອະນາຄົດຈຳນວນແຮງງານຕ່າງປະເທດທີ່ຈະມາເຮັດວຽກຢູ່ເກົາຫຼີຈະເພີ່ມຂຶ້ນ.

ໃນກໍລະນີທີ່ຄຳຕົວຕັ້ງເປັນບຸລຸດທີ 1, ໃນປະໂຫຍກນີ້ ແມ່ນຢາກຊີ້ບອກຄວາມມຸ່ງມາດປາຖະໜາຂອງຜູ້ເວົ້າ.

- 나는 오늘부터 한국어 공부를 열심히 **할 것이다**. ຕັ້ງແຕ່ມື້ອື່ນເປັນຕົ້ນໄປ ຂ້ອຍຈະຕັ້ງໃຈຮຽນພາສາເກົາຫຼີ.



ເຂົ້າໃຈການນຳໃຊ້ '-(으)ㄹ 것이다' ແລ້ວບໍ? ສະນັ້ນ, ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ສຳນວນຕໍ່ໄປນີ້.

**2. '-(으)ㄹ 것이다'를 사용해서 대화를 완성하세요.**

ຈົ່ງຕື່ມບົດສົນທະນາຕໍ່ໄປນີ້ ໃຫ້ຄົບຖ້ວນ ໂດຍການໃຊ້ '-(으)ㄹ 것이다'.

1) 가: 오늘 도장 작업을 다 끝낼 수 있을까요? ມື້ນີ້ ວຽກທາສີນີ້ ຈະສຳເລັດບໍ?
   나: 네, ______________________. [문제 없다 ບໍ່ມີບັນຫາ]

2) 가: 직각자 못 봤어요? ເຫັນໄມ້ວັດທັດແທກມູມສາກບໍ?
   나: 아마 ______________________. [저쪽에 있다 ຢູ່ພຸ້ນເດ]

3) 가: 오전에 원목 재단 작업이 다 될까요? ວຽກຕັດໄມ້ນີ້ ຈະສຳເລັດໝົດ ໃນຕອນເຊົ້ານີ້ບໍ?
   나: 12까지는 ______________________. [끝나다 ສຳເລັດ]

4) 가: 이번 주 금요일까지 이 서류를 사무실에 내야 하는 거 맞죠?
   ເອກະສານຕົວນີ້ຈະຕ້ອງສົ່ງຫ້ອງການໃນວັນສຸກນີ້ແມ່ນບໍ?
   나: 아마 ______________________. [그렇다 ແມ່ນແນວນັ້ນ]

정답 1) 문제 없을 거예요 2) 저쪽에 있을 거예요 3) 끝날 거예요 4) 그럴 거예요



### 유용한 표현 ສຳນວນທີ່ສຳຄັນ

얼굴이 좋아 보여요. ເບິ່ງໜ້າຕາ ສົດຊື່ນດີ.

가: **얼굴이 좋아 보여요**. 무슨 일 있어요? ເບິ່ງໜ້າຕາສົດຊື່ນດີແທ້. ມີຫຍັງບໍ?
나: 승진했어요. 일도 재미있고요. ໄດ້ເລື່ອນຕຳແໜ່ງ. ການເຮັດວຽກ ກໍມ່ວນຊື່ນ.



## 활동 ກິດຈະກຳ

가구 공장의 게시판입니다. 잘 읽고 질문에 답하세요.
ເປັນການປະກາດຂ່າວ ຂອງໂຮງງານເຟີນີເຈີ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

### 칭찬 게시판 ການປະກາດຂ່າວການຍ້ອງຍໍ-ຊົມເຊີຍ

바루 씨를 칭찬합니다!
의자 만들 때는 구멍을 뚫는 것이 중요한데 바루 씨가 정확한 곳에 잘 뚫었어요. 정말 멋졌어요!
ຍ້ອງຍໍຊົມເຊີຍ ບາຣູ. ເວລາແປງຕັ່ງນັ່ງສິ່ງສຳຄັນທີ່ສຸດ ກໍຄືການເຈາະຮູ ແຕ່ວ່າ ບາຣູ ເຈາະຮູໄດ້ລະອຽດແມ່ນຢໍາດີ, ເກັ່ງຫຼາຍໆ!

칸 씨를 칭찬합니다!
오후에 비가 온다고 했는데 칸 씨가 미리 원목에 덮개를 덮어 줘서 문제가 생기지 않았어요!
ຍ້ອງຍໍຊົມເຊີຍ ຄັນ! ໄດ້ຍິນວ່າ ຕອນແລງ ຈະມີຝົນຕົກລົງມາ ຄານ ໄດ້ເອົາແຜ່ນໄປປົກໄວ້ກ່ອນເລີຍ ບໍ່ເກີດບັນຫາຫຍັງຂຶ້ນ!.

민수 씨를 칭찬합니다!
탁자의 상태가 좋지 않아서 여러 번 사포질을 해야 했는데 민수 씨가 탁자를 아주 매끄럽게 만들어 줬어요.
ຍ້ອງຍໍຊົມເຊີຍ ມິນຊູ! ຍ້ອນວ່າ ໂຕະກິນ ເຂົ້າມີສະພາບບໍ່ດີ ແລະ ຕ້ອງໄດ້ໃຊ້ກະດາດຊາຍຜັດ ມິນຊູ ໄດ້ຄັດຈົນວ່າເຫຼືອມມື່ນພຸ່ນລະ.

정현 씨를 칭찬합니다!
입고된 상품이 너무 많아서 힘들었는데 정현 씨가 잘 정리해 줘서 금방 끝났어요!
ຍ້ອງຍໍຊົມເຊີຍ ຈອງຮອນ! ເຄື່ອງຢູ່ໃນສາງມີຫຼາຍສິ່ງຫຼາຍຢ່າງ ເຮັດໃຫ້ສັບສົນ ແຕ່ວ່າ ຈອງຮອນ ໄດ້ເກັບມ້ຽນເປັນຢ່າງດີ ແລະ ເຮັດໃຫ້ແລ້ວໄວ.

1. 네 사람은 왜 칭찬을 받았을까요? 맞는 그림을 연결하세요.
ເປັນຫຍັງ 4 ຄົນນັ້ນ ຈຶ່ງໄດ້ຮັບການຍ້ອງຍໍຊົມເຊີຍບໍ? ຈົ່ງຂີດເຊື່ອມຕໍ່ໃສ່ຮູບພາບທີ່ຖືກຕ້ອງ.

① 바루 ② 칸 ③ 민수 ④ 정현

㉠ 
㉡ 
㉢ 
㉣ 

정답 ①㉢ ②㉠ ③㉣ ④㉡

# 직장에서의 칭찬 노하우

## ວິທີ ທີ່ຍ້ອງຍໍ-ຊົມເຊີຍ ຢູ່ບ່ອນເຮັດວຽກ

직장에서 어떤 말을 들으면 기분이 좋을까요? 남녀 직장인 517명을 대상으로 들었을 때 가장 기분 좋은 칭찬의 말이 무엇인지 물어봤습니다. 그 결과 '오늘 정말 예쁘네요 또는 멋있네요'가 45.7%로 1위, '역시 우리 회사는 ○○ 씨가 없으면 안 돌아가요'가 25.1%로 2위, '다 ○○ 씨 덕분이죠'가 24.2%로 3위를 차지했습니다. 기타 의견으로는 '○○님, 정말 존경합니다', '동안이시네요(어려 보이세요)' 등이 있었습니다. 또한 언제 이런 칭찬을 많이 하느냐는 질문에는 '회식 자리에서 한다'는 응답이 45.5%로 가장 높았고, '평상시 틈틈이 한다'는 응답이 43.3%로 그 뒤를 이었습니다.

회사에서 성공적인 인간 관계를 만들고 싶은 직장인이라면 함께 일하는 동료와 상사를 기분 좋게 만드는 칭찬의 말을 틈틈이 하는 것도 좋은 방법이 될 것입니다.

ໃນບ່ອນເຮັດວຽກ ແມ່ນໄດ້ຍິນ ຄຳເວົ້າແບບໃດ ຈຶ່ງຈະເຮັດໃຫ້ມີຄວາມສຸກບໍ? ໄດ້ສອບຖາມພະນັກງານຊາຍ-ຍິງ ໃນບ່ອນເຮັດ ວຽກ ຈຳນວນ 517 ຄົນ ວ່າໄດ້ຍິນຄຳເວົ້າແບບໃດແລ້ວເຮັດໃຫ້ມີຄວາມສຸກຫຼາຍທີ່ສຸດ. ຜົນອອກມາຄື "ມື້ນີ້ງາມຫຼາຍ ຫຼືວ່າ ມື້ນີ້ ຫຼໍ່ຫຼາຍ" ຈຳນວນ 45.7% ເປັນອັນດັບທີ 1, "ໃນບໍລິສັດຂອງພວກເຮົາຖ້າຫາກບໍ່ມີ ○○ ແລ້ວຄົງຈະບໍ່ຂຶ້ນປານນີ້" ຈຳນວນ 25.1% ເປັນອັນດັບທີ 2, "ເປັນເພາະວ່າ ○○" ຈຳນວນ 24.2% ເປັນອັນດັບທີ 3 ຕາມລຳດັບ ແລະ ຄວາມຄິດເຫັນດ້ານອື່ນ ໆ ແມ່ນ "ທ່ານ ○○ ເປັນແບບຢ່າງດີຫຼາຍ", "ໜ້າອ່ອນເນົາເນາະ" ແລະ ມີສິ່ງອື່ນໆອີກ. ອີກຕື່ມຕົວໜຶ່ງ ຄືເມື່ອໃດຄວນຈະ ຕ້ອງຍ້ອງຍໍຊົມເຊີຍ ຄຳຕອບແມ່ນ "ເວລາມີງານຢູ່ໃນບໍລິສັດ" ມີຈຳນວນ 45.5% ເຊິ່ງແມ່ນຄຳຕອບຫຼາຍທີ່ສຸດ, ຕໍ່ມາແມ່ນ "ເວລາປົກກະຕິ ທີ່ຫວ່າງ" ເປັນອັນດັບທີ 2 ຈຳນວນ 43.3% ຕາມລຳດັບ. ຫາກເຈົ້າເປັນພະນັກງານຜູ້ໜຶ່ງ ທີ່ຈະຕ້ອງສ້າງ ຄວາມສຳພັນ ທີ່ປະສົບຜົນສຳເລັດໃນບໍລິສັດຂອງທ່ານ, ທ່ານຄວນມີວິທີກ່າວຄຳຍ້ອງຍໍຊົມເຊີຍ ກັບເພື່ອນຮ່ວມງານ ແລະ ຫົວ ໜ້າທີມງານດ້ວຍກັນ.




직장에서 들었을 때 기분 좋은 말

ຄຳເວົ້າທີ່ດີໆ ເວລາທີ່ໄດ້ຍິນໃນບ່ອນເຮັດວຽກ



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແມ່ນຄຳຖາມທີ່ຟັງກ່ຽວກັບປະໂຫຍກແລ້ວເລືອກເອົາຮູບພາບທີ່ເໝາະສົມ. ຈົ່ງຟັງໃຫ້ດີ ແລ້ວເລືອກເອົາສິ່ງທີ່ຖືກຕ້ອງ.

1. 다음 그림을 보고 알맞은 대답을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

   이것은 무엇입니까? ອັນນີ້ແມ່ນຫຍັງ?






   



ຂໍ້ 2 ຫາ 3 ແມ່ນເປັນການຟັງຄຳຖາມແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ຂໍ້ 4 ຫາ 5 ແມ່ນເປັນການຟັງການບັນຍາຍ ແລ້ວເລືອກເອົາຄຳຕອບທີ່ເໝາະສົມກັບຄຳຖາມ. ກ່ອນການ ຟັງບົດສົນທະນາ ຈົ່ງກວດເບິ່ງເນື້ອໃນຕົວຢ່າງອີກຄັ້ງໜຶ່ງກ່ອນ.

[2~3] 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

2. ① 물건이 다 들어왔어요. ② 빨리 주문을 해야겠어요.
   ③ 제품만 차에 실으면 돼요. ④ 상품 출고를 관리하는 일이에요.

3. ① 제가 먼저 할게요. ② 민수 씨가 하고 있을 거예요.
   ③ 저는 샌딩 작업을 해 봤어요. ④ 3시까지는 작업이 끝날 거예요.

[4~5] 하나의 이야기를 듣고 두 개의 질문에 대답하십시오. ຈົ່ງຟັງການບັນຍາຍໜຶ່ງບົດ ແລ້ວຕອບຄຳຖາມສອງຂໍ້.

4. 남자는 무슨 일을 했습니까? ຜູ້ຊາຍຄົນນັ້ນ ແມ່ນໄດ້ເຮັດວຽກຫຍັງ?
   ① 도색을 했습니다. ② 사포질했습니다.
   ③ 원목을 운반했습니다. ④ 원목을 재단했습니다.

5. 남자에 대한 설명으로 알맞은 것을 고르십시오. ຈົ່ງເລືອກເອົາຄຳອະທິບາຍ ທີ່ກ່ຽວຂ້ອງກັບຜູ້ຊາຍຄົນນັ້ນ.
   ① 실수를 했습니다. ② 작업에 익숙합니다.
   ③ 일을 끝내지 못했습니다. ④ 앞으로도 이 일을 할 것입니다.



### 듣기 대본 ເນື້ອໃນບົດຟັງ

1. ① 남: 줄자입니다. ໄມ້ແມັດ.
   ② 남: 직각자입니다. ໄມ້ວັນທັດແທກມູມສາກ.
   ③ 남: 수평대입니다. ເຄື່ອງແທກນ້ຳທ່ຽງ.
   ④ 남: 도르래입니다. ລູກລໍ່ອກ.
2. 여: 출고 준비는 다 끝났어요? ເອົາເຄື່ອງອອກສາງ ສຳເລັດໝົດແລ້ວບໍ?
3. 남: 지금 누가 샌딩 작업을 하고 있어요? ດຽວນີ້ ໃຜກຳລັງຄັດກະດາດຊາຍຢູ່?

4-5.

여: 원목 재단하느라고 정말 고생 많았어요. 힘들었죠?
ງານຕັດໄມ້ ແມ່ນມີຄວາມຍາກລຳບາກຫຼາຍ. ເມື່ອຍເລີຍແມ່ນບໍ?

남: 아닙니다. 선배님이 많이 도와주셔서 힘들지 않았어요. 그런데 재단이 잘 되었는지 모르겠어요. 그리고 시간도 다른 분들보다 오래 걸려서…….
ບໍ່, ເພາະວ່າ ລຸ້ນອ້າຍໄດ້ຊ່ວຍເຫຼືອຫຼາຍ ບໍ່ໄດ້ຫຍຸ້ງຍາກເລີຍ. ແຕ່ວ່າ ບໍ່ຮູ້ວິທີ ການຕັດໄມ້ ທີ່ດີ ເຮັດໃຫ້ຕ້ອງໃຊ້ເວລາດົນກວ່າຄົນອື່ນໆ.

여: 걱정 마세요. 아까 보니까 아주 잘 되었던데요. 그리고 처음이니까 시간이 많이 걸리지만 익숙해지면 빨리 할 수 있을 거예요.
ບໍ່ຕ້ອງກັງວົນຫຼາຍ, ຂ້ອຍ ເບິ່ງມື້ກີ້ ກໍເຮັດໄດ້ດີແລ້ວ; ເພາະວ່າ ເທື່ອນີ້ເປັນເທື່ອທຳອິດ ເຖິງວ່າຈະໃຊ້ເວລາດົນ ແຕ່ຖ້າຫາກລຶ້ງເຄີຍແລ້ວ ອາດຈະສາມາດເຮັດໃຫ້ໄດ້ໄວຂຶ້ນ.

남: 네, 알겠습니다. 열심히 배울게요. ເຈົ້າ, ເຂົ້າໃຈແລ້ວ. ຈະຕັ້ງໃຈພະຍາຍາມຮຽນຮູ້ຕື່ມ.

정답 1. ③ 2. ③ 3. ② 4. ④ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

L-47

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

여자는 무엇을 해야 합니까? ແມ່ຍິງຈະຕ້ອງເຮັດຫຍັງ?

① 거래처에 가야 합니다.
② 창고를 정리해야 합니다.
③ 재고를 파악해야 합니다.
④ 상품을 출고해야 합니다.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 아딧 씨, 거래처에 벌써 갔다 왔어요? ອາດິດ ໄດ້ໄປພົບລູກຄ້າມາແລ້ວບໍ?

   남: 네, 생각보다 일이 빨리 끝났어요. 수피카 씨는 창고 정리 다 했어요?
   ເຈົ້າແມ່ນແລ້ວ, ວຽກແລ້ວໄວກວ່າທີ່ຄິດ. ສຸພິກາ ຈັດແຈງສາງເຄື່ອງແລ້ວລະບໍ?

   여: 네, 재고 목록도 모두 작성해서 반장님께 보여 드렸어요. 이따가 오후에 출고만 하면 돼요.
   ເຈົ້າ, ເກັບເຄື່ອງໄວ້ໃນສາງ ແລະ ລວບລວມລາຍການເຄື່ອງທັງໝົດແລ້ວ ໃຫ້ຫົວໜ້າເບິ່ງແລ້ວ. ອີກຈັກໜ້ອຍ ຕອນສວຍກໍເອົາເຄື່ອງອອກສາງໄດ້ເລີຍ.

정답 1. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ໃນຂໍ້ທີ 1 ແມ່ນຟັງປະໂຫຍກຄໍາຖາມແລ້ວເລືອກເອົາຮູບທີ່ຖືກກັບຄໍາຖາມ. ຈົ່ງຟັງໃຫ້ດີແລ້ວເອົາສິ່ງທີ່ຖືກຕ້ອງ.

1. 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.



① 홈을 파고 있습니다. ② 조립을 하고 있습니다.
③ 사포질을 하고 있습니다. ④ 도색 작업을 하고 있습니다.



ຂໍ້ 2 ແລະ 3 ແມ່ນເປັນການເບິ່ງຮູບພາບແລ້ວເລືອກເອົາຄໍາສັບທີ່ເໝາະສົມ ຈົ່ງອ່ານໃຫ້ດີ ແລ້ວເລືອກເອົາຄໍາຕອບທີ່ຖືກຕ້ອງ.

[2~3] 빈칸에 들어갈 가장 알맞은 단어를 고르십시오. ຈົ່ງເລືອກເອົາຄໍາຕອບທີ່ເໝາະສົມທີ່ສຸດຕື່ມໃສ່ບ່ອນຫວ່າງ.

2.
창고에 식료품을 보관할 때는 알맞은 온도를 ____________ 것이 매우 중요합니다.
ເວລາເກັບຮັກສາເຄື່ອງໄວ້ໃນສາງສິ່ງສໍາຄັນທີ່ສຸດແມ່ນການປັບອຸນຫະພູມໃຫ້ຖືກຕ້ອງ.

① 가공하는 ② 냉방하는 ③ 유지하는 ④ 입고하는

3.
가구를 만들 때 제일 먼저 해야 하는 일은 바로 원목을 ______________ 일입니다. 용도에 맞게 정확한 크기로 재는 것이 중요합니다.
ເວລາຈະເຮັດເຄື່ອງເຟີນິເຈີ ສິ່ງສໍາຄັນທີ່ສຸດກໍ່ຄືການຕັດໄມ້ ແລະ ການແທກຂະໜາດໃຫ້ຖືກກໍເປັນສິ່ງສໍາຄັນ.

① 도색하는 ② 샌딩하는 ③ 조립하는 ④ 재단하는



ຂໍ້ 4 ແລະ 5 ແມ່ນອ່ານໜຶ່ງຄໍາຖາມແລ້ວຕອບຄໍາຖາມສອງຄໍາອັນ. ທົບທວນໃນສິ່ງທີ່ຮຽນຜ່ານມາແລ້ວຕອບຄໍາຖາມລຸ່ມນີ້.

[4~5] 다음 글을 읽고 물음에 답하십시오. ຈົ່ງອ່ານບົດເລື່ອງຕໍ່ໄປນີ້ແລ້ວຕອບຄໍາຖາມ.

민수 씨, 다른 곳으로 옮기게 됐다면서요? 정말 서운해요.

그동안 민수 씨 덕분에 즐겁게 일할 수 있었어요. 회사 동료들이 모두 민수 씨를 좋아하는 거 알죠? 항상 일을 빨리 끝내면 저희를 도와줬던 민수 씨를 잊지 못할 거예요. 그리고 실수를 해도 짜증내지 않고 웃는 얼굴로 받아줘서 고마워요. 민수 씨는 정말 착하고 친절해서 다른 곳에 가서도 잘 지내실 거예요. 정말 고마웠어요. 일하면서 정말 큰 힘이 됐어요. 다른 곳에 가도 늘 건강하게 잘 지내세요. 꼭 연락할게요. - 바루 씀

ມິນຊູ, ໄດ້ຍ້າຍໄປເຮັດວຽກບ່ອນອື່ນແລ້ວບໍ? ຮູ້ສຶກເສຍໃຈຫຼາຍ ໃນໄລຍະຜ່ານມາເປັນ ເພາະວ່າ ມິຊູ ຊ່ວຍເຫຼືອໃນການເຮັດວຽກ ແມ່ນມ່ວນຫຼາຍໆ. ຮູ້ດີວ່າ ເພື່ອນຮ່ວມງານ ຢູ່ບໍລິສັດ ທຸກຄົນ ກໍມັກມິນຊູ? ມິນຊູ ທຸກໆຄັ້ງ ຖ້າຫາກວຽກຕົນເອງແລ້ວໄວ ກໍມາຊ່ວຍເຫຼືອວຽກຂອງພວກເຮົາ, ພວກເຮົາ ຈະບໍ່ມີວັນ ລືມດັດຂາດ ແລະ ເຖິງວ່າ ຈະເຮັດຜິດບໍ່ເຄີຍຈົ່ມວ່າ ມີແຕ່ໄດ້ຮັບຮອຍຍິ້ມອັນນິ້ມນວນ ຕ້ອງຂໍຂອບໃຈຫຼາຍໆ. ມິຊູ ແມ່ນເປັນຄົນດີ ແລະ ມີນໍ້າໃຈເອື້ອເຟື້ອເພື່ອແຜ່; ເຖິງວ່າຈະໄປເຮັດວຽກ ຢູ່ບ່ອນອື່ນ ກໍຈະສືບຜົນສໍາເລັດ. ຕ້ອງຂໍຂອບໃຈຫຼາຍໆ. ໃນຊ່ວງທີ່ເຮັດວຽກຮ່ວມກັນ ແມ່ນມີຄວາມຮູ້ສຶກມີກໍາລັງໃຈຫຼາຍ, ເຖິງວ່າ ໄປເຮັດວຽກຢູ່ໃສ່ກໍຂໍໃຫ້ມີສຸຂະພາບແຂງແຮງ ແລະ ຈະຕ້ອງຕິດຕໍ່ຫາກັນອີກ. ຈາກ: ບາຣູ



4. 위 글에 대한 내용으로 맞는 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ຖືກກັບເນື້ອໃນຂ້າງເທິງນີ້.

① 민수 씨가 바루 씨에게 쓴 편지입니다.
② 바루 씨가 다른 회사로 가게 되었습니다.
③ 민수 씨가 바루 씨 때문에 화가 났습니다.
④ 바루 씨는 민수 씨에게 감사하고 있습니다.

5. 민수 씨에 대한 설명으로 맞는 것을 고르십시오. ຈົ່ງເລືອກເອົາຄຳອະທິບາຍ ທີ່ກ່ຽວກັບ ມິຊູ.

① 구멍을 뚫었습니다.
② 도구를 정리했습니다.
③ 실수를 하지 않습니다.
④ 동료들을 잘 도와줍니다.

정답 1. ① 2. ③ 3. ④ 4. ④ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

원목을 다듬을 때에는 여러 번 사포질을 해야 합니다. 그렇게 해야 원목의 표면을 ________ 만들 수 있습니다.
ເວລາຕົບແຕ່ງໄມ້ອອນມິກ ຈະຕ້ອງເອົາກະດາດຊາຍຖູຄືນ ຫຼາຍໆເທື່ອ. ຖ້າເຮັດແບບນັ້ນ ໄມ້ອອນມິກຈະໝື່ນ ແລະ ເປັນເງົາງາມດີ.

① 딱딱한
② 매끄러운
③ 딱딱하게
④ 매끄럽게

2.

저는 가구를 만드는 공장에서 근무하고 있습니다. 공장에서 제가 하는 일은 나무를 ________ 페인트칠을 하는 것입니다.
ຂ້ອຍເຮັດວຽກໃນໂຮງງານເຟີນິເຈີ. ວຽກທີ່ຂ້ອຍເຮັດໃນໂຮງງານ ແມ່ນວຽກຕັດໄມ້ ແລະ ທາສີ.

① 자르고
② 잘라도
③ 자르니까
④ 잘랐지만

3. 다음을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດຄວາມຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

제가 하는 일은 창고 관리입니다. 창고에 입고되는 상품과 출고되는 상품을 확인해서 기록합니다. 그리고 상품의 재고를 파악하는 것도 제 일입니다.
ວຽກທີ່ຂ້ອຍໃນໂຮງງານ ແມ່ນວຽກຄຸ້ມຄອງສາງ. ຈົດບັນທຶກເຄື່ອງສິນຄ້າເຂົ້າອອກສາງ ແລະ ວຽກເກັບເຄື່ອງມ້ຽນ ເຄື່ອງໃນສາງໃຫ້ດີງ ນັ້ນແມ່ນໜ້າວຽກຂອງຂ້ອຍ.

① 근무 조건
② 업무 내용
③ 작업 결과
④ 근무 기간

정답 1. ④ 2. ① 3. ②



# 다치지 않도록 조심하세요

ເພື່ອບໍ່ໃຫ້ໄດ້ຮັບບາດເຈັບ ຈົ່ງລະມັດລະວັງ

**학습 안내**
ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ — ເວົ້າກ່ຽວກັບຂໍ້ຄວນລະວັງ ໃນການນຳໃຊ້ເຄື່ອງຈັກເຮັດວຽກ, ການຈັດການກັບສະຖານະການ ທີ່ອັນຕະລາຍ
- □ ໄວຍາກອນ — -(으)ㄴ 적이 있다/없다, -지 않도록 조심하다
- □ ຄຳສັບ ແລະ ສຳນວນຄຳເວົ້າ — ການນຳໃຊ້ເຄື່ອງຈັກ, ການໄດ້ຮັບບາດເຈັບ ຈາກການເຮັດວຽກ
- □ ຂໍ້ມູນກ່ຽວກັບວັດທະນາທຳ — ອຸປະຕິເຫດແຮງງານ



## 대화 1 ບົດສົນທະນາ 1






ຈີຮຸນ ກຳລັງໃຫ້ການອະທິບາຍກ່ຽວກັບ ຂໍ້ຄວນລະວັງໃນເວລາເຮັດວຽກໃຫ້ແກ່ ຕວນ. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

지 훈　어! 투안 씨, 괜찮아요?
ອາ, ຕວນ ເປັນຫຍັງບໍ່?

투 안　네, 모서리 맞추려고 한 건데. 큰일 날 뻔했네요.
ເຈົ້າ, ບໍ່ເປັນຫຍັງ. ຂ້ອຍພະຍາຍາມທີ່ຈະປັບຂອບ. ແຕ່ເກືອບກາຍເປັນເລື່ອງໃຫຍ່.

지 훈　저도 프레스 작업 하다가 다친 적이 있어요. 프레스 기계가 워낙 무거우니까 조금만 방심을 해도 큰 사고가 나더라고요. 작업할 때 집중하고 특히 손 조심하고요.
ຂ້ອຍກໍຄືກັນ ໃນຂະນະທີ່ເຮັດວຽກທີ່ຕ້ອງໃຊ້ແຮງດັນ ກໍເຄີຍໄດ້ຮັບບາດເຈັບແລ້ວ. ເຄື່ອງຈັກທີ່ໃຊ້ເພື່ອດັນ ແມ່ນໜັກ ຖ້າຫາກບໍ່ໃສ່ໃຈໜ້ອຍໜຶ່ງ ອາດຈະນຳໄປສູ່ອຸປະຕິເຫດທີ່ຮ້າຍແຮງໄດ້. ສະນັ້ນ ໃນເວລາເຮັດວຽກ ຕ້ອງຕັ້ງໃຈ ໂດຍສະ ເພາະຕ້ອງໄດ້ລະວັງມື.

투 안　계속 조심했는데 잠깐 딴생각을 하는 바람에…….
ໄດ້ຕັ້ງໃຈເຮັດຢູ່ ແຕ່ຄິດລະເມີໜ້ອຍດຽວ, ກະເລີຍ......

지 훈　많이 놀란 것 같으니까 좀 쉬었다가 해요.
ເຈົ້າອາດຈະຕື່ນຫຼາຍ, ພັກກ່ອນໜ້ອຍໜຶ່ງແລ້ວຈຶ່ງເຮັດຕໍ່.

> **워낙** ຫຼາຍ
> · 이 기계는 워낙 오래돼서 바꿔야 해요.
> ເຄື່ອງຈັກນີ້ ເກົ່າຫຼາຍແລ້ວ ສະນັ້ນ ຕ້ອງໄດ້ປ່ຽນ.

> **-는 바람에** ຍ້ອນ, ຍ້ອນວ່າ
> ເປັນສຳນວນທີ່ໃຊ້ໃນກໍລະນີ ທີ່ຜິດຕິກໍາທາງໜ້ານັ້ນ ເປັນສາ ເຫດ ຫຼື ເຫດຜົນກໍໃຫ້ເກີດປະກົດການໃດໜຶ່ງຕາມມາ.
> · 길이 너무 막히는 바람에 늦었어요.
> ຍ້ອນວ່າ ເສັ້ນທາງແອ ອັດຫຼາຍ ຈຶ່ງເຮັດໃຫ້ຊ້າ.
> · 비가 오는 바람에 야유회가 취소되었어요.
> ຍ້ອນວ່າ ຝົນຕົກ ຈຶ່ງເຮັດໃຫ້ການໄປກິນເຂົ້າປ່າຖືກຍົກເລີກ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 프레스 작업을 하다가 다쳤어요?
   ຕວນ ໃນຂະນະທີ່ເຮັດວຽກທີ່ຕ້ອງໃຊ້ແຮງດັນນັ້ນ ແມ່ນໄດ້ຮັບບາດເຈັບບໍ?
2. 프레스 작업을 할 때 특히 무엇을 조심해야 해요?
   ໃນເວລາທີ່ເຮັດວຽກ ທີ່ຕ້ອງໄດ້ໃຊ້ແຮງດັນ ຕ້ອງໄດ້ລະວັງຫຍັງເປັນພິເສດ?

정답 1. 아니요, 다칠 뻔했어요. 2. 손을 조심해야 해요.



## 어휘 1 ຄຳສັບ 1 기계 작업 ການນຳໃຊ້ເຄື່ອງຈັກ



ປະເພດຂອງເຄື່ອງຈັກນັ້ນ ແມ່ນມີຫຍັງແດ່ບໍ? ພວກເຮົາລອງໄປຊອກຮູ້ນຳກັນ ກ່ຽວກັບວິທີການນຳໃຊ້ເຄື່ອງຈັກ ແລະ ສຳນວນທີ່ກ່ຽວຂ້ອງເບິ່ງບໍ?



프레스 기계
ເຄື່ອງຈັກທີ່ໃຊ້ຕັ້ມ



구부리다
ຄົດ, ໂນ້ມໃຫ້ຄົດ



찍어 내다
ຕີກາ



선반 기계
ເຄື່ອງຈັກຊ່ຽນ



갈다
ຝົນ



도려내다
ຕັດ



파내다
ເຈາະ



밀링 기계
ເຄື່ອງຈັກບົດ



깎다
ໜີບ



절단하다
ຕັດອອກ



용접하다
ເຊື່ອມ



조립하다
ປະກອບ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 기계에 맞는 작업을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບ ທີ່ຖືກຕ້ອງກັບເຄື່ອງຈັກຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ.

| 프레스 | 선반 | 밀링 | 기타 |
|---|---|---|---|
| | | | |

보기

갈다 구부리다 깎다 조립하다
절단하다 도려내다 파내다 찍어 내다

정답 프레스: 구부리다, 찍어 내다 선반: 갈다, 도려내다, 파내다 밀링: 깎다, 절단하다 기타: 조립하다

## 문법 1 ໄວຍາກອນ 1 -(으)ㄴ 적이 있다/없다

G48-1

'-(으)ㄴ 적이 있다/없다' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອຊີ້ບອກວ່າ ເຄີຍມີປະສົບການກ່ຽວກັບວຽກໃດໜຶ່ງນັ້ນ ຫຼືບໍ່.

| 자음(ພະຍັນຊະນະ) → -은 적이 있다/없다 | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → ㄴ 적이 있다/없다 |
|---|---|
| 입다 → 입은 적이 있다/없다 | 보다 → 본 적이 있다/없다<br>살다 → 산 적이 있다/없다 |

- 가: 리한 씨, 이 선반 기계를 사용할 수 있어요? ລີຮັນ, ເຈົ້າໃຊ້ໂຮງກຶງນີ້ໄດ້ບໍ?
  나: 네, 전에 **사용한 적이 있어요**. ເຈົ້າ, ຂ້ອຍເຄີຍໃຊ້ມາກ່ອນ.
- 가: 투안 씨는 이 작업복 처음 입어 보지요?
  ຕວານ, ເຈົ້ານຸ່ງເຄື່ອງພະນັກງານນີ້ເຮັດວຽກເທື່ອທຳອິດບໍ?
  나: 아니요, 전에 **입은 적이 있어요**. ບໍ່, ຂ້ອຍເຄີຍນຸ່ງມາກ່ອນ.
- 가: 바루 씨, 제주도에 간 적이 있어요? ບາລູ, ເຈົ້າເຄີຍໄປເຈຈູໂດບໍ?
  나: 아니요, **가 본 적이 없어요**. ບໍ່, ຂ້ອຍບໍ່ເຄີຍໄປ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

**✔ ລະຫວ່າງ '-(으)ㄴ 적이 있다' ກັບ '-았/었-'**

'-(으)ㄴ 적이 있다' ກັບ '-았/었-' ທັງສອງຮູບນີ້ ແມ່ນຊີ້ບອກສິ່ງທີ່ເກີດຂຶ້ນໃນອະດີດ ແຕ່ວ່າ '-(으)ㄴ 적이 있다' ເວົ້າເຖິງປະສົບການພິເສດ ຫຼື ການກະທຳໃນອະດີດ. ຖ້າຫາກບໍ່ແມ່ນຄືທີ່ກ່າວມານັ້ນ ແມ່ນໃຫ້ໃຊ້ '-았/었-' ເປັນສິ່ງທີ່ເກີດຂຶ້ນໃນອະດີດ ແລະ ສິ່ງນັ້ນໄດ້ສິ້ນສຸດໄປແລ້ວ.

- 밥을 먹은 적이 있다. (X)      밥을 **먹었다**. (O)
- 혼자 해외 여행을 **한 적이 있다**. (O)



ເຂົ້າໃຈການໃຊ້ '-(으)ㄴ 적이 있다/없다' ແລ້ວບໍ? ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

**2. 그림을 보고 '-(으)ㄴ 적이 있다/없다'를 사용해서 대화를 완성하세요.**
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ '-(으)ㄴ 적이 있다/없다'.

1)  ✕

가: 철근을 조립할 수 있어요? ເຈົ້າສາມາດປະກອບໂຄງສ້າງເຫຼັກບໍ?
나: 아니요, ______________________.
ບໍ່, ບໍ່ເຄີຍປະກອບໂຄງສ້າງເຫຼັກມາກ່ອນ.

2)  ○

가: 용접을 해 봤어요? ເຈົ້າເຄີຍເຊື່ອມເຫຼັກບໍ?
나: 네, ______________________.
ເຈົ້າ, ເຄີຍເຮັດວຽກເຊື່ອມເຫຼັກມາແລ້ວ.

3)  ○

가: 물건을 포장할 수 있어요? ເຈົ້າສາມາດເຮັດວຽກຫຸ້ມຫໍ່ໄດ້ບໍ?
나: 네, ______________________.
ເຈົ້າ, ເຄີຍເຮັດວຽກຫຸ້ມຫໍ່ມາແລ້ວ.

정답 1) 조립한 적이 없어요 2) 용접한 적이 있어요 3) 포장한 적이 있어요



## 대화 2 ບົດສົນທະນາ 2

Track 149



ຣີຮັນ ໃນຂະນະທີ່ເຮັດວຽກ ແລ້ວໄດ້ຮັບບາດເຈັບ. ຈົ່ງຟັງບົດສົນທະນາ ທີ່ຕວນ ແລະ ມີຢອງເວົ້າແນວໃດກັບ ຣີຮັນ ແລ້ວເວົ້າຕາມ.

리 한 　앗, 뜨거워!
ອະ, ຮ້ອນ!

투 안 　어, 팔에 불꽃이 튀었어요. 어떡해! 리한 씨, 움직이지 말고 가만히 있어요. 저기 미영 씨! 얼음 좀 빨리 가져다주세요.
ໄຟຜົ້ງຖືກມືເຈົ້າ. ເຮັດແນວໃດເດ ຣີຮັນ. ບໍ່ຕ້ອງເໜັງ ຢູ່ນິ່ງໆ. ມີຢອງ ຈົ່ງໄປເອົານ້ຳກ້ອນມາໃຫ້ໄວໆແດ່.

미 영 　여기 얼음이요. 우선 이걸로 진정시키고 병원부터 가야겠어요. 투안 씨, 빨리 가서 공장장님께 말씀 드리세요.
ນ້ຳກ້ອນຢູ່ນີ້. ພວກເຮົາຈະບັນເທົ່າແຜໄໝ້ ດ້ວຍນ້ຳກ້ອນກ່ອນ ແລ້ວຕ້ອງໄປໂຮງໝໍ. ຕວນ ຈົ່ງໄປແຈ້ງກັບຫົວໜ້າໄວໆ.

투 안 　네. 그리고 용접기가 아직 뜨거우니까 미영 씨도 다치지 않도록 조심하세요.
ເຈົ້າ, ເຄື່ອງເຊື່ອມນັ້ນ ມັນຍັງຮ້ອນຢູ່. ມີຢອງ ຈົ່ງລະວັງຢ່າໃຫ້ໄດ້ຮັບບາດເຈັບ.

> **가만히** ຄືງທີ່, ຢູ່ນິ່ງໆ, ຊື່ໆ
> ໃຊ້ກັບສະຖານະການທີ່ບໍ່ມີການເຄື່ອນເໜັງ ຫຼື ໝົດຄຳເວົ້າ.
> - 휴가 때 다리를 다쳐서 가만히 침대에 누워만 있었어요.
>   ຊ່ວງໄລຍະພັກຂາໄດ້ຮັບ ບາດເຈັບ ມີແຕ່ນອນຢູ່ເທິງ ຕຽງຊື່ໆ.

> **부터** ແຕ່, ຕັ້ງແຕ່
> ໃຊ້ໃນກໍລະນີ ທີ່ສິ່ງໃດໜຶ່ງໄດ້ເລີ່ມ ຫຼື ເກີດຂຶ້ນເປັນຄັ້ງທຳອິດ.
> - 우리 밥부터 먹고 다시 일을 시작할까요?
>   ພວກເຮົາເລີ່ມຕັ້ງແຕ່ກິນເຂົ້າກ່ອນ ແລ້ວເລີ່ມເຮັດວຽກເປັນແນວໃດ?
> - 청소부터 하고 빨래를 하는 게 좋겠어요.
>   ຖ້າເລີ່ມແຕ່ອານາໄມ ແລະ ຊັກ ເຄື່ອງ ມັນອາດຈະດີ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨는 어떻게 하다가 팔을 다쳤어요? ຣີຮັນ ເຮັດແນວໃດ ຈຶ່ງເຮັດໃຫ້ໄຟຖືກແຂນ?
2. 미영 씨는 투안 씨에게 무엇을 가져다주었어요? ມີຢອງ ແມ່ນໄດ້ນຳເອົາຫຍັງມາໃຫ້ຕວນ?

정답 1. 팔에 불꽃이 튀었어요. 2. 얼음을 가져다주었어요.



## 어휘 2 ຄຳສັບ 2　재해 ບາດເຈັບ ຈາກການເຮັດວຽກ

ໃນຄະນະທີ່ເຮັດວຽກ ເຄີຍໄດ້ຮັບບາດເຈັບບໍ? ພວກເຮົາລອງໄປຮຽນຮູ້ນຳກັນເບິ່ງວ່າ ການໄດ້ຮັບບາດເຈັບຈາກການເຮັດວຽກ ແລະ ສຳນວນທີ່ກ່ຽວຂ້ອງວ່າ ມີຫຍັງແດ່?



손가락이 잘리다
ນິ້ວມືຂາດ



손가락이 끼이다
ນິ້ວມືຖືກໜີບ



손가락이 베이다
ບາດນິ້ວມື



손가락이 데다
ນິ້ວມືຖືກໄຟລ້ວກ



발이 깔리다
ໜີບຕີນ



못에 찔리다
ຍ້ຽມເຫຼັກຕະປູ



유리가 박히다
ຕີນຖືກແກ້ວບາດ



화상을 입다
ຖືກໄຟໄໝ້



찰과상을 입다
ຖືກຂູດ



가스에 중독되다
ອາການເປັນພິດ





ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 맞는 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວເຊື່ອມຕໍ່ໃສ່ຄຳສັບທີ່ຖືກຕ້ອງ.

① 　② 　③ 　④ 　⑤ 

㉠ 손가락이 데다　㉡ 찰과상을 입다　㉢ 못에 찔리다　㉣ 손가락이 베이다　㉤ 손가락이 잘리다



정답 ①㉤ ②㉢ ③㉡ ④㉠ ⑤㉣

## 문법 2 ໄວຍາກອນ 2 -지 않도록 조심하다




'-지 않도록 조심하다' ມັນຊີ້ບອກໃຫ້ລະມັດລະວັງບໍ່ໃຫ້ສະຖານະການ ຫຼື ການກະທຳໃນປະໂຫຍກໜ້າເກີດຂຶ້ນ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ.

- 가: 자, 그럼 작업을 시작해 볼까요? ຄັນຊັ້ນ, ພວກເຮົາມາເລີ່ມເຮັດວຽກເລີຍບໍ?
  나: 뜨거우니까 화상을 **입지 않도록 조심하세요**. ມັນຮ້ອນເດີ, ລະວັງຢ່າໃຫ້ຖືກໄຟລວກ.
- 가: 어, 여기 유리 조각 있네. ອ້າວ, ມີເສດແກ້ວຢູ່ບ່ອນນີ້.
  나: **밟지 않도록 조심해**. 얼른 치워야겠다. ລະວັງຢ່າຢຽບເດີ. ພວກເຮົາຕ້ອງໄດ້ຮີບເກັບມ້ຽນ.

### 대조적 정보 ການປຽບທຽບ

'-도록 조심하세요' ມັນຊີ້ບອກໃຫ້ລະມັດລະວັງບໍ່ໃຫ້ສະຖານະການ ຫຼື ການກະທຳໃນປະໂຫຍກໜ້າເກີດຂຶ້ນ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ.

- 유리가 깨지지 않도록 조심하세요. ລະວັງຢ່າໃຫ້ແກ້ວແຕກ.
- 지갑을 잃어버리지 않도록 조심하세요 ລະວັງຢ່າໃຫ້ຖົງມີເສຍ.
- 길을 잃어버리지 않도록 조심하세요. ລະວັງຢ່າໃຫ້ຫຼົງທາງ.



ເຂົ້າໃນການໃຊ້ '-지 않도록 조심하다' ແລ້ວບໍ? ສະນັ້ນ, ຈົ່ງເບິ່ງຮູບພາບ ແລ້ວລອງເວົ້າເບິ່ງ ໂດຍການໃຊ້ໄວຍາກອນທີ່ຮຽນມານັ້ນ.

2. 그림을 보고 '-지 않도록 조심하다'를 사용해서 말해 보세요.
ຈົ່ງເບິ່ງຮູບພາບ ແລ້ວເວົ້າລອງເບິ່ງ ໂດຍການໃຊ້ '-지 않도록 조심하다'.

1)  ______________________________.

2)  ______________________________.

3)  ______________________________.

정답
1) 손가락이 끼이지 않도록 조심하세요
2) 유리가 박히지 않도록 조심하세요
3) 가스에 중독되지 않도록 조심하세요

### 유용한 표현 ສຳນວນທີ່ສຳຄັນ

죽을 뻔했어요. ເກືອບຕາຍ.

가: 이 많은 짐을 혼자 다 옮겼어요? ເຄື່ອງຂອງຫຼາຍຄືແນວນີ້ ຜູ້ດຽວຍ້າຍໝົດບໍ?
나: 네, **죽을 뻔했어요.** ເຈົ້າ. ເກືອບຕາຍ.



## 활동 ກິດຈະກຳ

작업을 할 때는 무엇을 조심해야 할까요? 〈보기〉처럼 주의할 것을 알려주세요.
ເວລາເຮັດວຽກ ແມ່ນຕ້ອງລະມັດລະວັງຫຍັງ? ຈົ່ງໃຫ້ຄຳເຕືອນ ກ່ຽວກັບສະຖານະການ ທີ່ອາດຈະໄດ້ຮັບບາດເຈັບໄດ້ ຄືດັ່ງຕົວຢ່າງ.








프레스 기계를 사용할 때는
손가락이 잘리지 않도록 조심하세요.
ເວລາໃຊ້ເຄື່ອງຈັກທີ່ໃຊ້ກົດ
ຕ້ອງລະມັດລະວັງນິ້ວມືບໍ່ໃຫ້ໄດ້ຮັບບາດເຈັບ.



1)  



2)  



3)  



4)  




1) 망치로 못을 박을 때는 못에 찔리지 않도록 조심하세요.
2) 밴딩기로 포장할 때는 손가락이 끼이지 않도록 조심하세요.
3) 용접할 때는 화상을 입지 않도록 조심하세요.
4) 거푸집을 설치할 때는 찰과상을 입지 않도록 조심하세요.



## 정보 ຂໍ້ມູນທົ່ວໄປ

# 작업장 사고

ອຸປະຕິເຫດໃນບ່ອນເຮັດວຽກ

### 작업장 사고 ອຸປະຕິເຫດໃນບ່ອນເຮັດວຽກ



붕괴 사고
ອຸປະຕິເຫດຕຶກຖະຫຼົ່ມ



감전 사고
ອຸປະຕິເຫດໄຟຟ້າຊ໋ອດ



추락 사고
ອຸປະຕິເຫດຕົກຈາກທີ່ສູງ



누전 사고
ອຸປະຕິເຫດໄຟຟ້າລັດວົງຈອນ



낙하 사고
ອຸປະຕິເຫດວັດຖຸແຂງຕົກໃສ່




폭발 사고
ອຸປະຕິເຫດລະເບີດແຕກ



화재 사고
ອຸປະຕິເຫດໄຟໄໝ້



가스 누출 사고
ອຸປະຕິເຫດແກັດຮົ່ວ

### 사고 발생 시 필요한 것 ສິ່ງຈຳເປັນເມື່ອເກີດອຸປະຕິເຫດ



소화기
ບັ້ງດັບເພີງ



비상벨
ກະດິ່ງສຸກເສີນ




비상구
ປະຕູທາງອອກສຸກເສີນ

### 소화기 사용 방법 ວິທີໃຊ້ບັ້ງດັບເພີງ

① 

안전핀을 뽑고
ຖອດສະລັກອອກ

② 

호스를 불쪽으로 향하고
ປິ່ນຫົວທໍ່ໄປ ໃນທິດທາງຂອງໄຟ

③ 

손잡이를 강하게 움켜쥔다
ບີບຫົວປ່ອຍ ໃນດ້າມຈັບເຂົ້າໃຫ້ແໜ້ນ.



바람이 부는 방향에서 불에 접근
ເຂົ້າຫາໄຟ ໃນທິດທາງຕົ້ນທາງຂອງລົມ



앞쪽의 불부터 소화
ໃຊ້ບັ້ງດັບເພີງດັບໄຟ ແຕ່ແປວໄຟລົງໄປ



위에서 아래로 소화
ດັບໄຟແຕ່ເທິງລົງລຸ່ມ



충분히 많은 소화기를 한번에 사용
ໃຊ້ບັ້ງດັບເພີງ ທີ່ພຽງພໍໃຊ້ພ້ອມກັນ



불씨가 남아있는지 확인
ກວດກາເບິ່ງ ສິ່ງທີ່ອາດຈະກໍໃຫ້ເກີດໄຟອີກ



사용한 소화기는 다시 충전함
ບັ້ງດັບເພີງ ທີ່ໃຊ້ແລ້ວຕ້ອງໄດ້ເຕີມ



# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແມ່ນເປັນການເບິ່ງຮູບພາບ ແລ້ວຊອກຫາຄຳສັບທີ່ກ່ຽວຂ້ອງ, ສ່ວນຂໍ້ 2 ຫາ 3 ແມ່ນເປັນການເລືອກເອົາຄຳເວົ້າທີ່ເໝາະສົມ ເພື່ອຕໍ່ໃສ່ເປັນປະໂຫຍກຕໍ່ໄປ. ກ່ອນຈະຟັງຄຳຖາມ ຈົ່ງກວດເບິ່ງຄຳຕອບກ່ອນ.

1. 다음 그림을 보고 알맞은 것을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.






① ② ③ ④

[2~3] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

2. ① 네, 할 거예요. ② 네, 하고 싶어요.
③ 네, 할 수 없어요. ④ 네, 한 적이 있어요.

3. ① 깁스를 하세요. ② 찜질을 하세요.
③ 밴드를 붙이세요. ④ 파스를 붙이세요.



ຂໍ້ 4 ແລະ 5 ແມ່ນເປັນການຟັງການເວົ້າຂອງຜູ້ຊາຍຄົນໜຶ່ງ ແລ້ວເລືອກເອົາຄຳຕອບທີ່ເໝາະ ສົມສຳລັບແຕ່ລະຄຳຖາມ. ກ່ອນການຟັງ ຈົ່ງກວດກາເບິ່ງເນື້ອໃນ ຂອງຄຳຖາມ ແລະ ຄຳຕອບ ກ່ອນອີກຄັ້ງ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມສອງຂໍ້.

4. 남자는 무슨 작업을 합니까? ຜູ້ຊາຍ ແມ່ນເຮັດວຽກຫຍັງ?

① 용접 ② 선반
③ 밀링 ④ 프레스

5. 사고를 줄이려면 어떻게 해야 합니까? ຖ້າຢາກຫຼຸດຄວາມສ່ຽງ ການເກີດອຸປະຕິເຫດ ຕ້ອງເຮັດແນວໃດ?

① 빨리 움직여야 해요. ② 자주 사용해 보면 돼요.
③ 다른 작업을 함께 해야 해요. ④ 작동 방법을 잘 알고 있어야 해요.



### 듣기 대본 ເນື້ອໃນບົດຟັງ

1. ① 여: 갈아요. ຝົນ.　　② 여: 깎아요. ບາດ.
   ③ 여: 절단해요. ຕັດອອກ.　　④ 여: 찍어 내요. ຈໍ້າກາອອກ.
2. 남: 밀링 작업을 해 본 적이 있어요? ເຈົ້າເຄີຍເຮັດວຽກບົດ ມາກ່ອນບໍ?
3. 남: 손가락이 베였어요. ນິ້ວມືຂ້ອຍບາດ.

4-5.

남: 저는 공장에서 프레스 작업을 하고 있어요. 프레스 기계는 좀 위험하지만 작동하는 방법을 잘 알고, 안전하게 사용하면 사고를 줄일 수 있어요. 일할 때 딴생각을 하거나 안전 수칙을 지키지 않으면 크게 다칠 수 있으니까 조심해야 해요. 전에 저도 다친 적이 있는데요, 정말 한순간이었어요.

ຢູ່ໂຮງງານ ຂ້ອຍແມ່ນກຳລັງເຮັດວຽກທີ່ໃຊ້ຄວາມດັນ. ເຄື່ອງຈັກທີ່ໃຊ້ຄວາມດັນນັ້ນ ຈະອັນຕະລາຍ ແຕ່ວ່າ ຖ້າຫາກຮູ້ວິທີການນຳໃຊ້ດີ ແລະ ໃຊ້ຢ່າງປອດໄພ ກໍຈະສາມາດເຮັດໃຫ້ອຸປະຕິເຫດຫຼຸດລົງ. ເວລາເຮັດວຽກ ຖ້າຫາກຄິດລະເມີ ຫຼື ບໍ່ປະຕິບັດຕາມລະບຽບຄວາມປອດໄພ ກໍຈະກໍໃຫ້ເກີດອຸປະຕິເຫດໄດ້ ສະນັ້ນ ຕ້ອງໄດ້ລະມັດລະວັງ. ກ່ອນໜ້ານີ້ ຂ້ອຍກໍເຄີຍໄດ້ຮັບບາດເຈັບມັນເກີດຂຶ້ນຢ່າງໄວວາ.

정답 1. ③ 2. ④ 3. ③ 4. ④ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

L-48

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   다음 중 들은 내용과 같은 것은 무엇입니까? ຄຳຕອບທີ່ຖືກຕ້ອງກັບເນື້ອໃນ ທີ່ໄດ້ຟັງນັ້ນ ແມ່ນຫຍັງ?

   ① 남자는 밴딩기를 점검하려고 합니다.
   ② 여자는 밴딩 작업을 모두 마쳤습니다.
   ③ 밴딩기는 전원을 켜고 점검을 해야 합니다.
   ④ 밴딩기가 뜨거우면 식힌 후에 점검해야 합니다.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 수피카 씨, 밴딩 작업은 끝났어요? ຊຸພິກາ ເຮັດວຽກແບນລົງ ສຳເລັດແລ້ວບໍ?
   여: 아니요, 밴딩기 작동이 잘 안 돼서요. 지금 점검하려고 전원을 껐어요.
   ຍັງ. ເຄື່ອງຈັກເຮັດແບນລົງ ເຮັດວຽກບໍ່ໄດ້ດີປານໃດ. ດຽວນີ້ ປິດສະວິດ ແລ້ວຊິໄປກວດເບິ່ງ.
   남: 밴딩기는 전원을 끈 후에도 뜨거우니까 좀 더 기다렸다가 점검하세요.
   ເຖິງແມ່ນວ່າ ຈະປິດສະວິດໄຟ ເຄື່ອງຈັກແບນລົງແລ້ວກໍຕາມ ເຄື່ອງຍັງຮ້ອນຢູ່ ຈົ່ງລໍຖ້າຈັກໜ້ອຍ ແລ້ວຈຶ່ງກວດເບິ່ງ.

정답 1. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວຊອກຫາສຳນວນທີ່ເໝາະສົມ. ຈົ່ງຄິດທົບທວນຄຳສັບທີ່ຮຽນກ່ອນໜ້ານີ້ ແລ້ວຕອບຄຳຖາມ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ.

1. 

① 선반 기계예요. ② 밀링 기계예요.
③ 용접 기계예요. ④ 프레스 기계예요.

2. 

① 못에 찔렸어요. ② 화상을 입었어요.
③ 유리가 박혔어요. ④ 찰과상을 입었어요.



ຂໍ້ 3 ແລະ 4 ແມ່ນເປັນການເລືອກເອົາສຳນວນ ທີ່ເໝາະສົມຕື່ມໃສ່ບ່ອນຫວ່າງ. ສຳລັບຂໍ້ 5 ແມ່ນເປັນການອ່ານບົດເລື່ອງ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

[3~4] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3. 프레스 기계로 같은 모양을 여러 개 ________ 수 있습니다.
ສາມາດນຳໃຊ້ເຄື່ອງຈັກທີ່ໃຊ້ຄວາມດັນ ຕັດເປັນຮູບຮ່າງທີ່ຫຼາກຫຼາຍ.

① 깎을 ② 파낼 ③ 구부릴 ④ 찍어 낼

4. 작업을 하다가 ________ 것을 막기 위해서는 환기를 자주 해야 합니다.
ເວລາເຮັດວຽກ ເພື່ອປ້ອງກັນອຸປະຕິເຫດແກັດສ໌ຮົ່ວ ຕ້ອງມີການລະບາຍອາກາດເລື້ອຍໆ.

① 찰과상을 입는 ② 유리가 박히는 ③ 손가락이 잘리는 ④ 가스에 중독되는

5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

공장에는 여러 종류의 기계가 있습니다. 이런 기계 덕분에 일하는 것이 더 쉬워졌지만 위험한 기계도 많아서 손가락이 잘리거나 화상을 입는 등의 사고도 종종 발생하게 되었습니다. 일을 할 때는 항상 신경을 쓰고 사고를 당하지 않도록 조심해야 합니다.
ຢູ່ໂຮງງານ ແມ່ນໄດ້ປະກອບມີເຄື່ອງຈັກທີ່ຫຼາກຫຼາຍ. ຍ້ອນເຄື່ອງຈັກເຫຼົ່ານີ້ ເຮັດໃຫ້ການເຮັດວຽກງ່າຍຂຶ້ນ ແຕ່ວ່າ ຄວາມອັນຕະລາຍຂອງເຄື່ອງຈັກກໍມີຫຼາຍເຊັ່ນດຽວກັນ ເຊັ່ນວ່າ: ບາດນິ້ວມື ຫຼື ໄຟໄໝ້. ສະນັ້ນ ພວກເຮົາຕ້ອງໄດ້ ລະມັດລະວັງ ແລະ ມີສະຕິ ໃນເວລາທີ່ເຮັດວຽກກັບເຄື່ອງຈັກເຫຼົ່ານີ້ ເພື່ອບໍ່ໃຫ້ໄດ້ຮັບບາດເຈັບ.

이 글에 대한 내용으로 맞는 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ມີເນື້ອໃນຖືກຕ້ອງກັບເນື້ອ ໃນບົດເລື່ອງນີ້.

① 공장에는 위험한 기계도 많이 있다. ② 사고가 나면 빨리 신고를 해야 한다.
③ 기계를 사용하면 일이 더 어려워진다. ④ 기계를 작동하기 전에 연습을 해야 한다.

정답 1. ① 2. ② 3. ④ 4. ④ 5. ①



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 발목을 삐어서 병원에 갔습니다. 병원에서 준 __________을/를 가지고 약국에서 약과 파스를 샀습니다.
ຍ້ອນຂໍ້ແຂ້ງໄດ້ພິກ ຈຶ່ງໄດ້ໄປໂຮງໝໍ. ໄດ້ຮັບເອົາໃບສັ່ງຢາຢູ່ໂຮງໝໍ ແລ້ວໄປຊື້ຢາ ແລະ ຟຣາດສະຕິ ຢູ່ຮ້ານຂາຍຢາ.

① 이력서　② 증명서　③ 신청서　④ 처방전

2. 젖은 손으로 전기 기계나 전선을 만지면 안 됩니다. ________ 사고가 날 수 있습니다.
ຫ້າມຈັບເຄື່ອງຈັກໄຟຟ້າ ດ້ວຍມືທີ່ປຽກ. ອຸປະຕິເຫດໄຟຟ້າຊ໋ອດສາມາດເກີດຂຶ້ນໄດ້.

① 붕괴　② 추락　③ 감전　④ 충돌

3. 작업 도구를 사용할 때에는 항상 주의해야 합니다. 특히 칼이나 절단기를 이용해서 물건을 _ 때에는 손을 다치지 않도록 조심해야 합니다.
ໃນເວລາໃຊ້ເຄື່ອງມືອຸປະກອນເຮັດວຽກ ຕ້ອງໄດ້ມີຄວາມລະມັດລະວັງ. ໂດຍສະເພາະ ການໃຊ້ມີດ ຫຼື ເຄື່ອງຈັກຕັດ ໃນເວລາຕັດວັດຖຸສິ່ງຂອງ ເພື່ອບໍ່ໃຫ້ມືໄດ້ຮັບບາດເຈັບ ຕ້ອງລະມັດລະວັງ.

① 붙일　② 자를　③ 접을　④ 그릴

4. 소화기를 __________ 우선 안전핀을 뽑아야 합니다. 그 다음 호스를 불쪽으로 향하게 하고 손잡이를 움켜쥐면 됩니다.
ຖ້າຫາກ ນຳໃຊ້ ບັ້ງດັບເພີງ ຕ້ອງໄດ້ຖອດສະລັກປ້ອງກັນ ຄວາມປອດໄພອອກ. ຫຼັງຈາກນັ້ນ ກໍເອົາທໍ່ຊີ້ໄປໃນທາງທິດຂອງໄຟ ແລ້ວກໍບີບ ສະວິດຢູ່ທີ່ດ້າມຈັບນັ້ນເຂົ້າ.

① 옮기려면　② 사용하려면　③ 옮기면서　④ 사용하면서

정답 1. ④ 2. ③ 3. ② 4. ②






### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພະຍາງທີ່ລົງທ້າຍດ້ວຍ ພະຍັນຊະນະ ‘ㄷ, ㅌ’ ແລະ ຕາມດ້ວຍສະຫຼະ ‘ㅣ[i]’ ແມ່ນຈະອອກສຽງເປັນສຽງ [ㅈ], [ㅊ] ຕາມລຳດັບ.

(1) 굳이, 맏이, 미닫이, 해돋이
(2) 같이, 밭이, 낱낱이, 붙이다
(3) 같이 식사하러 갈까요?
(4) 여기에 우표를 붙이세요.
(5) 저는 우리 집의 맏이예요.
(6) 저는 올해 1월에 해돋이를 봤어요.



# 안전화를 안 신으면 다칠 수 있어요
ຖ້າບໍ່ໃສ່ເກີບ ນິລະໄພ ແມ່ນອາດຈະສາມາດບາດເຈັບໄດ້

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການປ້ອງກັນສະຖານະການ ທີ່ອັນຕະລາຍ, ການເຕືອນກ່ຽວກັບຄວາມເປັນໄປໄດ້ ຂອງໄພອັນຕະລາຍ |
| □ ໄວຍາກອນ | -(으)ㄹ 수 있다, -기 때문에 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ອຸປະກອນປ້ອງກັນ, ອຸບັດຕິເຫດ ໃນສະຖານທີ່ເຮັດວຽກ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ພາກສ່ວນຂອງຮ່າງກາຍ ແລະ ອຸປະກອນປ້ອງກັນ |



## 대화 1 ບົດສົນທະນາ 1






ຕໍ່ໄປ ແມ່ນບົດສົນທະນາລະຫວ່າງ ອາດິດ ແລະ ຜູ້ຄຸ້ມຄອງງານ. ຜູ້ຄຸ້ມຄອງງານແມ່ນກຳລັງກວດເບິ່ງວ່າ ອາດິດໄດ້ໃຊ້ອຸປະກອນປ້ອງກັນທັງໝົດແລ້ວ ຫຼື ບໍ່. ກ່ອນອື່ນ, ຈົ່ງຟັງບົດ ສົນທະນາສອງຄັ້ງ ແລ້ວເວົ້າຕາມ.

관리자 아딧 씨, 보호구 모두 착용했지요?
ອາດິດ, ໄດ້ໃຊ້ອຸປະກອນປ້ອງກັນ ທັງໝົດແລ້ວແມ່ນບໍ?

아 딧 네, 안전모도 쓰고 안전장갑도 꼈어요.
ເຈົ້າ, ໄດ້ໃສ່ທັງໝວກນິລະໄພ ແລະ ຖົງມືນິລະໄພແລ້ວ.

관리자 좋아요. 그런데 안전모 끈은 조금 더 조이는 게 좋겠어요. 그리고 오늘은 높은 곳에서 작업해야 하니까 안전대도 꼭 착용하세요.
ດີ. ແຕ່ວ່າ ການຮັດສາຍໝວກນິລະໄພ ໃຫ້ແໜ້ນຂຶ້ນຕື່ມກໍຈະດີ. ແລະ ໃນມື້ນີ້ເຮົາກໍຈະເຮັດວຽກ ຢູ່ບ່ອນສູງ, ສະນັ້ນ ກໍຢ່າລືມໃສ່ສາຍຮັດນິລະໄພນຳ.

아 딧 네, 알겠습니다.
ເຈົ້າ, ເຂົ້າໃຈແລ້ວ.

관리자 어! 그런데 안전화는 왜 안 신었어요? 안전화를 안 신으면 발을 **다칠 수 있어요**.
ອໍ! ແຕ່ວ່າເປັນຫຍັງຄື ບໍ່ໃສ່ເກີບນິລະໄພ? ຖ້າບໍ່ໃສ່ເກີບນິລະໄພ ແມ່ນອາດ ຈະສາມາດໄດ້ຮັບບາດເຈັບຢູ່ຕີນໄດ້.

아 딧 어! **깜빡했네요**. 바로 **갈아 신을게요**.
ອໍ! ຂ້ອຍລືມໄດ້ຫັ້ນ. ຂ້ອຍ ຈະໄປປ່ຽນດຽວນີ້ເລີຍ.

> **깜빡하다** ລືມ
> ຄິດບໍ່ອອກ ຫຼື ບໍ່ທັນໃສ່ໃຈ
> · 보호구를 챙기는 것을 깜빡했어요.
> ຂ້ອຍ ລືມເອົາອຸປະກອນປ້ອງກັນມານຳ.

> **갈아 신다** ປ່ຽນ (ເກີບ)
> ໝາຍເຖິງ ການປ່ຽນໄປໃສ່ເກີບອັນອື່ນ. ໃນກໍ ລະນີທີ່ເປັນເຄື່ອງນຸ່ງແມ່ນໃສ່ '갈아입다', ກໍລະນີທີ່ເປັນປະເພດການ ຂີ່ນສິ່ງສາທາລະນະແມ່ນໃຊ້ '갈아타다'.
> · 산책할 때는 편한 신발로 갈아 신으세요.
> ໃນເວລາທີ່ໄປຍ່າງຫຼິ້ນ ແມ່ນຄວນປ່ຽນໃສ່ເກີບ ທີ່ສະດວກສະບາຍ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 아딧 씨는 무슨 보호구를 착용해야 해요? ອາດິດ ຕ້ອງໃສ່ອຸປະກອນປ້ອງກັນຫຍັງແດ່?
2. 아딧 씨는 왜 안전화를 안 신었어요? ເປັນຫຍັງ ອາດິດ ຈຶ່ງບໍ່ໄດ້ໃສ່ເກີບນິລະໄພ?

정답 1. 안전모, 안전장갑, 안전대를 착용해야 해요. 2. 안전화를 신는 것을 깜빡했어요.



## 어휘 1 ຄຳສັບ 1 — 보호구 ອຸປະກອນປ້ອງກັນ

ອຸປະກອນປ້ອງກັນ ແມ່ນມີຫຍັງແດ່? ເຮົາມາລອງເບິ່ງວ່າປະເພດຂອງອຸປະກອນປ້ອງກັນ ມີຄືແນວໃດແດ່?

| | | | |
|---|---|---|---|
| 착용하다<br>ໃສ່ | 보호복<br>ຊຸດ ນິລະໄພ | | |
| 안전모<br>ໝວກ ນິລະໄພ | 보안면<br>ໜ້າກາກ ນິລະໄພ | 용접면<br>ໜ້າກາກຈອດເຫຼັກ | 보안경<br>ແວ່ນ ຕານິລະໄພ |
| 마스크<br>ອຸປະກອນ ປິດປາກ | 귀마개<br>ແນວອັດຫູ ນິລະໄພ | 귀덮개<br>ແນວຄອບຫູ ນິລະໄພ | 안전대<br>ສາຍຮັດ ນິລະໄພ |
| 목장갑<br>ຖົງມືຜ້າສຳລັບ ໃສ່ເຮັດວຽກ | 안전장갑<br>ຖົງມື (ໜັງ) ນິລະໄພ | 안전화<br>ເກີບ ນິລະໄພ | 안전장화<br>ເກີບໂບກ ນິລະໄພ |



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

**1. 사진을 보고 알맞은 말을 연결하세요.** ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.




정답 ① ㉡ ② ㉠ ③ ㉢ ④ ㉤ ⑤ ㉣



## 문법 1 ໄວຍາກອນ 1 –(으)ㄹ 수 있다

G49-1

ມັນຊີ້ບອກຄວາມເປັນໄປໄດ້ທີ່ຈະເກີດເລື່ອງໃດໜຶ່ງຂຶ້ນ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ. ນອກນີ້ ມັນຍັງໃຊ້ໃນເວລາເວົ້າເຖິງຄວາມສາມາດນຳ.

| 자음(ພະຍັນຊະນະ) → -을 수 있다 | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → -ㄹ 수 있다 |
|---|---|
| 늦다 → **늦을 수 있다**<br>입다 → **입을 수 있다** | 다치다 → **다칠 수 있다**<br>만들다 → **만들 수 있다** |

- 가: 택시를 타고 갈까요? ຂີ່ລົດແທັກຊີໄປບໍ?
  나: 지금 차가 막히는 시간이라서 택시를 타면 더 **늦을 수 있어요**.
  ດຽວນີ້ລົດມັນຕິດ ຖ້າເຈົ້າຂີ່ລົດແທັກຊີໄປອາດຈະຊ້າກວ່າເກົ່າ.
- 가: 보안경을 안 쓰면 눈을 **다칠 수 있어요**. ຖ້າບໍ່ໃສ່ແວ່ນຕາຮັກສາສາຍຕາ ມັນອາດຈະທຳລາຍແສງຕາໄດ້.
  나: 네, 알겠습니다. 꼭 쓸게요. ເຈົ້າ, ເຂົ້າໃຈແລ້ວ. ຂ້ອຍຈະໃສ່ສະເໝີ.
- 가: 용접면을 꼭 써야 돼요? ຕ້ອງໄດ້ໃສ່ໜ້າກາກກັນແສງນີ້ແທ້ໆບໍ?
  나: 그럼요. 얼굴에 화상을 **입을 수 있어요**. ແມ່ນແລ້ວ. ມັນອາດຈະເຮັດໃຫ້ເກີດແຜໄໝ້ຢູ່ໜ້າ.

### 대조적 정보 ການປຽບທຽບ

'-(으)ㄹ 수 있다/없다' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ມີຄວາມໝາຍວ່າ 'ສາມາດ/ບໍ່ສາມາດ' ເຊິ່ງຄຳດັ່ງກ່າວນີ້ ໃນພາສາລາວແມ່ນຈະຖືກວາງຢູ່ໜ້າຂອງຄຳກຳມະ ແລະ ມີຄວາມໝາຍຄ້າຍຄືກັນກັບ '~ໄດ້'.

- 한국어를 할 수 있어요? ເຈົ້າເວົ້າພາສາເກົາຫລີໄດ້ບໍ?
- 태권도를 할 수 있어요. ເຈົ້າຫລິ້ນເທກວັນໂດໄດ້ບໍ?



ເຂົ້າໃຈການໃຊ້ '-(으)ㄹ 수 있다' ແລ້ວບໍ? ສະນັ້ນ, ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

**2. 사진을 보고 '-(으)ㄹ 수 있다'를 사용해서 대화를 완성하세요.**
ຈົ່ງເບິ່ງຮູບພາບ ແລ້ວໃຊ້ '-(으)ㄹ 수 있다' ເພື່ອຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

1) 
귀를 다치다

가: 귀마개를 꼭 해야 해요? ຕ້ອງໃສ່ແນວປິດຫູ ນິລະໄພບໍ?
나: 네. 귀마개를 안 하면 ______________________.
ເຈົ້າ, ຖ້າບໍ່ໃສ່ແນວປິດຫູ ນິລະໄພ ອາດເຮັດໃຫ້ ຫູໄດ້ຮັບບາດເຈັບໄດ້.

2) 
손을 다치다

가: 안전장갑을 꼭 해야 해요? ຕ້ອງໃສ່ຖົງມືນິລະໄພບໍ?
나: 네. 안전장갑을 안 끼면 ______________________.
ເຈົ້າ, ຖ້າບໍ່ໃສ່ຖົງມື ນິລະໄພ ອາດເຮັດໃຫ້ ມືສາມາດໄດ້ຮັບບາດເຈັບໄດ້.

3) 
발을 다치다

가: 안전화를 꼭 신어야 해요? ຕ້ອງໃສ່ເກີບ ນິລະໄພບໍ?
나: 네. 안전화를 안 신으면 ______________________.
ເຈົ້າ, ຖ້າບໍ່ໃສ່ເກີບນິລະໄພ ອາດເຮັດໃຫ້ ຕີນສາມາດໄດ້ຮັບບາດເຈັບໄດ້.

정답 1) 귀를 다칠 수 있어요 2) 손을 다칠 수 있어요 3) 발을 다칠 수 있어요



## 대화 2 ບົດສົນທະນາ 2

Track 152



ຈີຮຸນ ກຳລັງບອກ ຕວນ ກ່ຽວກັບ ສະຖານະການທີ່ຈະເຮັດໃຫ້ເປັນອັນຕະລາຍ. ຈົ່ງຟັງບົດສົນທະນາສອງຄັ້ງວ່າ ທັງສອງຄົນກຳລັງສົນທະນາຫຍັງກັນ.

지 훈 **어! 투안 씨, 장갑을 끼고 밀링 작업을 하면 안 돼요.**
ອໍ! ຕວນ, ໃສ່ຖົງມື ເຮັດວຽກບົດນີ້ ແມ່ນບໍ່ໄດ້ເດີ້.

투 안 **네? 공장장님이 작업을 할 때는 항상 장갑을 끼라고 하셨는데요.**
ແມ່ນບໍ? ຫົວໜ້າໂຮງງານບອກວ່າ ໃຫ້ໃສ່ຖົງມື ເວລາເຮັດວຽກຕະຫຼອດໃດ໋.

지 훈 **그렇지만 밀링 작업을 할 때는 장갑이 기계에 감길 수 있기 때문에 맨손으로 해야 돼요.**
ເຖິງວ່າເປັນແນວນັ້ນກໍຕາມ, ເວລາທີ່ເຮົາ ເຮັດວຽກກັບ ເຄື່ອງບົດແລ້ວໃສ່ຖົງມື ແມ່ນຖົງມືຈະສາມາດຕິດຢູ່ເຄື່ອງ ຈັກໄດ້ງ່າຍເຮົາຈຶ່ງຕ້ອງເຮັດວຽກດ້ວຍມືເປົ່າ.

> **맨손** ມືເປົ່າ
> ມືທີ່ບໍ່ໄດ້ໃສ່ຫຍັງ
> - 가: 어머, 화상을 입었어요?
>   ໂອ້, ມືເຈົ້າຖືກໄຟລວກບໍ?
>   나: 네, 맨손으로 뜨거운 냄비를 잡아서요.
>   ແມ່ນແລ້ວ, ຍ້ອນວ່າ ຂ້ອຍຈັບໝໍ້ທີ່ຮ້ອນດ້ວຍມືເປົ່າ.

투 안 **아, 그러네요. 얼른 빼게요.**
ອ່າ, ແມ່ນນແນວນັ້ນເນາະ. ຂ້ອຍ ຈະຖອດອອກດຽວນີ້ແຫຼະ.

> **얼른** ໄວໆ, ໂດຍໄວ
> ໃນທັນທີທັນໃດ ໂດຍທີ່ບໍ່ເສຍເວລາເລີຍ.
> - 얼른 일어나서 출근 준비를 하세요.
>   ຮີບລຸກໄວໆ ແລ້ວກຽມໂຕໄປເຮັດວຽກ.
> - 사장님이 들어오시자 직원들은 얼른 자리에서 일어났다.
>   ເມື່ອຫົວໜ້າເຂົ້າມາ, ພະນັກງານທຸກຄົນກໍລຸກຂຶ້ນຈາກຕັ່ງໂດຍໄວ.

지 훈 **그리고 작업하는 동안 파편이 튈 수 있으니까 보안경도 잊지 말고요.**
ພ້ອມນັ້ນ ໃນເວລາທີ່ເຮັດວຽກ ເສດສ່ວນສາມາດຟົ້ງອອກມາ ໄດ້, ສະນັ້ນ ຢ່າລືມວ່າ ຕ້ອງໃສ່ແວ່ນຕານິລະໄພ.

투 안 **알겠어요, 지훈 씨.**
ເຂົ້າໃຈແລ້ວ, ຈີຮຸນ.



ຕອນນີ້ ແມ່ນໃຫ້ລອງເປັນ ຈີຮຸນ ແລະ ຕວນ ແລ້ວເຮັດບົດສົນທະນາເບິ່ງ. ໄດ້ຕັ້ງໃຈຟັງໃຫ້ດີ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 지훈 씨는 투안 씨에게 무엇을 하면 안 된다고 했어요?
   ຈີຮຸນ ໄດ້ບອກ ຕວນ ວ່າແມ່ນຫຍັງທີ່ເຮັດບໍ່ໄດ້?
2. 밀링 작업을 할 때는 왜 맨손으로 해야 해요?
   ເປັນຫຍັງ ໃນເວລາທີ່ໃຊ້ເຄື່ອງຈັກບົດ ຈຶ່ງຕ້ອງເຮັດດ້ວຍມືເປົ່າ?

정답 1. 장갑을 끼고 밀링 작업을 하면 안 된다고 했어요. 2. 장갑이 기계에 감길 수 있어서 위험해요.



## 어휘 2 ຄຳສັບ 2

### 작업장 사고 ອຸບັດຕິເຫດ ໃນສະຖານທີ່ເຮັດວຽກ

ໃນສະຖານທີ່ເຮັດວຽກ ແມ່ນສາມາດເກີດອຸບັດຕິເຫດປະເພດໃດໄດ້ແດ່? ເຮົາລອງມາເບິ່ງວ່າ ຄຳສັບກ່ຽວກັບອຸບັດຕິເຫດວ່າ ມີຫຍັງແດ່?


부딪히다/충돌하다
ຕຳ/ປະສານກັນ


넘어지다
ລົ້ມ


미끄러지다
ມື່ນ


떨어지다/추락하다
ຕົກ/ຕົກຈາກບ່ອນສູງ


구덩이에 빠지다
ຕົກລົງຂຸມ


파편이 튀다
ເສດສ່ວນຟົ້ງອອກມາ


맞다
ຖືກຕີ


기계에 감기다
ຖືກຕິດຢູ່


감전되다
ຖືກໄຟຊ໋ອດ


가스가 새다/누출되다
ກາສຮົ່ວ



폭발하다
ລະເບີດ


불이 나다
ໄຟໄໝ້



ຈົ່ງຄິດທົບທວນ ກ່ຽວກັບຄຳສັບທີ່ຮຽນມາຂ້າງເທິງນັ້ນ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 맞는 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳເວົ້າ ທີ່ຖືກຕ້ອງ.

① ② ③ ④ ⑤

㉠ 폭발하다 ㉡ 추락하다 ㉢ 부딪히다 ㉣ 미끄러지다 ㉤ 넘어지다

정답 ① ㉡ ② ㉠ ③ ㉢ ④ ㉤ ⑤ ㉣

## 문법 2 ໄວຍາກອນ 2 -기 때문에




'-기 때문에' ມັນຊີ້ບອກເຖິງສາເຫດ ຫຼື ເຫດຜົນຂອງເລື່ອງໃດໜຶ່ງ ເພື່ອໃຊ້ຕື່ມທ້າຍຄຳກຳມະ ຫຼື ຄຳຄຸນນາມ. ໃນກໍລະນີເປັນຄຳນາມແມ່ນໃຊ 'ຄຳນາມ 때문에'.

- 작업을 할 때는 **감전될 수 있기 때문에** 안전장갑을 껴야 합니다.
  ໃນເວລາເຮັດວຽກ ເຈົ້າຕ້ອງໃສ່ຖົງມືປ້ອງກັນໄວ້ ເພາະໄຟຟ້າອາດຈະຊັອດໄດ້.
- 바닥이 미끄러워서 쉽게 **넘어질 수 있기 때문에** 항상 주의해야 합니다.
  ເຈົ້າຕ້ອງລະວັງຢູ່ສະເໝີ ເພາະພື້ນມື່ນອາດຈະລົ້ມໄດ້ງ່າຍໆ.
- 어제는 **피곤했기 때문에** 집에서 쉬었어요. ມື້ວານນີ້ ຂ້ອຍພັກຜ່ອນຢູ່ເຮືອນ ເພາະຂ້ອຍເມື່ອຍ.

'ຄຳນາມ(이)기 때문에', 'ຄຳຄຸນນາມ/ຄຳກຳມະ -기 때문에' ແມ່ນມັນຊີ້ແຈງເຖິງເຫດຜົນຄືກັນກັບ '-아서/어서' ແຕ່ມັນຈະໜັກແໜ້ນຫຼາຍກວ່າ. ມັນສາມາດໃຊ້ກັບກາລະອະດີດຕະການໄດ້ '-았/었기 때문에'.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

**✓ ລະຫວ່າງ '-기 때문에' ກັບ '-아서/어서**

'-기 때문에' ກັບ '-아서/어서' ທັງສອງຮູບແບບນີ້ ແມ່ນຊີ້ບອກເຖິງເຫດຜົນ ຫຼື ສາເຫດຂອງເລື່ອງໃດໜຶ່ງ. ໃນກໍລະນີ ທີ່ຜູ້ເວົ້າບອກເຖິງຄວາມຮູ້ສຶກ ຫຼື ສະຖານະການແມ່ນມັກຈະໃຊ້ '-아서/어서'. ຮູບແບບຂອງ '-기 때문에' ເຮົາສາມາດໃຊ້ກັບອະດີດໄດ້ ໂດຍ '-았/었-' ຖືກນຳໃຊ້ຕໍ່ໜ້າ '-기 때문에'. ແຕ່ຮູບແບບຂອງ '-아서/어서' ໃຊ້ກັບອະດີດບໍ່ໄດ້.

- 오랜만에 친구를 만나기 때문에 기뻐요. (X)
  오랜만에 친구를 **만나서** 기뻐요. (O)
- 고향에서 부모님이 **오셨기 때문에** 오늘은 못 만나요. (O)
  고향에서 부모님이 오셨어서 오늘은 못 만나요. (X)



ເຂົ້າໃຈການໃຊ້ '-기 때문에' ແລ້ວບໍ? ສະນັ້ນ, ຈົ່ງໃຊ້ສຳນວນຂ້າງເທິງ ເພື່ອຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

2. '-기 때문에'를 사용해서 대화를 완성하세요.
ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ '-기 때문에'.

1) 가: 높은 곳에서 작업할 때는 떨어지는 사고가 날 수 있습니다.
ໃນເວລາທີ່ເຮັດວຽກຢູ່ບ່ອນສູງ, ອຸບັດຕິເຫດການຕົກລົງມາຈາກບ່ອນສູງ ແມ່ນສາມາດເກີດຂຶ້ນໄດ້.
나: ______________________ 괜찮을 겁니다. [안전대를 맸다 ໃສ່ສາຍຮັດນິລະໄພ]

2) 가: 지금 안에서 작업할 수 없어요? ຕອນນີ້ ແມ່ນບໍ່ສາມາດເຮັດວຽກ ຢູ່ທາງໃນໄດ້ບໍ?
나: ______________________ 지금은 들어갈 수 없어요. [바닥이 미끄럽다 ພື້ນມັນມື່ນ]

3) 가: 밀링 작업을 할 때는 ______________ 보안경을 꼭 써야 해요. [파편이 튀다 ເສດສ່ວນຟົ້ງອອກມາ]
ໃນເວລາທີ່ເຮັດບົດ ຍ້ອນວ່າມີເສດສ່ວນຟົ້ງອອກມາ ຈົ່ງຕ້ອງໃສ່ແວ່ນຕານິລະໄພ.
나: 네, 알겠습니다. ເຈົ້າ, ເຂົ້າໃຈແລ້ວ.

정답 1) 안전대를 맸기 때문에 2) 바닥이 미끄럽기 때문에 3) 파편이 튀기 때문에



## 활동 ກິດຈະກຳ

**위험한 상황에 대해 말할 수 있어요? 〈보기〉처럼 이야기해 보세요.**
ເຈົ້າສາມາດເວົ້າກ່ຽວກັບ ສະຖານະການທີ່ເປັນອັນຕະລາຍໄດ້ບໍ? ຈົ່ງເຮັດບົດສົນທະນາຄືດັ່ງຕົວຢ່າງ.






바닥이 미끄러우면
넘어질 수 있어요. 조심하세요.






바닥이 미끄럽다, 넘어지다
ພື້ນມັນມື່ນ, ລົ້ມ

1) 



높은 곳에서 작업을 하다, 추락하다
ເຮັດວຽກຢູ່ບ່ອນສູງ, ຕົກລົງຈາກບ່ອນສູງ

2) 



파편이 튀다, 화상을 입다
ເສດສ່ວນຟົ້ງອອກ, ຖືກໄຟລວກ

3) 



안전장갑을 끼지 않다, 감전되다
ບໍ່ໃສ່ຖົງມືນິລະໄພ, ຖືກໄຟຊ໊ອດ

4) 



안전화를 신지 않다, 발을 다치다
ບໍ່ໃສ່ເກີບນິລະໄພ, ຮັບບາດເຈັບຢູ່ຕີນ

정답 1) 높은 곳에서 작업을 하면 추락할 수 있어요. 조심하세요. 2) 파편이 튀면 화상을 입을 수 있어요. 조심하세요.
3) 안전장갑을 끼지 않으면 감전될 수 있어요. 조심하세요. 4) 안전화를 신지 않으면 발을 다칠 수 있어요. 조심하세요.

# 신체 기관과 보호구

## ພາກສ່ວນຂອງຮ່າງກາຍ ແລະ ອຸປະກອນປ້ອງກັນ

### ✚신체와 위험요소 ພາກສ່ວນ ຂອງຮ່າງກາຍ ແລະ ສາເຫດ ທີ່ພາໃຫ້ເກີດອັນຕະລາຍ




### ✚보호구의 종류 ປະເພດຂອງອຸປະກອນປ້ອງກັນ

산업안전보건법에서 정하고 있는 보호구는 다음과 같습니다.
ອຸປະກອນປ້ອງກັນ ທີ່ຖືກກຳນົດໄວ້ຢູ່ໃນກົດໝາຍ ເພື່ອຄວາມປອດໄພ ໃນການເຮັດວຽກ ແລະ ການບໍລິຫານສຸຂະພາບ ແມ່ນມີດັ່ງຕໍ່ໄປນີ້.





# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນຄຳຖາມກ່ຽວກັບການຟັງ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງກວດເບິ່ງຮູບພາບກ່ອນຟັງ.

[1~2] 잘 듣고 내용과 관계있는 그림을 고르십시오.
ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງກັບເນື້ອໃນ.

Track 153

1. ① ② ③ ④

2. ① ② ③ ④



ຂໍ້ 3 ແລະ 4 ແມ່ນຄຳຖາມກ່ຽວກັບ ການເລືອກເອົາຄຳຕອບ ທີ່ຖືກຕ້ອງ ທີ່ຈະເປັນປະໂຫຍກ ຕໍ່ໄປ. ຂໍ້ 5 ແມ່ນຄຳຖາມກ່ຽວກັບ ການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງ. ຈົ່ງກວດເບິ່ງເນື້ອໃນຄຳຕອບກ່ອນຟັງ.

[3~4] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

3. ① 벌써 확인했습니다. ② 얼른 쓰고 오겠습니다.
③ 빨리 갈아 신으십시오. ④ 이쪽으로 들어가면 됩니다.

4. ① 얼른 가서 찾아보세요. ② 장갑을 새로 샀어요.
③ 깜빡했어요. 지금 낄게요. ④ 병원에 가야 될 거 같아요.

5. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

남자가 해야 할 일이 아닌 것은 무엇입니까? ວຽກທີ່ຜູ້ຊາຍຄົນນັ້ນ ບໍ່ຕ້ອງເຮັດແມ່ນຫຍັງ?

① 청소하기 ② 귀마개 하기
③ 마스크 쓰기 ④ 플러그 빼기



## 듣기 대본 ເນື້ອໃນບົດຟັງ

1. 여: 떨어져서 다쳤어요. ຍ້ອນວ່າຂ້ອຍຕົກ, ເລີຍໄດ້ຮັບບາດເຈັບ.
2. 여: 보안경을 썼어요. ໄດ້ໃສ່ແວ່ນຕານິລະໄພ.
3. 여: 잠깐만요. 여기는 안전모가 없으면 들어갈 수 없습니다.
   ດຽວກ່ອນ. ຢູ່ທີ່ນີ້, ຖ້າບໍ່ໃສ່ໝວກນິລະໄພ ແມ່ນບໍ່ສາມາດເຂົ້າໄປໄດ້.
4. 남: 어! 안전장갑을 안 꼈네요. 안전장갑을 안 끼면 손을 다칠 수 있어요.
   ອໍ່! ເຈົ້າບໍ່ໄດ້ໃສ່ຖົງມືນິລະໄພໃດ່ຫັ້ນ. ຖ້າບໍ່ໃສ່ຖົງມືນິລະໄພ ແມ່ນສາມາດໄດ້ຮັບບາດເຈັບໄດ້.
5. 여 왜 귀마개를 안 하셨어요? 시끄럽지 않아요?
   ເປັນຫຍັງ ຈຶ່ງບໍ່ໃສ່ແນວປິດຫູນິລະໄພ? ບໍ່ສຽງດັງບໍ?

   남: 시끄럽지만 귀마개를 하면 불편해서요.
   ສຽງດັງ, ແຕ່ວ່າ ເວລາໃສ່ ແນວປິດຫູນິລະໄພ ແມ່ນຮູ້ສຶກບໍ່ສະບາຍ.

   여: 그래도 여긴 소음이 심하기 때문에 귀마개를 꼭 해야 돼요. 그리고 작업장에는 먼지가 많으니까 마스크도 쓰는 게 좋아요.
   ເຖິງວ່າແນວນັ້ນກໍຕາມ, ຍ້ອນວ່າສຽງຢູ່ນີ້ມັນດັງແຮງ ຈຶ່ງຕ້ອງໃສ່ແນວປິດຫູນິລະໄພ ແລະ ຢູ່ບ່ອນເຮັດວຽກ ກໍມີຂີ້ຝຸ່ນຫຼາຍ, ການໃສ່ໜ້າກາກປິດປາກ ແມ່ນເປັນການດີ.

   남: 네, 그럴게요. ເຈົ້າ, ຈະເຮັດແບບນັ້ນ.

   여: 아! 작업이 끝난 후에는 기계의 플러그도 빼서 정리해 놓으세요.
   ອ່າ! ແລ້ວເວລາທີ່ເຮັດວຽກແລ້ວ ກໍໃຫ້ຖອດປັກໄວ ແລ້ວເກັບມ້ຽນໄວ້ນຳ.

정답 1. ① 2. ② 3. ② 4. ③ 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ

L-49

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   남자가 작업장에 가는 이유는 무엇입니까? ເຫດຜົນທີ່ຜູ້ຊາຍຄົນນັ້ນ ໄປບ່ອນເຮັດວຽກ ແມ່ນຫຍັງ?

   ① 안전모가 없어져서　　② 안전대가 필요해서
   ③ 안전복을 챙겨야 해서　　④ 안전화를 신어야 해서

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 아딧 씨, 안전복 모두 챙겨 입었죠? ອາດິດ, ໄດ້ນຸ່ງຊຸດປ້ອງກັນຄວາມປອດໄພ ທັງໝົດແລ້ວແມ່ນບໍ?

   남: 네, 오늘은 높은 곳에서 작업한다고 해서 안전대도 착용했어요. 안전모도 챙겼고요.
   ເຈົ້າ, ຍ້ອນເວົ້າວ່າມື້ນີ້ ຈະໄດ້ເຮັດວຽກຢູ່ບ່ອນສູງ ກໍເລີຍໃສ່ສາຍຮັດນິລະໄພນຳ. ໃສ່ທັງໝວກນິລະໄພນຳ.

   여: 좋아요. 어! 그런데 안전화는 왜 안 신었어요? ດີ. ອໍ່! ແຕ່ວ່າ ເປັນຫຍັງ ຄືບໍ່ໃສ່ເກີບນິລະໄພ?

   남: 아, 깜빡했어요. 작업장에 가서 안전화로 갈아 신고 올게요.
   ອ້າ, ຂ້ອຍລືມເລີຍ. ຊັ້ນຂ້ອຍຈະໄປບ່ອນເຮັດວຽກ ແລ້ວໃສ່ເກີບນິລະໄພມາ.


정답 1. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນຄຳຖາມກ່ຽວກັບການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ. ຈົ່ງຄິດທົບທວນເຖິງຄຳສັບທີ່ໄດ້ຮຽນຜ່ານມາກ່ອນໜ້ານີ້ ແລ້ວຕອບຄຳຖາມເບິ່ງ.

[1~2] 다음 그림을 보고 맞는 단어나 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳສັບ ຫຼື ປະໂຫຍກທີ່ຖືກຕ້ອງ.

1. 

① 마스크 ② 보호복
③ 안전모 ④ 용접면

2. 

① 감전될 수 있습니다. ② 넘어질 수 있습니다.
③ 부딪힐 수 있습니다. ④ 추락할 수 있습니다.



ຂໍ້ 3 ແລະ 4 ແມ່ນເປັນຄຳຖາມກ່ຽວກັບການເລືອກເອົາຄຳສັບທີ່ເໝາະສົມ; ສ່ວນຂໍ້ 5 ແມ່ນເປັນຄຳຖາມກ່ຽວກັບການເລືອກເອົາຄຳຕອບ ທີ່ຖືກຕ້ອງຫຼັງຈາກອ່ານ ແຈ້ງການກ່ຽວກັບຂໍ້ ຄວນລະວັງ.

[3~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບທີ່ຖືກຕ້ອງ ທີ່ສຸດໃສ່ໃນບ່ອນຫວ່າງ.

3. 소음이 심한 곳에서 작업을 할 때는 ___________을/를 껴야 합니다.
ໃນເວລາທີ່ເຮັດວຽກ ຢູ່ບ່ອນທີ່ມີສຽງດັງແຮງ ແມ່ນຕ້ອງໃສ່ ແນວປິດຫູນິລະໄພ.

① 귀마개 ② 목장갑 ③ 보안경 ④ 안전장화

4. 높은 곳에서 작업을 할 때는 아래로 떨어질 위험이 있습니다. 그러므로 반드시 ___________ 을/를 매고 일을 해야 합니다.
ໃນເວລາທີ່ເຮັດວຽກຢູ່ບ່ອນສູງ ແມ່ນມີຄວາມສ່ຽງໃນການຕົກລົງມາ. ຍ້ອນແນວນີ້ ເຮົາຕ້ອງໃສ່ ສາຍຮັດນິລະໄພແລ້ວຈຶ່ງເຮັດວຽກ.

① 보안면 ② 안전대 ③ 안전화 ④ 안전장갑

5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

〈선반 작업 주의 사항〉 <ຂໍ້ຄວນລະວັງສຳລັບວຽກກຶງໂລຫະ>
1. 옷이나 머리카락이 기계에 감기지 않도록 작업복을 입고 모자를 쓰십시오.
ເພື່ອບໍ່ໃຫ້ເສື້ອຜ້າ ແລະ ເສັ້ນຜົມ ຄາຢູ່ເຄື່ອງຈັກ ແມ່ນໃຫ້ໃສ່ຊຸດເຮັດວຽກ ແລະ ໃສ່ໝວກ.
2. 파편이 눈에 들어갈 수 있기 때문에 보안경도 반드시 착용해야 합니다.
ຍ້ອນວ່າ ເສດສ່ວນຕ່າງໆ ສາມາດຟົ້ງເຂົ້າຕາໄດ້ ສະນັ້ນ ໃສ່ແວ່ນຕານິລະໄພ.
3. 장갑이 기계에 감겨서 사고가 날 수 있으니까 맨손으로 작업하십시오.
ຍ້ອນວ່າ ຖົງມື ສາມາດຄາຢູ່ເຄື່ອງຈັກ ທີ່ສາມາດເຮັດໃຫ້ ເກີດອຸບັດຕິເຫດໄດ້, ສະນັ້ນ ຈົ່ງໃຊ້ມືເປົ່າເວລາເຮັດວຽກ.

위 글과 관계가 없는 그림을 고르십시오. ຈົ່ງເລືອກເອົາຮູບພາບ ທີ່ບໍ່ກ່ຽວກັບເນື້ອໃນ ຂອງບົດເລື່ອງຂ້າງເທິງນັ້ນ.

① 
② 
③ 
④ 

정답 1. ④ 2. ① 3. ① 4. ② 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 작업을 할 때는 ________ 조심해야 합니다. 조심하지 않으면 언제 사고가 날지 모르기 때문입니다.
ໃນເວລາທີ່ເຮັດວຽກ ແມ່ນຕ້ອງລະມັດລະວັງຕະຫຼອດເວລາ. ຍ້ອນວ່າ ຖ້າບໍ່ລະມັດລະວັງ ກໍບໍ່ຮູ້ວ່າອຸບັດຕິເຫດຈະເກີດຕອນໃດ.

① 일찍　② 다시
③ 항상　④ 직접

2. 전기 작업을 할 때에는 안전장갑을 꼭 챙겨야 합니다. 안전장갑을 ________ 감전될 수 있습니다.
ໃນເວລາທີ່ເຮັດວຽກໄຟຟ້າ ແມ່ນຕ້ອງໃສ່ຖົງມື ນິລະໄພຕະຫຼອດ. ຖ້າບໍ່ ໃສ່ ຖົງມືນິລະໄພ ແມ່ນອາດຖືກໄຟຟ້າຊ໋ອດໄດ້.

① 끼지 않으면　② 신지 않으면
③ 끼기 때문에　④ 신기 때문에

3. 밀링 작업을 할 때는 파편이 눈에 들어갈 수 있습니다. 그러므로 보안경을 반드시 ________.
ໃນເວລາທີ່ເຮັດວຽກບົດ ເສດສ່ວນສາມາດເຂົ້າຕາໄດ້. ຍ້ອນແນວນີ້ ຕ້ອງໃສ່ແວ່ນຕານິລະໄພ.

① 써야 됩니다　② 입어야 됩니다
③ 쓴 적이 있습니다　④ 입은 적이 있습니다

정답 1. ③ 2. ① 3. ①



## 발음 ການອອກສຽງ



P-25

ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນກໍລະນີທີ່ພະຍັນຊະນະ 'ㅎ' ຢູ່ໜ້າ ຫຼື ຕາມຫຼັງ ພະຍັນຊະນະ 'ㅂ', 'ㄷ', 'ㄱ' ຫຼື 'ㅈ', ຈະອອກສຽງເປັນ ສຽງເນັ້ນ [ㅍ], [ㅌ], [ㅋ] ຫຼື [ㅊ].

(1) 좋다, 넣고, 쌓지
(2) 축하, 입학, 백화점
(3) 생일 축하합니다.
(4) 한국어 수업은 9시에 시작해요.



# 열심히 해 준 덕분이에요

ເປັນເພາະເຈົ້າ ເຮັດວຽກໃຫ້ຢ່າງຕັ້ງໃຈ

**학습 안내** ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການປະເມີນການເຮັດວຽກ, ເວົ້າກ່ຽວກັບສຸຂະພາບ |
| □ ໄວຍາກອນ | -(으)ㄴ 덕분에, -기로 하다 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ຫຼັກການຄວາມປອດໄພ, ການສົ່ງເສີມສຸຂະພາບ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ການຍືດເສັ້ນຍືດສາຍ ເພື່ອສຸຂະພາບ |



## 대화 1 ບົດສົນທະນາ 1





ໄດ້ມີສິ່ງທີ່ດີ ເກີດຂຶ້ນກັບ ໂມນິກາ. ສິ່ງທີ່ເປັນຂ່າວດີນັ້ນ ແມ່ນເລື່ອງຫຍັງ ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

사장님 어서 와요, 모니카 씨. 여기 좀 앉아요. 차 한잔할래요?
ເຊີນເຂົ້າມາ, ໂມນິກາ. ເຊີນນັ່ງທາງດ້ານນີ້, ດື່ມຊາຈັກຈອກກ່ອນບໍ?

모니카 아니요. 괜찮아요. ບໍ່ເປັນຫຍັງ, ໄດ້ແລ້ວ.

사장님 모니카 씨, 내일이 근로자의 날인 거 알죠? 이번 근로자의 날을 기념해서 우수 사원을 추천받았는데 모니카 씨가 뽑혔어요.
ໂມນິກາ ມື້ອື່ນແມ່ນວັນກຳມະກອນ ຮູ້ແລ້ວບໍ? ໃນວັນກຳມະກອນປີນີ້ ແມ່ນຈະມີການມອບລາງວັນ ໃຫ້ພະນັກ ງານດີເດັ່ນເຊິ່ງແມ່ນ ໂມນິກາ ໄດ້ຖືກເລືອກໃຫ້ເປັນພະ ນັກງານດີເດັ່ນ.

모니카 네? 정말요? ແມ່ນບໍ? ແທ້ໆບໍ?

사장님 일도 잘하고 작업장 점검도 아주 꼼꼼히 한다고 들었어요. 모니카 씨가 열심히 해 준 덕분에 일이 더 편해졌어요. 정말 고마워요. 이건 감사 선물이에요.
ເຮັດວຽກກໍເກັ່ງ ແລະ ໄດ້ຍິນມາວ່າ ໃນບ່ອນເຮັດວຽກ ກໍເປັນຄົນລະອຽດທີ່ສຸດກັບ ວຽກງານ. ເພາະວ່າ ໂມນິກາເປັນຄົນຕັ້ງໃຈເຮັດວຽກງານ ເລີຍເຮັດວຽກສະບາຍຂຶ້ນ. ຕ້ອງຂອບໃຈຫຼາຍໆ. ນີ້ແມ່ນຂອງຂວັນ ທີ່ເປັນການສະແດງຄວາມຂອບໃຈ.

> **꼼꼼히** ຢ່າງລະອຽດ, ຢ່າງລະມັດລະວັງ
> - 신문을 꼼꼼히 읽으려면 시간이 많이 걸려요.
>   ຖ້າຫາກອ່ານໜັງສື ຢ່າງລະອຽດ ກໍຈະໃຊ້ເວລາດົນ.
> - 계약서의 내용을 꼼꼼히 읽어 보세요.
>   ກະລຸນາອ່ານເນື້ອໃນຂອງໜັງສືສັນຍາຢ່າງລະອຽດ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 내일은 무슨 날이에요? ມື້ອື່ນ ແມ່ນວັນຫຍັງ?
2. 모니카 씨가 우수 사원으로 뽑힌 이유는 뭐예요? ສາເຫດ ທີ່ເລືອກເອົາ ໂມນິກາ ເປັນພະນັກງານດີເດັ່ນແມ່ນຫຍັງ?

정답 1. 근로자의 날이에요. 2. 일도 잘하고 작업장 점검도 꼼꼼히 잘해서요.



## 어휘 1 ຄຳສັບ 1 안전 수칙 ຫຼັກການຄວາມປອດໄພ



ຄຳສັບທີ່ກ່ຽວກັບຫຼັກການຮັກຄວາມປອດໄພ ມີອັນໃດແດ່ ລອງໄປກວດເບິ່ງນຳກັນບໍ?



안전 수칙을 지키다
ຫຼັກການຮັກສາ ຄວາມປອດໄພ



안전 수칙을 어기다
ການລະເມີດຫຼັກການຄວາມປອດໄພ




규칙을 준수하다
ການປະຕິບັດຕາມ ກົດລະບຽບ



살피다ພິຈາລະນາ, ສັງເກດ



주의하다
ຂໍ້ຄວນລະວັງ



점검하다
ກວດ, ເຊັກເບິ່ງ



정비하다
ຈັດການ, ບໍລິຫານຈັດການ



보수하다
ສ້ອມແຊມ



개선하다
ແກ້ໄຂ, ປັບປຸງ



조치를 취하다
ມີແຜນຮັບມື (ການສະກັດໄວຕໍ່ອຸປະຕິເຫດ)



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 빈칸에 맞는 표현을 〈보기〉에서 골라 문장을 완성하세요.
ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການເລືອກເອົາສຳນວນຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ຄືດັ່ງຕົວຢ່າງ.

1) 이런 도구는 위험하니까 사용할 때 다치지 않도록 ________________.
ເພາະວ່າ ເຄື່ອງມືຄືແນວນີ້ ແມ່ນມີອັນຕະລາຍຫຼາຍ; ໃນເວລາໃຊ້ ຄວນລະມັດລະວັງ ເພື່ອບໍ່ໃຫ້ໄດ້ຮັບບາດເຈັບ.

2) 기계를 오래 사용하려면 문제가 없는지 정기적으로 ________________ 합니다.
ຖ້າຫາກວ່າ ອຸປະກອນເຄື່ອງຈັກ ທີ່ໃຊ້ດົນແລ້ວ ຕ້ອງກວດຄືນເບິ່ງວ່າ ມັນມີບັນຫາຫຼືບໍ່.

3) 용접기가 고장이 나서 공장장님이 어제 ________________.
ຍ້ອນເຄື່ອງຈັກເປ່ເພ ຫົວໜ້າໂຮງງານໄດ້ສ້ອມແປງແລ້ວ ໃນມື້ວານນີ້.

4) 안전하게 작업을 하려면 안전 수칙을 잘 ________________ 합니다
ຖ້າຢາກໃຫ້ວຽກງານ ມີຄວາມປອດໄພ ຕ້ອງປະຕິບັດກົດລະບຽບໃຫ້ດີ.

| 보기 | 어기다 | 주의하다 | 보수하다 | 점검하다 | 지키다 |
|---|---|---|---|---|---|

정답 1) 주의합니다 2) 점검해야 3) 보수했습니다 4) 지켜야

## 문법 1 ໄວຍາກອນ 1 -(으)ㄴ 덕분에

G50-1

ມັນຊີ້ບອກເຖິງເຫດຜົນ ຫຼື ສາເຫດທີ່ເປັນຜົນຮັບໃນທາງບວກ. ມັນຖືກໃຊ້ກັບຄຳກຳມະ ຫຼື ຄຳຄຸນນາມໄດ້ໝົດ.

| 자음(ພະຍັນຊະນະ) → **-은 덕분에** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㄴ 덕분에** |
|---|---|
| 읽다 → 읽**은 덕분에** | 사다 → **산 덕분에**<br>만들다 → **만든 덕분에** |

- 공장을 미리 **보수한 덕분에** 이번 비에 큰 피해가 없었어요.
  ເພາະໂຮງງານໄດ້ຮັບການສ້ອມແຊມມາກ່ອນ ຈຶ່ງບໍ່ໄດ້ຮັບຜົນກະທົບຈາກຝົນໃນເທື່ອນີ້.
- 가: 투안 씨가 꼼꼼히 **확인한 덕분에** 일이 잘 진행됐어요.
  ເພາະຕວານກວດເບິ່ງໃຫ້ຢ່າງລະອຽດ ວຽກກໍເລີຍດຳເນີນໄປດ້ວຍດີ.
  나: 아니에요. 교육을 잘 받은 덕분이에요. ບໍ່ດອກ. ເພາະເຈົ້າຮຽນຮູ້ໄດ້ດີ.
- 여러분이 **도와주신 덕분에** 제가 이 상을 받게 되었습니다.
  ຂ້ອຍໄດ້ຮັບລາງວັນເພາະພວກເຈົ້າຊ່ວຍເຫຼືອຂ້ອຍ.

※ ໃນກໍລະນີທີ່ເປັນຄຳນາມແມ່ນໃຊ້ 'ຄຳນາມ + 덕분에'.

- **사장님 덕분에** 회사 생활을 잘하고 있습니다. ເປັນເພາະທ່ານປະທານ ຂ້ອຍຈຶ່ງດຳລົງຊີວິດຢູ່ໃນບໍລິສັດໄດ້ດີ.
- 요리를 잘하는 **아내 덕분에** 맛있는 음식을 먹고 있어요. ເພາະເມຍແຕ່ງອາຫານເກັ່ງ (ກໍ) ເລີຍໄດ້ກິນແຕ່ອາຫານແຊບໆ.



ເຂົ້າໃຈການໃຊ້ '-(으)ㄴ 덕분에' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ສຳນວນ ທີ່ເໝາະສົມ.

2. 그림을 보고 '-(으)ㄴ 덕분에'를 사용해서 대화를 완성하세요.
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ '-(으)ㄴ 덕분에'.

1) 
조치를 취하다

가: 많이 다칠 뻔했지요? ເກືອບຈະໄດ້ຮັບບາດເຈັບແລ້ວແມ່ນບໍ?
나: 네. 그런데 빨리 ________________ 별로 다치지 않았어요.
ເຈົ້າ, ແມ່ນແລ້ວ, ດີແຕ່ໄດ້ສະກັດໄວ ຈຶ່ງບໍ່ໄດ້ຮັບບາດເຈັບຫຼາຍປານໃດ.

2) 
안전복을 입다

가: 화상을 입지 않았어요? ບໍ່ໄດ້ເປັນບາດແຜ ຫຍັງບໍ?
나: 아니요. ________________ 괜찮아요.
ບໍ່ມີ. ຍ້ອນວ່າ ໄດ້ນຸ່ງເຄື່ອງປ້ອງກັນຄວາມປອດໄພ ຈຶ່ງບໍ່ເປັນຫຍັງ.

정답 1) 조치를 취한 덕분에 2) 안전복을 입은 덕분에

## 대화 2 ບົດສົນທະນາ 2






ອິນດິກາ ແລະ ບາຣູ ແມ່ນກຳລັງສົນທະນາ ແມ່ນຫຍັງກັນ ຈົ່ງຟັງບົດສົນທະນາສອງຄັ້ງ ກ່ອນ. ພ້ອມນັ້ນ ຈົ່ງເວົ້າຕາມ.

인디카 **바루, 안색이 안 좋네. 어디 아파?**
ບາຣູ, ສີໜ້າບໍ່ດີເລີຍ, ເຈັບຢູ່ໃສບໍ?

바 루 **아픈 건 아니고. 요즘 일이 많아서 야근을 자주 했거든.**
ບໍ່ໄດ້ເຈັບຫຍັງ. ຊ່ວງນີ້ ມີວຽກຫຼາຍ ຕ້ອງໄດ້ເຮັດວຽກກາງຄືນເປັນປະຈຳ.

인디카 **그렇게 일이 많아서 어떻게 해. 바쁘더라도 틈틈이 쉬면서 해. 그러다가 건강 해치겠다. 난 요즘 운동을 새로 시작했거든. 몸도 가볍고 입맛도 훨씬 좋아졌어.**
ມີວຽກຫຼາຍແບບນີ້ ເຮັດແນວໃດບາດນີ້. ເຖິງວ່າ ຈະວຽກຫຼາຍປານໃດ ມີເວລາກໍຫາເວລາພັກຜ່ອນແດ່. ຖ້າບໍ່ດັ່ງນັ້ນຈະເສຍສຸຂະພາບໃດ. ຊ່ວງນີ້ ຂ້ອຍເລີ່ມອອກກຳລັງກາຍໃໝ່ແລ້ວ. ເຮັດໃຫ້ເບົາຕົວເບົາຄີງດີ ແລະ ກິນອາຫານກໍແຊບ.

> **틈틈이** ທຸກຄັ້ງທີ່ຫວ່າງ
> - 일하면서 틈틈이 한국어를 공부했어요.
>   ຫຼັງຈາກເຮັດວຽກແລ້ວ ທຸກໆຄັ້ງທີ່ຫວ່າງ ຂ້ອຍໄດ້ຮຽນພາສາເກົາຫຼີ.
> - 틈틈이 운동하는 습관을 길러 보세요.
>   ທຸກຄັ້ງທີ່ຫວ່າງແລ້ວຫາເວລາອອກກຳລັງກາຍ ໃຫ້ເປັນກິດຈະວັດປະຈຳລອງເບິ່ງ.

바 루 **그래? 무슨 운동을 하는데?**
ແມ່ນແທ້ບໍ? ອອກກຳລັງກາຍແບບໃດ?

인디카 **친구들이랑 등산을 시작했어. 이번 주말에도 가기로 했는데 너도 갈래?**
ໄດ້ໄປ ໄຕ່ພູກັບໝູ່ເພື່ອນ, ທ້າຍອາທິດນີ້ ກໍຈະໄປໄຕ່ພູອີກ; ເຈົ້າຈະໄປ ນຳບໍ?

바 루 **그럴까? 어디로 가기로 했어?**
ແມ່ນແທ້ບໍ? ຈະໄປໄຕ່ພູຢູ່ໃສ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 바루 씨는 왜 안색이 안 좋아요? ບາຣູ ເປັນຫຍັງ ສີໜ້າຄືບໍ່ດີເລີຍ?
2. 인디카 씨는 요즘 무슨 운동을 해요? ອິນດິກາ ຊ່ວງນີ້ ແມ່ນຫຼິ້ນກິລາແມ່ນຫຍັງ?

정답 1. 야근을 자주 해서 안색이 안 좋아요. 2. 등산을 해요.

## 어휘 2 ຄຳສັບ 2

## 건강 증진 ການສົ່ງເສີມສຸຂະພາບ



ມີຄຳສັບອັນໃດແດ່ ທີ່ກ່ຽວພັນກັບ ການສົ່ງເສີມສຸຂະພາບ ລອງໄປຮຽນຮູ້ນຳກັນເບິ່ງບໍ?



건강을 챙기다
ເບິ່ງແຍງສຸຂະພາບ



건강을 해치다
ທຳລາຍສຸຂະພາບ



표준 체중을 유지하다
ຮັກສານ້ຳໜັກ ໃນເກນມາດຕະຖານ



유산소 운동을 하다
ອອກກຳລັງກາຍ
ເພື່ອລະລາຍໄຂມັນ



스트레칭을 하다
ການຍືດເສັ້ນຍືດສາຍ



골고루 섭취하다
ກິນຢ່າງສະໝ່ຳສະເໝີ



청결을 유지하다
ຮັກສາຄວາມສະອາດ



휴식을 취하다
ພັກຜ່ອນສະໝອງ



기분 전환을 하다
ຄາຍຄຽດ, ປ່ຽນບັນຍາກາດ



건강 검진을 받다
ຮັບການກວດສຸຂະພາບ



ຈົ່ງຄຶດທົບທວນຄືນຄຳສັບ ທີ່ຮຽນມາຂ້າງເທິງແລ້ວ ແລ້ວຕອບຄຳຖາມຕໍ່ໄປນີ້ລອງເບິ່ງບໍ?

**1. 그림을 보고 맞는 말을 연결하세요.** ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ຖືກຕ້ອງ.

① • • ㉠ 건강 검진을 받다

② • • ㉡ 휴식을 취하다

③ • • ㉢ 청결을 유지하다

④ • • ㉣ 골고루 섭취하다

⑤ • • ㉤ 표준 체중을 유지하다

정답 ① ㉣ ② ㉤ ③ ㉡ ④ ㉢ ⑤ ㉠

## 문법 2 ໄວຍາກອນ 2    -기로 하다




'-기로 하다' ມັນຊີ້ບອກເຖິງການສັນຍາ, ການຕັດສິນໃຈ ຫຼື ການຕັ້ງໃຈທີ່ຈະເຮັດສິ່ງໃດໜຶ່ງລົງໄປ. ມັນໃຊ້ໄດ້ແຕ່ກັບຄຳກຳມະທີ່ນັ້ນ ໂດຍບໍ່ຈຳແນກວ່າ ໂຕທາງຫຼັງມີຕົວສະກົດຫຼືບໍ່.

- 내일부터 출근하기 전에 운동을 **하기로 했어요**.
  ຕັ້ງແຕ່ມື້ອື່ນເປັນຕົ້ນໄປ, ຂ້ອຍວ່າຈະອອກກຳລັງກາຍກ່ອນຈະໄປເຮັດວຽກ.
- 가: 리한 씨, 등산화를 샀네요. ລີຮັນ, ເຈົ້າຊື້ເກີບປີນພູບໍ?
  나: 네, 회사 동료들이랑 등산을 **가기로 했어요**. ເຈົ້າ, ມື້ອື່ນ ວ່າຈະໄປປີນພູກັບໝູ່ຢູ່ບ່ອນເຮັດວຽກ.
- 가: 몸이 안 좋다면서요? ຂ້ອຍໄດ້ຍິນວ່າ ເຈົ້າບໍ່ສະບາຍບໍ?
  나: 그래서 건강 검진을 **받기로 했어요**. ແມ່ນແລ້ວ, ຂ້ອຍເລີຍວ່າ ຈະໄປກວດສຸຂະພາບລອງເບິ່ງ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

✔ ລະຫວ່າງ **'-기로 하다'** ກັບ **'-(으)ㄹ게요'**

'-기로 하다' ກັບ '-(으)ㄹ게요', ແມ່ນໃຊ້ໃນເວລາທີ່ເຮົາສັນຍາວ່າ ຈະເຮັດສິ່ງໃດສິ່ງໜຶ່ງ. ໂດຍທົ່ວໄປແລ້ວ ເຮົາໃຊ້ '-기로 하다' ໃນກໍລະນີທີ່ເປັນການນັດໝາຍທີ່ກຳນົດໄວ້ລ່ວງໜ້າແລ້ວ. ສ່ວນ '-(으)ㄹ게요' ແມ່ນໃຊ້ໃນກໍລະນີທີ່ສັນຍາບາງສິ່ງຢ່າງກັບຄູ່ສົນທະນາ.

- 가: 내일은 회사에 일찍 오세요.
  나: 네, 일찍 오기로 했어요.(X) / **올게요**.(O)



ເຂົ້າໃຈການໃຊ້ '-기로 하다' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ປະໂຫຍກ ໃຫ້ຄົບຖ້ວນໂດຍການ ຂຽນສຳນວນທີ່ເໝາະສົມກັບຮູບພາບ.

2. 그림을 보고 '-기로 하다'를 사용해서 문장을 완성하세요.
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ '-기로 하다'.

1) 
저는 오늘부터 ______________________.

2) 
밤에 자기 전에 ______________________.

3) 
주말에 친구들과 ______________________.

정답 1) 유산소 운동을 하기로 했어요
2) 스트레칭을 하기로 했어요
3) 자전거를 타기로 했어요



## 활동 ກິດຈະກຳ

여름철 건강 관리에 대한 안내문입니다. 잘 읽고 질문에 답하세요.
ປະກາດກ່ຽວກັບ ການຮັກສາສຸຂະພາບ ໃນຍາມຮ້ອນ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມລຸ່ມນີ້.

### 여름철 냉방병을 예방하기 위한 대책
ວິທີປ້ອງກັນພະຍາດ ໃນລະດູຮ້ອນ



1. 실내외 온도차를 5℃ 정도로 유지하세요.
   ຈົ່ງຮັກສາຄວາມແຕກຕ່າງອຸນຫະພູມ ລະຫວ່າງ ໃນຮົ່ມ ແລະ ກາງແຈ້ງ ປະມານ 5 ອົງສາ.
2. 가벼운 긴팔 옷을 준비해서 체온을 유지하세요.
   ຈົ່ງກະກຽມເສື້ອແຂນຍາວໄວ້ ເພື່ອຮັກສາຄວາມສົມດູນຂອງຮ່າງກາຍ.
3. 에어컨을 끄고 환기를 해 주세요. ຈົ່ງປິດເຄື່ອງປັບອາກາດ ເພື່ອລະບາຍອາກາດ.
4. 실내 적정 습도를 유지하세요. ປັບອຸນຫະພູມພາຍໃນຫ້ອງ ເພື່ອຮັກສາຄວາມຊຸ່ມໄວ້.
5. 냉방 중인 실내에서는 절대 금연하세요.
   ຫ້າມສູບຢາ ໃນຫ້ອງປັບອາກາດ.
6. 밀폐된 공간에서는 실내의 먼지를 깨끗이 청소하세요.
   ໃນພື້ນທີ່ປິດລ້ອມ (ແອອັດ) ໃຫ້ອະນາໄມຂີ້ຝຸ່ນໃຫ້ສະອາດ.

1. 읽은 내용과 같으면 ○ 다르면 X에 표시하세요.
   ຈົ່ງໝາຍ O ໃສ່ເນື້ອໃນທີ່ຖືກຕ້ອງກັບບົດອ່ານ ແລະ ໝາຍ X ໃສ່ເນື້ອໃນທີ່ບໍ່ຖືກຕ້ອງກັບບົດອ່ານ.

| | | |
|---|---|---|
| 1) 실내 온도는 실외보다 10℃ 이상 낮아야 합니다. | ○ | X |
| 2) 여름에도 긴팔 옷을 준비하면 좋습니다. | ○ | X |
| 3) 에어컨을 켤 때 창문을 열어서 환기를 해야 합니다. | ○ | X |
| 4) 건조한 것은 좋지 않기 때문에 습도를 맞춰야 합니다. | ○ | X |

정답 1. 1) X 2) O 3) X 4) O



## 정보 ຂໍ້ມູນທົ່ວໄປ

# 건강을 위한 스트레칭

### ການຍືດເສັ້ນຍືດສາຍ ເພື່ອສຸຂະພາບ



**종아리** ປີແຄ່ງ

1. 의자를 잡고 왼쪽 다리를 뒤로 뻗어요.
   ຈັບຕັ່ງແລ້ວແລ້ວປີ່ນຂາເບື້ອງຊ້າຍ ໄປທາງຫຼັງ.
2. 왼쪽 무릎을 곧게 펴고 천천히 오른쪽 다리를 구부려요.
   ຍືດເຂົ່າຊ້າຍໃຫ້ຊື່ ແລ້ວຄ່ອຍໆຂົດຂາຂວາເຂົ້າ



**허벅지** ກົກຂາ

1. 의자를 잡고 서서 왼쪽 다리를 손으로 잡고 서요.
   ຍືນຈັບຕັ່ງ ແລ້ວຈັບຂາຊ້າຍດ້ວຍມື.
2. 손으로 잡은 왼쪽 다리를 위로 뻗어요.
   ຈັບຂາເບື້ອງຊາຍ ແລ້ວຍົກຂຶ້ນເທິງ.



**어깨** ບ່າໄຫຼ່

1. 오른팔을 펴서 왼쪽 어깨 쪽으로 돌려요.
   ຢຽດແຂນຂວາ ແລ້ວບິດໄປທາງບ່າໄຫຼ່ເບື້ອງຊ້າຍ.
2. 왼손으로 오른쪽 팔꿈치를 잡아요.
   ເອົາມືເບື້ອງຊາຍ ຈັບຂໍ້ສອກເບື້ອງຂວາ.



**옆구리** ກະດູກຂ້າງ

1. 양손은 깍지를 끼고 팔을 머리 위로 올려요.
   ວາງມືລົງທາງສອງ ເບື້ອງແລ້ວຍົກມືຂຶ້ນໄວ້ເທິງຫົວ.
2. 몸을 옆으로 구부려요.
   ບິດຄີງໄປທາງຂ້າງ.



**팔** ແຂນ

1. 오른팔을 구부려서 머리 뒤로 넘겨요.
   ບິດແຂນເບື້ອງຂວາ ໄປທາງດ້ານຫຼັງຫົວ.
2. 왼손으로 오른팔의 팔꿈치를 아래로 밀어요.
   ໃຊ້ມືເບື້ອງຊ້າຍດັນສອກຂອງແຂນເບື້ອງຂວາ ແລ້ວດັນໄປທາງລຸ່ມ.



**목** ຄໍ

1. 양손은 깍지를 껴서 머리 뒤를 잡아요.
   ສອງມືປະສານກັນແລ້ວ ຈັບທາງງ່ອນຄົ້ນ.
2. 상체를 숙이지 않고 머리를 당겨요.
   ບໍ່ຕ້ອງກົ້ມລົງ ຄວນຍືດຫົວຂຶ້ນ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແມ່ນເປັນການຊອກຫາ ສໍານວນທີ່ພົວພັນກັບເນື້ອໃນບົດເລື່ອງທີ່ໄດ້ຟັງນັ້ນ. ຈົ່ງຕັ້ງໃຈຟັງໃຫ້ດີ.

1. 들은 것을 고르십시오. ຈົ່ງເລືອກເອົາສິ່ງທີ່ໄດ້ຍິນ.



① 정비해요. ② 준수해요.
③ 점검해요. ④ 확인해요.



ຂໍ້ 2 ແລະ 3 ແມ່ນເປັນການເລືອກເອົາເນື້ອໃນທີ່ຈະເປັນຄໍາເວົ້າຕໍ່ໄປ. ສ່ວນຂໍ້ 4 ແລະ 5 ແມ່ນເປັນການຟັງບົດສົນທະນາບົດໜຶ່ງ ແລ້ວເລືອກເອົາຄໍາຕອບ ທີ່ເໝາະສົມກັບຄໍາຖາມ. ກ່ອນການຟັງ ຈົ່ງກວດເບິ່ງເນື້ອໃນຂອງຄໍາຖາມ ແລະ ຄໍາຕອບກ່ອນ.

[2~3] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄໍາຖາມ ແລ້ວເລືອກເອົາຄໍາຕອບທີ່ເໝາະສົມ.

2. ① 다행이에요. ② 큰일이에요.
③ 정말 속상해요. ④ 힘들 거예요.

3. ① 운동을 했어요. ② 내일 하기로 했어요.
③ 영화를 보기로 했어요. ④ 청소를 한다고 했어요.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄໍາຖາມສອງຂໍ້.

4. 여기는 어디입니까? ບ່ອນນີ້ ແມ່ນຢູ່ໃສ?

① 공원 ② 병원
③ 회사 ④ 학교

5. 들은 내용으로 맞는 것을 고르십시오. ຈົ່ງເລືອກເອົາເນື້ອໃນ ທີ່ຖືກຕ້ອງກັບບົດຟັງ.

① 수진 씨는 건강을 잘 챙깁니다.
② 민수 씨는 운동이 필요합니다.
③ 수진 씨는 검진 결과를 받았습니다.
④ 민수 씨는 건강 검진을 받을 겁니다.



## 듣기 대본 ເນື້ອໃນບົດຟັງ

1. 여: 기계를 정비하고 있어요. ກຳລັງສ້ອມແປງເຄື່ອງຈັກຢູ່.

2. 남: 미리 확인한 덕분에 다치지 않았어요. ຍັງໂຊກດີ ທີ່ໄດ້ກວດຄືນເບິ່ງຄວາມພ້ອມກ່ອນ ເລີຍບໍ່ໄດ້ເຮັດໃຫ້ບາດເຈັບ.

3. 남: 내일 뭐 할 거예요? ມື້ອື່ນຈະເຮັດຫຍັງ?

4-5. 남: 수진 씨, 병원에는 웬일이에요? ຊູຈິນ ເປັນຫຍັງ ຈຶ່ງມາໂຮງໝໍ?

여: 건강 검진이 있어서 왔어요. 민수 씨는요? ເພາະວ່າ ມາກວດສຸຂະພາບ, ມິນຊູເດ ມາເຮັດຫຍັງ?

남: 저는 검진 결과를 보러 왔어요. ຂ້ອຍມາເອົາຜົນກວດສຸຂະພາບ.

여: 그래요? 결과 잘 나왔어요? ແມ່ນບໍ? ຜົນອອກມາດີບໍ?

남: 제가 운동을 너무 안 해서요.
유산소 운동도 하고 음식을 골고루 섭취하라고 했어요.
ຂ້ອຍ ບໍ່ໄດ້ອອກກຳລັງກາຍຫຼາຍ, ທ່ານໝໍບອກວ່າ ໃຫ້ອອກກຳລັງກາຍ ແລະ ກິນອາຫານໃຫ້ສະໝ່ຳສະເໝີ.

여: 그렇군요. 저도 건강에 신경을 못 써서 좀 걱정이 돼요.
ແມ່ນແລ້ວ. ຂ້ອຍ ກໍຄືກັນ ບໍ່ໄດ້ເອົາໃຈໃສ່ ກ່ຽວກັບເລື່ອງສຸຂະພາບ ກໍເລີຍກັງວົນຢູ່ນີ້.

정답 1. ① 2. ① 3. ③ 4. ② 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ

 L-50

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

남자는 무엇을 하려고 합니까? ລາວຜູ້ຊາຍຈະເຮັດຫຍັງ?

① 쉬려고 합니다. ② 운동을 하려고 합니다.
③ 일을 시작하려고 합니다. ④ 건강 검진을 받으려고 합니다.

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 아딧 씨, 주말에 못 쉬었어요? 많이 피곤해 보여요. ອາດິດ, ຕອນທ້າຍອາທິດ ບໍ່ໄດ້ພັກຜ່ອນແດ່ບໍ? ເບິ່ງຄືວ່າເມື່ອຍຫຼາຍ.

남: 요즘 몸이 안 좋아요. 얼마 전에 건강 검진을 받았는데 건강이 나빠졌더라고요.
ຊ່ວງນີ້ ສຸຂະພາບຮ່າງກາຍ ບໍ່ດີປານໃດ. ຫວ່າງ2-3ມື້ກ່ອນໄດ້ໄປກວດ ສຸຂະພາບເບິ່ງແລ້ວ ແຕ່ວ່າສຸຂະພາບບໍ່ດີເລີຍ.
그래서 운동을 좀 시작해 보려고요. ສະນັ້ນ, ຈະເລີ່ມອອກກຳລັງກາຍກ່ອນ.

여: 좋은 생각이에요. 일 때문에 바쁘더라도 건강은 꼭 챙겨야지요.
ເປັນຄວາມຄິດທີ່ດີ. ເຖິງວ່າຈະຫຍຸ້ງວຽກຫຼາຍປານໃດກໍຕາມ ກໍຕ້ອງຄິດເຖິງສຸຂະພາບແດ່.

정답 1. ②



# EPS-TOPIK 읽기 ພາກອ່ານ **EPS-TOPIK**



ຂໍ້ 1 ແລະ 2 ແມ່ນເປັນຄຳຖາມ ທີ່ຊອກຫາສຳນວນທີ່ເໝາະສົມ ຕື່ມໃສ່ບ່ອນຫວ່າງ. ຈົ່ງຄິດ ທົບທວນຄືນ ຄຳສັບທີ່ຮຽນມາຂ້າງເທິງ ແລ້ວຕອບຄຳຖາມ.

[1~2] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 불량품이 계속 나오고 있으니까 문제를 ____________ 수 있는 방법을 찾아야 합니다.
ຍ້ອນຜະລິດຜະລິດຕະພັນ ທີ່ບໍ່ມີຄຸນະພາບອອກມາຕະຫຼອດ ຕ້ອງໄດ້ຊອກຫາວິທີການ ແກ້ໄຂ ບັນຫານີ້.

① 개선할　② 주의할　③ 준수할　④ 정비할

2. 작업장 환경이 별로 깨끗하지 않아서 늘 ____________ 위해 애쓰는 편입니다.
ຍ້ອນວ່າ ສະພາບແວດລ້ອມບ່ອນເຮັດວຽກ ບໍ່ສະອາດ ມີແນວໂນ້ມ ກະຕຸ້ນໃຫ້ບຸກຄົນ ເຮັດວຽກຫຼາຍຂຶ້ນ ເພື່ອເຮັດໃຫ້ມີການທຳຄວາມສະອາດ ຢ່າງສະໝ່ຳສະເໝີ.

① 휴식을 취하기　② 스트레칭을 하기
③ 골고루 섭취하기　④ 청결을 유지하기



ຂໍ້ 3 ແລະ 4 ແມ່ນເລືອກເອົາປະໂຫຍກ ທີ່ກ່ຽວຂ້ອງກັບຮູບພາບ. ສຳລັບຂໍ້ 5 ແມ່ນເປັນການອ່ານບົດເລື່ອງ ແລ້ວເລືອກເອົາຄຳຕອບ ຂອງແຕ່ລະຄຳຖາມ.

[3~4] 다음 그림을 보고 맞는 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

3. 

① 팔 운동을 하고 있어요.
② 목 운동을 하고 있어요.
③ 허리 운동을 하고 있어요.
④ 허벅지 운동을 하고 있어요.

4. 

① 조치를 취하세요.
② 기계를 살펴보세요.
③ 안전 수칙을 지키세요.
④ 작업 도구를 점검하세요.

5. 안내판의 설명으로 맞지 **않는** 것을 고르십시오.
ຈົ່ງເລືອກເອົາສິ່ງທີ່ ບໍ່ຖືກຕ້ອງກັບຄຳອະທິບາຍ ໃນກະດານແຈ້ງຂ່າວນັ້ນ.

[안전 교육]
[ການເຝິກອົບຮົມ ການປ້ອງກັນຄວາມປອດໄພ]
일시: 2월 27일(목) 14:00~16:00
ວັນທີ : 27 ເດືອນ 2 (ພະຫັດ) ເວລາ 14:00 - 16:00 ນາທີ
장소: 대강당
ສະຖານທີ: ສະໂມສອນໃຫຍ່

① 안전 교육을 합니다.
② 교육은 대강당에서 합니다.
③ 목요일 오전에 교육을 합니다.
④ 두 시간 동안 교육을 할 겁니다

정답 1. ① 2. ④ 3. ② 4. ③ 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄໍາຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

제 취미는 운동입니다. 땀을 흘리면서 운동을 하면 스트레스도 _________ 건강도 좋아지기 때문에 저는 자주 운동을 합니다.

ກິດຈະກຳເວລາຫວ່າງຂອງຂ້ອຍ ແມ່ນການອອກກຳລັງກາຍ. ຖ້າຫາກວ່າ ອອກກຳລັງກາຍແລ້ວເຮັດໃຫ້ມີເຫື່ອ ອອກມາ, ແລ້ວກໍເຮັດໃຫ້ຄາຍຄຽດໄດ້ ແລະ ສຸຂະພາບກໍແຂງແຮງ. ສະນັ້ນ, ຂ້ອຍຈຶ່ງອອກກຳລັງກາຍເປັນປະຈຳ.

① 받고 ② 주고 ③ 풀리고 ④ 쌓이고

2.

건강 검진을 했는데 담배 때문에 건강이 안 좋아졌다고 의사가 말했습니다. 그래서 담배를 _ 했습니다.

ໄດ້ໄປກວດສຸຂະພາບເບິ່ງແລ້ວ ແຕ່ວ່າ ທ່ານໝໍບອກວ່າ ເປັນເພາະສູບຢາ ເລີຍເຮັດໃຫ້ສຸຂະພາບບໍ່ດີ. ສະນັ້ນ, ຈຶ່ງໄດ້ຢຸດສູບຢາ.

① 사기로 ② 끊기로 ③ 키우기로 ④ 피우기로

3. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

저는 축구를 좋아합니다. 그래서 시간이 있을 때마다 동료들과 함께 공장 운동장에서 축구를 합니다. 축구 경기를 보는 것도 좋아합니다. 주로 텔레비전으로 경기를 보지만 가끔 축구장에 직접 가기도 합니다.

ຂ້ອຍມັກກິລາເຕະບານ. ສະນັ້ນ, ມີເວລາຫວ່າງທຸກຄັ້ງ ຈະຫຼິ້ນກິລາເຕະບານກັບເພື່ອນຮ່ວມງານ ໃນເດີ່ນກິລາຂອງ ໂຮງງານ. ເບິ່ງການແຂ່ງຂັນກິລາເຕະບານ ກໍມັກຄືກັນ. ສ່ວນໃຫຍ່ແລ້ວຈະເບິ່ງການແຂ່ງຂັນກິລາເຕະບານ ໃນໂທລະທັດ ບາງຄັ້ງກໍ່ໄປເບິ່ງການແຂ່ງຂັນກິລາເຕະບານ ຢູ່ຂອບສະໜາມເລີຍ.

① 연휴 계획 ② 운동 규칙 ③ 취미 활동 ④ 작업 일정

정답 1. ③ 2. ② 3. ③



## 발음 ການອອກສຽງ



P-26

**ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.**

ໃນກໍລະນີທີ ພະຍາງທາງໜ້າລົງທ້າຍ ດ້ວຍພະຍັນຊະນະ ແລະ ພະຍາງຕໍ່ມາ ແມ່ນເລີ່ມຕົ້ນດ້ວຍ ສະຫຼະ '이', '야', '여', '요', '유' ພະຍາງຫຼັງແມ່ນກາຍເປັນ 'ㄴ' ແລ້ວຈະອອກສຽງເປັນ [니], [냐], [녀], [뇨], [뉴].

(1) 맨입, 솜이불, 한여름

(2) 담요, 눈요기, 식용유

(3) 웬 일이에요?

(4) 무슨 약을 먹어요?




# 한국에 가서 일을 하고 싶은데요
ຂ້ອຍຢາກໄປເຮັດວຽກ ຢູ່ເກົາຫຼີ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການຖາມ ແລະ ຕອບກ່ຽວກັບ ລະບົບການອະນຸຍາດການຈ້າງງານ, ການສອບຖາມກ່ຽວກັບ EPS-TOPIK |
| □ ກິດຈະກຳ | ການຕື່ມແບບຟອມສະໝັກ EPS-TOPIK |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ລະບົບການອະນຸຍາດການຈ້າງງານ, ການສອບເສັງວັດລະດັບພາສາເກົາຫຼີ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ຄວາມເຂົ້າໃຈກ່ຽວກັບ ລະບົບການອະນຸຍາດການຈ້າງງານ |



## 대화 1 ບົດສົນທະນາ 1






ຕໍ່ໄປ ເປັນການສົນທະນາລະຫວ່າງ ອີບານ ແລະ ພະນັກງານ ພັດທະນາ ຊັບພະຍາກອນມະນຸດ. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

이반 저, 한국에 가서 일을 하고 싶은데요.
ຂ້ອຍ ຢາກໄປເຮັດວຽກຢູ່ເກົາຫຼີ.

직원 아, 그러세요? 이쪽으로 앉으세요. 어떤 일을 하고 싶으세요?
ອາ. ແມ່ນບໍ?. ເຊີນມານັ່ງທາງນີ້. ຢາກເຮັດວຽກຫຍັງບໍ?

이반 제조업 쪽 일을 해 보고 싶어요.
ຂ້ອຍຢາກລອງເຮັດວຽກ ໃນຂົງເຂດອຸດສາຫະກຳການຜະລິດ.

직원 잘됐네요. 제조업에서 사람을 제일 많이 뽑고 있거든요.
ພໍດີເລີຍ!, ໃນຂະແໜງການອຸດສາຫະກຳ ການຜະລິດ ແມ່ນຕ້ອງການຈ້າງແຮງງານຈຳນວນຫຼາຍ.

이반 그런데 고용허가제로 한국에 가면 몇 년 정도 일할 수 있어요?
ຖ້າໄດ້ຮັບການອະນຸຍາດ ໃຫ້ໄປເຮັດວຽກຢູ່ເກົາຫຼີ ຈະສາມາດເຮັດວຽກໄດ້ປະມານຈັກປີ?

직원 취업 기간은 3년인데 재계약을 하면 최대 1년 10개월까지 더 있을 수 있어요.
ຊ່ວງໄລຍະການຈ້າງງານແມ່ນ 3 ປີ ໃນກໍລະນີທີ່ສາມາດຕໍ່ອີກຕື່ມໄດ້ 1 ປີ 10 ເດືອນ.

이반 아, 그렇군요. 신청하려면 어떻게 해야 하죠?
ອາ, ແມ່ນຫວາ. ຖ້າຫາກຢາກສະໝັກ ແມ່ນຕ້ອງເຮັດແນວໃດບໍ?

사람을 뽑다 ຈ້າງງານ

취업 기간 ໄລຍະເວລາຈ້າງງານ






ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 이반 씨는 어디에서 일하고 싶어해요? ອີບານ ຢາກເຮັດວຽກຢູ່ໃສ?
2. 이반 씨는 어떤 일을 하고 싶어해요? ອີບານ ຢາກເຮັດວຽກໃນຂົງເຂດໃດ?

정답 1. 한국에서 일하고 싶어해요. 2. 제조업 일을 하고 싶어해요.



## 어휘 1 ຄຳສັບ 1   고용허가제 ລະບົບການອະນຸຍາດຈ້າງງານ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ລະບົບການອະນຸຍາດ ການຈ້າງງານ. ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່ບໍ?



제조업
ອຸດສາຫະກຳ ການຜະລິດ



건설업
ອຸດສາຫະກຳ ການກໍ່ສ້າງ



서비스업
ການບໍລິການ



축산업
ການລ້ຽງສັດ



농업
ກະສິກຳ



어업
ການປະມົງ




고용허가제
ລະບົບການອະນຸຍາດ ການຈ້າງງານ



문의하다
ສອບຖາມ



ຈົ່ງຕອບຄຳຖາມລຸ່ມນີ້ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບ ຂ້າງເທິງນັ້ນ.

1. 〈보기〉와 같이 말해 보세요. ຈົ່ງລອງເວົ້າ ຄືດັ່ງຕົວຢ່າງ.






가: 고용허가제로 한국에 가면 어떤 일을 하고 싶어요?
ເຈົ້າຢາກເຮັດວຽກປະເພດໃດ ຖ້າເຈົ້າໄປເກົາຫຼີ ໃນລະບົບການອະນຸຍາດຈ້າງງານ?

나: 제조업 쪽 일을 하고 싶어요.
ຂ້ອຍຢາກເຮັດວຽກ ໃນຂົງເຂດອຸດສາຫະກຳ ການຜະລິດ.

1) 

2) 

3) 

4) 



ຈົ່ງຕອບຄຳຖາມລຸ່ມນີ້ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບ ຂ້າງເທິງນັ້ນ.

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.



1) ______ → 2) ______ → 3) ______ → 4) ______

보기

| 보험금을 타다 | 지급 심사를 받다 | 보험금을 지급하다 | 보험금을 청구하다 |
|---|---|---|---|
| ຮັບເງິນປະກັນໄພ | ໄດ້ຮັບການກວດກາ | ຈ່າຍເງິນປະກັນໄພ | ປະກອບເອກະສານ ທວງຄືນເງິນປະກັນໄພ |

2. 그림을 보고 알맞은 말을 연결하세요.
ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳເວົ້າ ທີ່ເໝາະສົມ.

① • • ㉠ 청구서

② • • ㉡ 영수증

③ • • ㉢ 병원비

④ • • ㉣ 휴업 급여



정답 1. 1) 보험금을 청구하다 2) 지급 심사를 받다 3) 보험금을 지급하다 4) 보험금을 타다
2. ① ㉡ ② ㉠ ③ ㉣ ④ ㉢



## 활동 ກິດຈະກຳ

외국인 근로자 보험 안내입니다. 잘 읽고 질문에 답하세요.
ເປັນການໃຫ້ຄຳແນະນຳ ກ່ຽວກັບປະກັນໄພແຮງງານຕ່າງດ້າວ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

**외국인 근로자 전용 보험** ປະກັນໄພ ໃຊ້ສະເພາະແຮງງານຕ່າງດ້າວ

| | 출국 만기 보험<br>ປະກັນໄພຄ້ຳປະກັນ ການກັບປະເທດ | 귀국 비용 보험<br>ປະກັນໄພຄ່າໃຊ້ຈ່າຍ ກັບຄືນປະເທດ |
|---|---|---|
| 도입 목적<br>ສະເໜີຈຸດປະສົງ | 퇴직금 지급에 따른 부담 완화<br>ເພື່ອຫຼຸດຜ່ອນພາລະໃນການໃຊ້ຈ່າຍ ພາຍຫຼັງບຳນານ | 귀국 시 필요한 항공비 충당<br>ພາກສ່ວນຄ່າໃຊ້ຈ່າຍປີ້ຍົນ ທີ່ຈຳເປັນໃນການກັບປະເທດ |
| 근거<br>ພື້ນຖານທາງດ້ານກົດໝາຍ | 외국인 고용법 제13조<br>ມາດຕາ 13 ຂອງກົດໝາຍວ່າດ້ວຍ ການຈ້າງງານແຮງງານຕ່າງດ້າວ<br>동법 시행령 제21조<br>ມາດຕາ 21 ດຳລັດປະກາດໃຊ້ກົດໝາຍ ວ່າດ້ວຍການຈ້າງງານແຮງງານຕ່າງດ້າວ | 외국인 고용법 제15조<br>ມາດຕາ 15 ຂອງກົດໝາຍວ່າດ້ວຍ ການຈ້າງງານແຮງງານຕ່າງດ້າວ<br>동법 시행령 제22조<br>ມາດຕາ 22 ດຳລັດປະກາດໃຊ້ກົດໝາຍ ວ່າດ້ວຍການຈ້າງງານແຮງງານຕ່າງດ້າວ |
| 보험 가입<br>ການຂຶ້ນທະບຽນປະກັນໄພ | 사업주 ຜູ້ໃຊ້ແຮງງານ | 외국인 근로자 ແຮງງານຕ່າງດ້າວ |
| 가입 시기<br>ເວລາການຂຶ້ນທະບຽນ | 근로계약 효력 발생일로부터 15일 이내<br>ພາຍໃນ 15 ວັນ ນັບແຕ່ມື້ທີສັນຍາຈ້າງງານ ມີຜົນບັງຄັບໃຊ້ | 근로계약 효력 발생일로부터 80일 이내<br>ພາຍໃນ 80 ວັນ ນັບແຕ່ມື້ທີສັນຍາຈ້າງງານ ມີຜົນບັງຄັບໃຊ້ |
| 보험금 납부 방법<br>ວິທີການຈ່າຍ ຄ່າທຳນຽມປະກັນໄພ | 매월 적립 ຈ່າຍເປັນລາຍເດືອນ | 일시금 ຈ່າຍເປັນງວດ |
| 보험금 지급 사유<br>ເຫດຜົນທີ່ໃຊ້ຈ່າຍເງິນປະກັນໄພ | 사업장 이탈 없이 1년 이상 근무한 외국인 근로자의 출국(일시 출국 제외)<br>ແຮງງານຕ່າງດ້າວ ໄດ້ອອກຈາກບ່ອນເຮັດວຽກເກີນກວ່າ 1 ປີ ທີ່ອອກຈາກປະເທດ (ຍົກເວັ້ນອອກປະເທດຊົ່ວຄາວ) | 외국인 근로자 출국(일시 출국 제외)<br>-자진 출국 또는 강제 퇴거의 경우도 해당<br>ແຮງງານຕ່າງດ້າວ ທີ່ອອກຈາກປະເທດ (ຍົກເວັ້ນໃນກໍລະນີທີ່ອອກຈາກປະເທດຊົ່ວຄາວ)<br>- ລວມທັງກໍລະນີ ທີ່ອອກຈາກປະເທດ ດ້ວຍຄວາມສະໝັກໃຈ ຫຼື ດ້ວຍການເນລະເທດ |

◆ 미리 보험금을 청구하면 인천공항에서도 보험금을 받고 환전까지 할 수 있는 서비스가 시행 중입니다.
ຖ້າຫາກ ໄດ້ສະໝັກທວງເງິນ ປະກັນໄພໄວ້ລ່ວງໜ້າ ສາມາດຮັບເງິນປະກັນໄພ ແລະ ແລກປ່ຽນເງິນໄດ້ ທີ່ສະໜາມບິນອິນຈອນ.

1. 위 표의 내용과 관계가 있는 것을 연결하세요. ຈົ່ງເຊື່ອມຕໍ່ຄຳຕອບ ທີ່ມີເນື້ອໃນກ່ຽວພັນກັນ ຕາມຕາຕະລາງຂ້າງເທິງນັ້ນ.

① 귀국 비용 보험 •
② 출국 만기 보험 •

• ㉠ 한 번에 보험료 납입
• ㉡ 외국인 근로자가 가입
• ㉢ 외국인 근로자의 퇴직금
• ㉣ 근로계약 후 보름 내 가입

정답 1. ① ㉠, ㉡ ② ㉢,㉣

# 외국인 근로자 보험 ປະກັນໄພ ແຮງງານຕ່າງດ້າວ

## 외국인 근로자 전용 보험 ປະກັນໄພ ສະເພາະແຮງງານຕ່າງດ້າວ

외국인 근로자는 4대 보험 외에 외국인 근로자 전용 보험에 가입해야 합니다. 전용 보험으로는 출국 만기 보험, 귀국 비용 보험, 상해 보험, 임금 체불 보증 보험이 있습니다. 이 중에서 귀국 비용 보험과 상해 보험은 외국인 근로자가 반드시 가입해야 합니다.

ແຮງງານຕ່າງດ້າວ ນອກຈາກປະກັນໄພ 4 ຂົງເຂດທີ່ໄດ້ກ່າວມາຂ້າງເທິງນັ້ນແລ້ວ ຕ້ອງໄດ້ຂຶ້ນທະບຽນ ປະກັນໄພສະເພາະຄົນຕ່າງດ້າວນຳອີກ ເຊິ່ງປະກອບມີປະກັນໄພຄ້ຳ ປະກັນການກັບປະເທດ, ປະກັນໄພຄ່າໃຊ້ຈ່າຍກັບຄືນປະເທດ, ປະກັນໄພອຸປະຕິເຫດ ແລະ ປະກັນໄພຄ່າແຮງງານ. ສຳລັບປະກັນໄພ ປະກັນໄພຄ່າໃຊ້ຈ່າຍ ກັບຄືນປະເທດ ແລະ ປະກັນໄພອຸບັດຕິເຫດແຮງງານຕ່າງດ້າວທຸກຄົນຕ້ອງໄດ້ສະໝັກໝົດ.

| 보험의 종류<br>ປະເພດ ການປະກັນໄພ | 가입 목적<br>ຈຸດປະສົງຂອງປະກັນໄພ | 가입 주체<br>ຜູ້ທີ່ຂຶ້ນທະບຽນ ປະກັນໄພ |
|---|---|---|
| 고용 보험<br>ປະກັນໄພ ຄ່າແຮງງານ | 실업 예방, 고용 촉진 및 생활 안정, 재취업 지원<br>ໃຫ້ຄວາມໝັ້ນຄົງໃນອາຊີບ, ສົ່ງເສີມໃຫ້ມີອາຊີບ, ຮັບປະກັນການດຳລົງຊີວິດ ແລະ ສະໜັບສະໜູນ ການຈ້າງງານຄືນ | 사용자,<br>외국인 근로자<br>ຜູ້ໃຊ້ແຮງງານ, ແຮງງານຕ່າງດ້າວ |
| 산재 보험<br>ປະກັນໄພອາຊີບ | 업무상 재해에 대한 보상, 요양, 재활<br>ຈ່າຍລາຍໄດ້ທົດແທນ ໃຫ້ກັບແຮງງານ ທີ່ໄດ້ຮັບບາດເຈັບ ບໍ່ສາມາດອອກແຮງງານໄດ້ ແລະ ຄ່າໃຊ້ຈ່າຍໃນການປິ່ນປົວ | 사용자<br>ຜູ້ໃຊ້ແຮງງານ |
| 건강 보험<br>ປະກັນໄພ ສຸຂະພາບ | 질병, 부상에 대한 예방, 진단, 치료, 사망 및 보건 증진<br>ຄ້ຳປະກັນ ໃນການປ້ອງກັນ, ກວດສຸຂະພາບ, ການຮັກສາ ແລະ ປິ່ນປົວພະຍາດ ແລະ ການເຈັບເປັນ | 사용자,<br>외국인 근로자<br>ຜູ້ໃຊ້ແຮງງານ, ແຮງງານຕ່າງດ້າວ |
| 국민 연금<br>ປະກັນໄພ ບຳນານ | 노령, 장애, 사망 등으로 소득이 없는 당사자 및 유족의 생활 보장<br>ສະໜອງເງິນ ທີ່ໄດ້ຈາກການສະສົມເພື່ອບຳນານ ໃຫ້ກັບຜູ້ທີ່ບໍ່ໄດ້ເຮັດວຽກແລ້ວ ແລະ ຜູ້ທີ່ຕ້ອງໄດ້ເບິ່ງແຍງ ເນື່ອງຈາກ ບຳນານ, ພິການ, ເສຍຊີວິດ ແລະ ອື່ນໆ | 사용자,<br>외국인 근로자<br>ຜູ້ໃຊ້ແຮງງານ, ແຮງງານຕ່າງດ້າວ |
| 귀국 비용 보험<br>ປະກັນໄພ<br>ຄ່າໃຊ້ຈ່າຍກັບຄືນປະເທດ | 외국인 근로자의 귀국 시 필요한 비용 충당<br>ກວມເອົາຄ່າໃຊ້ຈ່າຍທັງໝົດ ທີ່ຈຳເປັນສຳລັບການເດີນທາງກັບປະເທດ | 외국인 근로자<br>ແຮງງານຕ່າງດ້າວ |
| 상해 보험<br>ປະກັນໄພ ອຸປະຕິເຫດ | 업무상 재해 이외의 외국인 근로자의 사망·질병 대비<br>ແມ່ນຮັບປະກັນ ການຊ່ວຍເຫຼືອແຮງງານຕ່າງດ້າວ ໃນກໍລະນີທີ່ເສຍຊີວິດ, ຕິດພະຍາດ, ບາດເຈັບ ທີ່ເກີດຢູ່ນອກບ່ອນເຮັດວຽກ | 외국인 근로자<br>ແຮງງານຕ່າງດ້າວ |
| 출국 만기 보험<br>ປະກັນໄພ<br>ຄ້ຳປະກັນການກັບປະເທດ | 중소기업의 퇴직금 일시 지급에 따른 부담 완화<br>ຊ່ວຍແບ່ງເບົາພາລະ ໃນການໃຊ້ຈ່າຍ ຫຼັງການພັກບຳນານ ຂອງບັນດາຫົວໜ່ວຍທຸລະກິດຂະໜາດນ້ອຍ ແລະ ກາງ | 사용자<br>ຜູ້ໃຊ້ແຮງງານ |
| 임금 체불 보증 보험<br>ປະກັນໄພ ຄ້ຳປະກັນລາຍໄດ້ | 외국인 근로자에 대한 임금 체불 대비<br>ຮັບປະກັນເງິນຄ່າແຮງງານ ຂອງຄົນຕ່າງດ້າວ ທີ່ບໍ່ໄດ້ຮັບການເບີກຈ່າຍ ແລະ ຊ່ວຍໃນການທວງເງິນ ຄ່າແຮງງານ | 사용자<br>ຜູ້ໃຊ້ແຮງງານ |

## 보증 보험금 신청 및 수령 ການປະກອບເອກະສານ ແລະ ທວງເອົາຜົນປະໂຫຍດ ຈາກປະກັນໄພ

외국인 근로자는 사업장에서 임금체불이 발생한 경우 고용노동부 고용센터 또는 근로감독과에 임금 체불 사실을 신고하여 확인을 받은 후, 한국산업인력공단에 보험금 지급을 신청할 수 있습니다. 보험기간 이내에 임금체불이 아닌 기타 사유(이탈, 출국, 사망 등)로 외국인 근로자와 근로 계약이 해지된 경우 사용하는 보험금 사업자(서울보증보험)에 대해 납입한 보험료 중 경과 보험료(최저 보험료)를 제외한 미경과 보험료에 대해 환급을 받을 수 있습니다.

ໃນກໍລະນີ ທີ່ການຈ່າຍຄ່າແຮງງານເລື່ອນ, ແຮງງານຕ່າງດ້າວສາມາດແຈ້ງການເລື່ອນຈ່າຍຄ່າແຮງງານນັ້ນ ໃຫ້ກັບສູນປຶກສາດ້ານອາຊີບ ຫຼື ພະແນກກວດກາແຮງງານ ຂອງກະຊວງການຈ້າງງານ ແລະ ແຮງງານເກົາຫຼີ. ຫຼັງຈາກການແຈ້ງນັ້ນ ໄດ້ຮັບການກວດສອບ ແຮງງານຕ່າງດ້າວສາມາດທວງ ແລະ ຮັບຜົນປະໂຫຍດອື່ນໆຈາກ ສູນການພັດທະນາ ຊັບພະຍາກອນມະນຸດ ຂອງເກົາຫຼີ. ໃນກໍລະນີ ສັນຍາການຈ້າງງານໄດ້ສິ້ນສຸດ ໃນຊ່ວງໄລຍະການປະກັນໄພ ຍົກເວັ້ນກໍລະນີເລື່ອນການຈ່າຍຄ່າແຮງງານ (ໃນກໍລະນີທີ່ອອກຈາກວຽກ, ກັບຄືນປະເທດ, ເສຍຊີວິດ ແລະ ອື່ນໆ) ແຮງງານຕ່າງດ້າວສາມາດຖອນເງິນຄືນ ໃນຊ່ວງໄລຍະເວລາ ທີ່ຍັງເຫຼືອນັ້ນ. ການຖອນເງິນຄືນດັ່ງກ່າວນີ້ ແມ່ນບົນພື້ນຖານ ຂອງການປະກັນ ຂອງຜູ້ຊື້ປະກັນ (ບໍລິສັດປະກັນໄພ ໂຊ) ແຕ່ຈະບໍ່ໄດ້ຕາມປະກັນໄພຊັ້ນໜຶ່ງ (ອາດຈະໄດ້ຮັບຂັ້ນຕ່ຳສຸດ ຂອງການປະກັນໄພຊັ້ນໜຶ່ງ).



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການຟັງການບັນຍາຍ ແລ້ວເລືອກເອົາຄຳຕອບນັ້ນວ່າ ບົດສົນທະນານັ້ນ ກ່ຽວກັບຫຍັງ. ຂໍ້ 3 ແມ່ນເປັນການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~2] 다음을 듣고 무엇에 대한 대화인지 고르십시오.

ຈົ່ງຟັງບົດສົນທະນາຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ບົດສົນທະນານັ້ນກ່ຽວກັບຫຍັງ.

Track 168

1. ① 보험 가입 ② 보험금 납입 ③ 보험금 환급 ④ 보험금 청구

2. ① 내역서 ② 진단서 ③ 청구서 ④ 영수증

3. 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

① 네, 매달 보험료를 내요. ② 네, 지금 식사 중이에요.
③ 네, 귀국 전에 신청하려구요. ④ 네, 입국하자마자 가입했어요.



ຂໍ້ 4 ແລະ 5 ແມ່ນເປັນການຟັງການບັນຍາຍ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນອ່ານຟັງບົດສົນທະນາ ຈົ່ງກວດກາເບິ່ງເນື້ອໃນ ຂອງຕົວຢ່າງອີກຄັ້ງໜຶ່ງກ່ອນ.

[4~5] 이야기를 듣고 질문에 알맞은 대답을 고르십시오.

ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

4. 두 사람이 이야기하는 보험은 무엇입니까?

ສອງຄົນນັ້ນ ລົມກັນກ່ຽວກັບປະກັນໄພຫຍັງ?

① 산재 보험 ② 상해 보험 ③ 귀국 비용 보험 ④ 출국 만기 보험

5. 두 사람은 무엇에 대해 이야기하고 있습니까?

ສອງຄົນນັ້ນ ກຳລັງລົມກັນກ່ຽວກັບຫຍັງ?

① 병원비 ② 치료비 ③ 휴업 급여 ④ 장애 보상금



### 듣기 대본 ເນື້ອໃນບົດຟັງ

1. 남: 보험을 들려고 하는데요. ກຳລັງວາງແຜນ ຢາກເຮັດປະກັນໄພ.
   여: 네, 이쪽에 앉으세요. ເຈົ້າ, ເຊີນມານັ່ງທາງນີ້.
2. 여: 보험금을 청구할 때 어떤 치료를 받았는지 볼 수 있는 서류가 필요하다고 해요.
   ເວລາຂຶ້ນທະບຽນປະກັນໄພແລ້ວ ຂ້ອຍຢາກຮູ້ວ່າ ມີຜົນປະໂຫຍດອັນໃດແດ່ ທີ່ຈະໄດ້ຮັບ ແລະ ເອກະສານອັນໃດແດ່ທີ່ຈຳເປັນ ໃນເວລາທວງເງິນປະກັນໄພ.
   남: 아, 그 서류는 병원에서 발급 받을 수 있어요. ອາ, ເອກະສານນັ້ນ ສາມາດຮັບໄດ້ຈາກໂຮງໝໍ.
3. 남: 보험금을 청구했어요? ໄດ້ປະກອບເອກະສານ ທວງເງິນປະກັນໄພແລ້ວບໍ?
4. 남: 이 보험은 반드시 가입해야 하는 보험이에요?
   ປະກັນໄພນີ້ ແມ່ນປະກັນໄພ ທີ່ຕ້ອງໄດ້ຂຶ້ນທະບຽນບໍ?
   여: 네, 작업장이 아닌 곳에서 다칠 수도 있는 거잖아요. 꼭 가입해야죠.
   ເຈົ້າ, ໃນກໍລະນີ ທີ່ໄດ້ຮັບບາດເຈັບ ທີ່ບໍ່ແມ່ນໃນສະຖານທີ່ເຮັດວຽກກໍມີ. ສະນັ້ນ, ຕ້ອງໄດ້ຂຶ້ນທະບຽນຊື້ປະກັນໄພນີ້.
5. 여: 지난번에 치료 받으신 후에도 계속 몸이 안 좋으시다는 거죠?
   ຄັ້ງກ່ອນແມ່ນໄດ້ຮັບການຮັກສາແລ້ວ ແຕ່ສຸຂະພາບກໍຍັງບໍ່ດີຂຶ້ນແມ່ນບໍ?
   남: 네, 이런 경우에 받을 수 있는 보상이 있어요?
   ເຈົ້າ, ໃນກໍລະນີນີ້ ຍັງສາມາດ ຮັບເງິນຊົດເຊີຍໄດ້ອີກບໍ?
   여: 네, 있습니다. ເຈົ້າ, ຍັງສາມາດຮັບໄດ້.

정답 1. ① 2. ② 3. ③ 4. ② 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

L-54

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   남자가 여자를 찾아 온 이유는 무엇입니까? ເຫດຜົນທີ່ຜູ້ຊາຍຄົນນັ້ນມາຫາ ແມ່ຍິງຄົນນັ້ນ ແມ່ນຫຍັງ?

   ① 보험이 만기가 되어서
   ② 보험에 가입하기 위해서
   ③ 보험료를 확인하기 위해서
   ④ 보험금을 신청하고 싶어서

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 실례합니다. 저, 얼마 전에 수술을 받았는데 보험금을 받을 수 있어요?
   ຂໍໂທດ, ໃນກໍລະນີ ແມ່ຂ້ອງຂ້ອຍ ໄດ້ຮັບການຜ່າຕັດ ແມ່ນສາມາດຮັບເງິນປະກັນໄພໄດ້ບໍ?
   여: 그럼요. 이럴 때를 위해서 보험 가입을 하셨는데요.
   ແນ່ນອນ. ໃນກໍລະນີດັ່ງກ່າວນັ້ນ ກໍໄດ້ຂຶ້ນທະບຽນປະກັນໄພ ເຊັ່ນດຽວກັນ.
   남: 보험금은 어떻게 신청해야 돼요? ສະໝັກທວງເງິນປະກັນໄພ ແມ່ນຕ້ອງໄດ້ເຮັດແນວໃດ?
   여: 신분증하고 진료비 영수증만 있으면 돼요. ພຽງແຕ່ມີບັດປະຈຳຕົວ ແລະ ໃບບິນຄ່າປິ່ນປົວກໍໄດ້ແລ້ວ.

정답 1. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ. ຈົ່ງອ່ານປະໂຫຍກໃຫ້ດີ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

[1~2] 다음 그림을 보고 맞는 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ.

1. 

① 사망했어요. ② 장애가 남았어요.
③ 질병에 걸렸어요. ④ 상해를 입었어요.

2.

① 영수증입니다. ② 내역서입니다.
③ 청구서입니다. ④ 진단서입니다.



ຂໍ້ 3 ແລະ 4 ແມ່ນເປັນການເລືອກເອົາສຳນວນ ທີ່ເໝາະສົມຕື່ມໃສ່ບ່ອນຫວ່າງ. ຂໍ້ 5 ແມ່ນເປັນການອ່ານບົດສົນທະນາ ແລ້ວຕອບຄຳຖາມ. ຈົ່ງຕັ້ງໃຈອ່ານໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

3. 보험금을 ______________ 먼저 보험금을 청구해야 합니다.
ຖ້າຢາກໄດ້ຮັບເງິນຊົດເຊີຍປະກັນໄພ ກ່ອນອື່ນ ຕ້ອງໄດ້ປະກອບເອກະສານ ທວງຄືນເງິນຊົດເຊີຍປະກັນໄພກ່ອນ.

① 내려면 ② 타려면 ③ 신청하려면 ④ 지급하려면

4. 이 보험은 ______________이/가 되면 그동안 낸 보험금을 전부 돌려 받을 수 있습니다.
ຖ້າປະກັນໄພນີ້ ໝົດກຳນົດແລ້ວ ສາມາດໄດ້ຮັບເງິນທັງໝົດ ທີ່ຈ່າຍໄປໃຫ້ກັບປະກັນໄພ.

① 만기 ② 신청 ③ 소멸 ④ 보상

5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

여: 다쳐서 일도 못하고 생활이 어려워서 어떡해요.
ຍ້ອນໄດ້ຮັບບາດເຈັບ ຈຶ່ງເຮັດວຽກບໍ່ໄດ້ ຊີວິດການເປັນຢູ່ ກໍຫຍຸ້ງຍາກ ເຮັດແນວໃດໄດ້.
남: 그래도 보험금으로 평균 임금의 70%를 받을 수 있으니까 다행이에요.
ເຖິງແນວໃດກໍຕາມ ຂ້ອຍຍັງດີໃຈ ທີ່ຍັງໄດ້ຮັບ 70% ຂອງເງິນເດືອນ ຈາກການຊົດເຊີຍຂອງປະກັນໄພ.

두 사람은 무엇에 대해 이야기를 하고 있습니까? ສອງຄົນນັ້ນ ກຳລັງລົມກັນກ່ຽວກັບຫຍັງ?

① 병원비 ② 치료비 ③ 휴업 급여 ④ 장애 보상금

정답 1. ② 2. ① 3. ② 4. ① 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 물건을 교환하거나 환불할 때에는 물건을 살 때 받은 ________을/를 반드시 가지고 가야 합니다.
ໃນເວລາປ່ຽນວັດຖຸສິ່ງຂອງ ຫຼື ຖອນເງິນຄືນນັ້ນ ຕ້ອງໄດ້ນຳເອົາ ໃບບິນ ທີ່ໄດ້ຮັບໃນເວລາຊື້ເຄື່ອງນັ້ນໄປນຳ.

① 영수증 ② 처방전 ③ 보고서 ④ 신분증

2. 계단에서 넘어져서 다리를 좀 다쳤습니다. 보험에 가입해 ________ 병원비를 지원받을 수 있었습니다.
ຂ້ອຍໄດ້ລົ້ມຢູ່ຂັ້ນໄດ ເຮັດໃຫ້ຂາໄດ້ຮັບບາດເຈັບ. ຍ້ອນໄດ້ຂຶ້ນທະບຽນປະກັນໄພ ຈຶ່ງສາມາດ ໄດ້ຮັບຄ່າໃຊ້ຈ່າຍປິ່ນປົວຢູ່ໂຮງໝໍ.

① 놓기 때문에 ② 놓을 테니까 ③ 놓은 덕분에 ④ 놓는 바람에

3. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

고용허가제를 통해 한국에 온 외국인 근로자들은 상해 보험에 가입해야 합니다. 상해 보험은 업무 외적인 사고나 질병에 대해서도 보상받을 수 있습니다.
ແຮງງານຕ່າງດ້າວ ທີ່ມາເກົາຫຼີຜ່ານລະບົບການອະນຸຍາດ ການຈ້າງງານ (EPS) ຕ້ອງໄດ້ຂຶ້ນທະບຽນ ປະກັນໄພ ອຸປະຕິເຫດ. ສຳລັບ ປະກັນໄພອຸປະຕິເຫດ ເມື່ອເກີດອຸປະຕິເຫດ ນອກບ່ອນເຮັດວຽກ ຫຼື ຕິດພະຍາດ ກໍສາມາດຮັບເງິນຊົດເຊີຍໄດ້.

① 보험 가입 안내 ② 보험 회사 소개
③ 상해 보험 종류 ④ 보험금 납입 방법

정답 1. ① 2. ③ 3. ①



## 발음 ການອອກສຽງ




### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ຄຳກຳມະທີ່ຂຶ້ນຕົ້ນດ້ວຍພະຍັນຊະນະ 'ㄴ' ຫຼື 'ㅁ' ຢູ່ທາງຫຼັງແມ່ນຕາມດ້ວຍ ພະຍັນຊະນະ 'ㄱ, ㄷ, ㅅ, ㅈ' ປົກກະຕິແລ້ວ ຈະອອກສຽງເປັນ [ㄲ], [ㄸ], [ㅆ], [ㅉ] ຕາມລຳດັບ.

(1) (신발을) 신고, (의자에) 앉자
(2) (실을) 감자, (음식이) 남고
(3) 운동화를 신고 왔어요.
(4) 땀을 많이 흘렸으니까 머리를 감자.



# 급여 명세서를 확인해 보세요

ຈົ່ງກວດເບິ່ງໃບຮັບເງິນເດືອນເບິ່ງ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການກວດສອບໃບຮັບເງິນເດືອນ, ການກວດສອບເງິນພິເສດ |
| □ ກິດຈະກຳ | ການອ່ານໃບຮັບເງິນເດືອນ |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ເງິນເດືອນ ແລະ ພາສີ, ເງິນພິເສດ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ເງິນເດືອນ |



## 대화 1 ບົດສົນທະນາ 1






ທັງສອງຄົນ ແມ່ນກຳລັງສົນທະນາກ່ຽວກັບ ໃບສະແດງການຈ່າຍເງິນເດືອນ. ເຮົາເອີ້ນເງິນທີ່ໄດ້ຮັບແທ້ໆ ຈາກໃບຮັບການຈ່າຍເງິນເດືອນ ວ່າແນວໃດ? ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

민수 이반 씨, **통장** 확인해 봤어요? 월급이 들어왔을 텐데요.
ອີບານ, ໄດ້ກວດເບິ່ງບັນຊີທະນາຄານແລ້ວບໍ? ເງິນເດືອນຄືວ່າຈະເຂົ້າແລ້ວ.

이반 네, 그런데 생각보다 적은 것 같아요. 계약서에서 본 금액이 아니더라고요.
ເຈົ້າ, ແຕ່ວ່າເງິນ ທີ່ໄດ້ຮັບແມ່ນຄືໜ້ອຍກວ່າທີ່ຄິດ. ມັນບໍ່ແມ່ນຈຳນວນເງິນທີ່ເຫັນຢູ່ໃນສັນຍາການເຮັດວຽກ.

지은 아, 그건 **각종** 보험과 세금 때문이에요. 계약된 임금에서 세금하고 보험료를 뺀 만큼 받거든요.
ອ່າ, ອັນນັ້ນ ແມ່ນເປັນຍ້ອນ ຄ່າພາສີ ແລະ ປະກັນໄພຂອງຕ່າງໆນາໆ. ເງິນທີ່ໄດ້ຮັບ ແມ່ນຄ່າຈ້າງທີ່ຂຽນຢູ່ໃນສັນຍາ ຫຼັງຈາກຫັກພາສີ ແລະ ປະກັນໄພແລ້ວ.

이반 아, 계약서의 임금을 모두 받는 게 아니군요.
ອ່າ, ບໍ່ແມ່ນວ່າຈະໄດ້ຮັບເງິນ ຄ່າຈ້າງທັງໝົດ ທີ່ຂຽນໄວ້ໃນສັນຍາເນາະ.

지은 네, 급여 명세서를 보면 실수령액이라는 게 있는데, 그게 이반 씨가 **실제로** 받는 돈이에요.
ເຈົ້າ, ຢູ່ໃນ ໃບຮັບເງິນເດືອນ ແມ່ນມີບ່ອນ ທີ່ຂຽນໄວ້ວ່າຈຳນວນເງິນຈ່າຍສຸດທິ, ແລະ ນັ້ນແມ່ນຈຳນວນເງິນ ທີ່ອີບານຈະໄດ້ຮັບຕົວຈິງ.

이반 그렇군요. 다시 급여 명세서를 확인해 봐야겠어요. 고마워요.
ແມ່ນແນວນັ້ນເນາະ. ຂ້ອຍ ຕ້ອງກວດເບິ່ງໃບຮັບເງິນເດືອນ ອີກເທື່ອໜຶ່ງກ່ອນ. ຂອບໃຈ.

> **통장** ປຶ້ມບັນຊີທະນາຄານ
> ·통장을 확인하다 ກວດເບິ່ງ ປຶ້ມບັນຊີທະນາຄານ

> **각종** ຕ່າງໆ, ຕ່າງໆນາໆ

> **실제로** ໃນຕົວຈິງ



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 이반 씨가 계약된 임금보다 임금을 적게 받은 이유는 뭐예요?
   ເຫດຜົນທີ່ ອີບານ ໄດ້ຮັບເງິນຄ່າຈ້າງ ໜ້ອຍກວ່າ ທີ່ຂຽນໄວ້ໃນສັນຍາແມ່ນ ຍ້ອນຫຍັງ?
2. 급여 명세서에서 실제로 받는 돈을 뭐라고 해요?
   ໃນໃບຮັບເງິນເດືອນ ມີຈຳນວນເງິນທີ່ໄດ້ຮັບຕົວຈິງ ເອີ້ນວ່າຫຍັງ?

정답 1. 세금하고 보험료를 뺀 만큼 받기 때문이에요. 2. 실수령액이라고 해요.





## 어휘 1 ຄຳສັບ 1 급여와 세금 ເງິນເດືອນ ແລະ ພາສີ



ໃນໃບສະແດງການ ຈ່າຍເງິນເດືອນ ແມ່ນມີຫຍັງອອກມາແດ່? ພວກເຮົາມາລອງເບິ່ງວ່າ ຕ້ອງກວດເບິ່ງ ໃບສະແດງການຈ່າຍເງິນເດືອນ ວ່າມີຫຍັງແດ່ບໍ?




급여 명세서
ໃບຮັບເງິນເດືອນ




급여 내역
ລາຍລະອຽດ ຂອງເງິນເດືອນ




기본급
ເງິນເດືອນພື້ນຖານ




실수령액
ຈຳນວນເງິນສຸດທິ




세금
ພາສີ




식대
ຄ່າອາຫານ




총액
ຈຳນວນເງິນທັງໝົດ




공제하다
ຫັກ (ຕັດ)




연말정산
ເງິນຫັກພາສີທ້າຍປີ



상여금
ເງິນໂບນັດ



퇴직금
ເງິນບຳເນັດ



국민연금
ເງິນບຳນານ



ຈົ່ງຕອບຄຳຖາມໂດຍ ທີ່ບໍ່ເບິ່ງຄຳສັບ ທີ່ຮຽນມາຂ້າງເທິງ.

## 1. 그림을 보고 〈보기〉처럼 대화를 완성하세요.
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາ ໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.





가: 급여 명세서에서 뭘 확인해야 해요?
ພວກເຮົາຕ້ອງກວດເບິ່ງຫຍັງ ຢູ່ໃນໃບສະແດງການຈ່າຍເງິນເດືອນ?

나: 세금이 맞는지 잘 계산해 보세요.
ຈົ່ງລອງກວດເບິ່ງວ່າ ຄ່າພາສີແມ່ນຖືກຕ້ອງແລ້ວ.





1) 

2) 

3) 

4)

## 2. 빈칸에 맞는 표현을 골라 대화를 완성하세요.
ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)
가: 이번 달에는 월급이 조금 많은 것 같아요. ເງິນເດືອນ ເດືອນນີ້ຄືວ່າໄດ້ຫຼາຍເນາະ.
나: 곧 있으면 추석이니까 ___________이 같이 나왔을 거예요.
ອີກຈັກໜ້ອຍກໍຈະ ແມ່ນວັນຈູຊອກ ແລ້ວ, ກໍຄືຈະແມ່ນໄດ້ຮັບ ເງິນໂບນັສ ນຳ.

① 상여금　　② 퇴직금

2)
가: 주민세하고 소득세는 뭐예요? ພາສີພົນລະເມືອງ ແລະ ພາສີລາຍຮັບ ແມ່ນຫຍັງ?
나: 그건 월급에 대한 기본적인 ___________이에요/예요.
ນັ້ນແມ່ນ ຄ່າພາສີພື້ນຖານ ຂອງເງິນເດືອນ.

① 세금　　② 보험료

3)
가: 급여 명세서에서 실제로 받는 돈을 확인하려면 뭘 봐야 해요?
ຖ້າຢາກກວດເບິ່ງເງິນ ທີ່ໄດ້ຮັບຕົວຈິງໃນ ໃບສະແດງການຈ່າຍເງິນເດືອນ ແມ່ນຕ້ອງເບິ່ງບ່ອນໃດ?
나: ___________이라고 쓰여 있는 부분을 보세요.
ລອງເບິ່ງຢູ່ ພາກສ່ວນທີ່ຂຽນວ່າ ຈຳນວນເງິນສຸດທິ.

① 실수령액　　② 공제 총액

4)
가: 보너스는 어떻게 계산해요? ການຄິດໄລ່ ເງິນໂບນັສ ແມ່ນມີຄືແນວໃດ?
나: 보통은 ___________을 기준으로 100%, 200% 이렇게 계산해요.
ປົກກະຕິແມ່ນເອົາ ອັດຕາ ເງິນເດືອນພື້ນຖານ ມາຄິດໄລ່ເປັນ 100%, 200%.

① 수당　　② 기본급

**정답**
1. 1) 가: 급여 명세서에서 뭘 확인해야 해요? 나: 총액이 맞는지 잘 계산해 보세요.
2) 가: 급여 명세서에서 뭘 확인해야 해요? 나: 실수령액이 맞는지 잘 계산해 보세요.
3) 가: 급여 명세서에서 뭘 확인해야 해요? 나: 기본급이 맞는지 잘 계산해 보세요.
4) 가: 급여 명세서에서 뭘 확인해야 해요? 나: 식대가 맞는지 잘 계산해 보세요.
2. 1) ① 2) ① 3) ① 4) ②



## 대화 2 ບົດສົນທະນາ 2






ໄລຍະນີ້ ຄານ ມີວຽກຫຼາຍ ເລີຍຕ້ອງໄດ້ເຮັດວຽກ ລ່ວງເວລາຕອນຄໍ່າ. ຈົ່ງຟັງບົດສົນທະນາສອງຄັ້ງວ່າ ຄານ ກັບພະນັກງານຜູ້ຍິງ ສົນທະນາຫຍັງກັນ.

여직원 **칸 씨, 안녕하세요. 요즘 많이 바쁘지요?**
ຄານ, ສະບາຍດີ. ຊ່ວງນີ້ ມີວຽກຫຼາຍບໍ?

칸 **네, 일이 많아서 지난주에도 계속 야근을 했어요.**
ເຈົ້າ, ຍ້ອນວຽກຫຼາຍ ອາທິດແລ້ວນີ້ ກໍໄດ້ເຮັດວຽກລ່ວງເວລາ ຕອນຄໍ່າຕະຫຼອດເລີຍ.

여직원 **그러게요. 곧 명절이라서 그런지 일이 몰리네요.**
ແມ່ນແຫຼະ. ຄືສິແມ່ນຍ້ອນ ວັນພັກແຫ່ງຊາດ ໃນໄວໆນີ້ ຈຶ່ງເຮັດໃຫ້ວຽກລົ້ນມື.

칸 **그래도 야근 수당도 받고 상여금도 받으니까 이번 달은 부자 되겠어요.**
ເຖິງວ່າຈະເປັນແນວນັ້ນ ແຕ່ກໍຈະໄດ້ຮັບ ເງິນລ່ວງເວລາ ແລະ ເງິນໂບນັສ ນຳກັນ, ເດືອນນີ້ ຄືຈະລວຍເລີຍເນາະ.

여직원 **하하, 휴일에는 좀 쉬세요. 돈도 좋지만 건강도 챙기셔야죠.**
ຮ່າຮ່າ, ວັນພັກກໍພັກຜ່ອນເດີ້. ມີເງິນກໍດີຄືກັນ ແຕ່ວ່າຕ້ອງຮັກສາສຸຂະພາບນຳ.

칸 **그럴게요. 고마워요.**
ແມ່ນແຫຼະ. ຂອບໃຈ.

▶ **일이 몰리다**
ວຽກລົ້ນມື/ວຽກຫຼາຍ

▶ **-아서/어서 그런지**
ເປັນການສະແດງເຫດຜົນ ທີ່ບໍ່ຊັດເຈນ ເຊິ່ງໃຊ້ກັບ ຄຳກຳມະ ແລະ ຄຳຄຸນນາມ. ສ່ວນຄຳນາມແມ່ນ ໃຊ້ 'ຄຳນາມ +이다' ຕື່ມໃສ່.
- 오늘은 날씨가 좋아서 그런지 공원에서 산책하는 사람들이 많네요.
  ອາດເປັນຍ້ອນມື້ນີ້ ອາກາດດີ ເລີຍເຮັດໃຫ້ມີຄົນມາຍ່າງຫຼິ້ນຢູ່ສວນສາທາລະນະຫຼາຍ.



ຕອນນີ້ ແມ່ນໃຫ້ລອງເປັນ ຄານ ແລະ ພະນັກງານຜູ້ຍິງ ແລ້ວເວົ້າຕາມບົດສົນທະນາ. ໄດ້ຕັ້ງໃຈຟັງໃຫ້ດີ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 칸 씨는 왜 계속 야근을 했어요?
   ເປັນຫຍັງ ຄານ ຈຶ່ງສືບຕໍ່ເຮັດວຽກລ່ວງເວລາ?
2. 칸 씨가 여직원에게 이번 달은 부자가 되겠다고 한 이유는 뭐예요?
   ຍ້ອນເຫດຜົນໃດ ຄານ ຈຶ່ງເວົ້າກັບ ພະນັກງານຜູ້ຍິງ ວ່າເດືອນນີ້ຈະກາຍເປັນຄົນລວຍແລ້ວ?

정답 1. 일이 많았어요.
2. 이번 달에는 야근 수당도 받고 상여금을 받기 때문이에요.

## 어휘 2 ຄຳສັບ 2　　수당 ເງິນພິເສດ



ເງິນພິເສດ ທີ່ນອກຈາກເງິນເດືອນພື້ນຖານ ແມ່ນຈະໄດ້ຮັບເມື່ອໃດ? ພວກເຮົາລອງມາເບິ່ງວ່າ ຄຳສັບທີ່ກ່ຽວກັບເງິນພິເສດ ແມ່ນມີຫຍັງແດ່?




법정 근로 시간
ຊົ່ວໂມງເຮັດວຽກຕາມກົດໝາຍ




연장 근로 시간
ການເພີ່ມຊົ່ວໂມງເຮັດວຽກ




야간 근로 시간
ຊົ່ວໂມງເຮັດວຽກລ່ວງເວລາຕອນຄ່ຳ




휴일 근로 시간
ຊົ່ວໂມງເຮັດວຽກວັນພັກ




수당을 받다
ຮັບເງິນພິເສດ




포함되다
ລວມ, ລວມຢູ່, ລວມທັງ




별도로 지급하다
ຈ່າຍແຍກກັນ




가불하다
ເບີກເງິນລ່ວງໜ້າ

한시간 : 5,210원
두 시간 : 10,420원
세 시간 : 15,640원
...
...

시급
ຄ່າຈ້າງຕໍ່ຊົ່ວໂມງ

하루 : 41,680원
이틀 : 83,360원
...
...

일당
ຄ່າຈ້າງຕໍ່ວັນ

2012년 4,580원
2013년 4,860원
2014년 5,210원
...
...

최저임금
ຄ່າຈ້າງຂັ້ນຕ່ຳ



ຈົ່ງຕອບຄຳຖາມລຸ່ມນີ້ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບ ຂ້າງເທິງນັ້ນ.

1. 빈칸에 맞는 표현을 골라 대화를 완성하세요.

ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)

가: 야간 근로 수당은 얼마예요? ເງິນພິເສດ ສຳລັບເຮັດວຽກລ່ວງເວລາຕອນຄ່ຳ ແມ່ນເທົ່າໃດ?

나: 일한 시간만큼 줘요. 하지만 일반 근무 시간의 ____________보다는 높아요.
ແມ່ນຈະໃຫ້ເທົ່າກັບເວລາທີ່ເຈົ້າໄດ້ເຮັດວຽກຕົວຈິງ. ແຕ່ວ່າໄດ້ຮັບຫຼາຍກວ່າເງິນຊົ່ວໂມງ ຂອງຊົ່ວໂມງເຮັດວຽກທຳມະດາ.

① 시급　　② 세금

2)

가: 수당은 언제 받을 수 있어요? ຂ້ອຍ ສາມາດຮັບເງິນພິເສດໄດ້ເມື່ອໃດ?
나: 보통은 월급에 __________ 나오니까 월급하고 같이 지급돼요.
ປົກກະຕິ ແມ່ນລວມກັບເງິນເດືອນ ແລ້ວຈະຮັບພ້ອມກັບເງິນເດືອນ.

① 가불해　　② 포함돼

3)

가: 이번 달에는 수당이 안 나온 것 같아요. ເງິນພິເສດ ຂອງເດືອນນີ້ຄືຈະບໍ່ອອກ.
나: 네. 경리과에서 문제가 있어서 이번 달만 __________.
ແມ່ນ. ຍ້ອນມີບັນຫາຢູ່ ພະແນກບັນຊີ , ສະນັ້ນ ເດືອນນີ້ ເພິ່ນຈຶ່ງເວົ້າວ່າ ຈະເບີກຈ່າຍແຍກກັນຕ່າງຫາກ.

① 수당을 받는대요　　② 별도로 지급한대요

4)

가: 시급은 얼마예요? ເງິນ ຄ່າຈ້າງຕໍ່ຊົ່ວໂມງແມ່ນເທົ່າໃດ?
나: 보통은 __________을 기준으로 계산하면 돼요.
ປົກກະຕິ ແມ່ນຄິດໄລ່ຕາມ ຄ່າຈ້າງຂັ້ນຕໍ່າເລີຍ.

① 일당　　② 최저임금

2. 그림을 보고 알맞은 말을 연결하세요.

ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄໍາເວົ້າ ທີ່ເໝາະສົມ.

① ② ③ ④

㉠ 야간 근로 시간　㉡ 법정 근로 시간　㉢ 연장 근로 시간　㉣ 휴일 근로 시간


정답 1. 1) ① 2) ② 3) ② 4) ② 2. ①㉡ ②㉣ ③㉠ ④㉢

**유용한 표현** ສໍານວນທີ່ສໍາຄັນ

일손이 부족해요. ມີມືບໍ່ພໍ/ຕ້ອງການ ຄວາມຊ່ວຍເຫຼືອ.

가: 요즘은 주문이 많아요. ຊ່ວງນີ້ ແມ່ນມີ ການສັ່ງຊື້ຫຼາຍ.
나: 네, **일손이 부족해요.** ແມ່ນ, ພວກເຮົາຕ້ອງການ ຄວາມຊ່ວຍເຫຼືອ.

# 활동 ກິດຈະກຳ

이반 씨의 급여 명세서입니다. 잘 읽고 질문에 답하세요.

ນີ້ແມ່ນ ໃບສະແດງ ການເບີກຈ່າຍເງິນເດືອນ ຂອງ ອີບານ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

**2014년 6월분 급여 명세서**
ໃບສະແດງ ການເບີກຈ່າຍເງິນເດືອນ ສຳລັບເດືອນ 6 ປີ 2014

| 성명: 이반<br>ຊື່: ອີບານ | 사원번호: 20130213<br>ເລກທະບຽນພະນັກງານ: 20130213 | 급여산정기간: 2014년 6월 1일 ~ 6월 30일<br>ໄລຍະເວລາການຄິດໄລ່ ເງິນເດືອນ: ວັນທີ1 ເດືອນ6 ~ ວັນທີ30 ເດືອນ6 ປີ 2014 | |
|---|---|---|---|
| 은행 ທະນາຄານ | 한국은행 ທະນາຄານ ເກົາຫຼີ | 계좌번호 ເລກບັນຊີທະນາຄານ | 123-4567-898990 |

세부내역 ລາຍລະອຽດ

| 급여 내역<br>ລາຍລະອຽດ ຂອງເງິນເດືອນ | | 세금 내역<br>ລາຍລະອຽດຄ່າພາສີ | | 공제 내역<br>ລາຍລະອຽດການຕັດເງິນ | |
|---|---|---|---|---|---|
| 기본급<br>ເງິນເດືອນພື້ນຖານ | 1,088,890원 | 소득세<br>ພາສີລາຍຮັບ | 10,888원 | 국민연금<br>ເງິນບຳນານ | 55,252원 |
| 연장 근로 수당<br>ເງິນພິເສດ<br>ຈາກການເຮັດວຽກເພີ່ມ | 36,470원 | 주민세<br>ພາສີພົນລະເມືອງ | 1,088원 | 건강 보험<br>ປະກັນໄພ ສຸຂະພາບ | 19,890원 |
| 야간 근로 수당<br>ເງິນພິເສດ<br>ຈາກການເຮັດວຽກ<br>ລ່ວງເວລາພາກຄ່ຳ | 46,890원 | | | 고용보험<br>ປະກັນໄພ ການຈ້າງງານ | 5,252원 |
| 휴일 근로 수당<br>ເງິນພິເສດ<br>ຈາກການເຮັດວຽກວັນພັກ | 0원 | | | | |
| 식대<br>ຄ່າອາຫານ | | | | | |
| 급여 총액<br>ຈຳນວນເງິນ ເດືອນທັງໝົດ | 1,172,250원 | 세금 총액<br>ຈຳນວນເງິນ ພາສີທັງໝົດ | 11,976원 | 공제 총액<br>ຈຳນວນເງິນ ທີ່ຕັດທັງໝົດ | 80,394원 |
| 실수령액 ຈຳນວນເງິນສຸດທິ | | | | 1,079,880원 | |

1. 이반 씨가 이번 달에 실제로 받은 돈은 얼마입니까?
   ຈຳນວນ ເງິນຕົວຈິງທີ່ ອີບານ ຈະໄດ້ຮັບໃນເດືອນນີ້ ແມ່ນເທົ່າໃດ?

   ① 1,088,890원 ② 1,079,880원 ③ 1,172,250원 ④ 1,197,600원

2. 급여 명세서에 대한 설명으로 알맞은 것을 고르십시오.
   ຈົ່ງເລືອກເອົາຄຳຕອບ ທີ່ສອດຄ່ອງກັບ ການອະທິບາຍກ່ຽວກັບໃບຮັບເງິນເດືອນ.

   ① 이반 씨는 세금으로 10,888원을 냈습니다.
   ② 이반 씨는 고용보험에 가입하지 않았습니다.
   ③ 이반 씨는 법정 근로 시간 이외에 일을 했습니다.
   ④ 이반 씨가 2013년 6월에 일한 것에 대한 임금입니다.

정답 1. ② 2. ③

# 월급

ເງິນເດືອນ

## 월급을 받는 방법 ວິທີການຮັບເງິນເດືອນ

월급은 한 달에 한 번, 일한 것에 대한 대가를 받는 것을 말합니다. 월급은 보통 한국에서 개설한 은행의 통장으로 바로 입금됩니다. 월급은 현금으로 바로 받는 것보다는 통장으로 계좌이체를 해서 받는 것이 안전합니다. 또한 월급을 받을 때는 기본급과 수당 공제 내역이 기재된 월급명세서를 함께 받아서 금액이 정확한지 확인하는 것이 좋습니다.

ເງິນເດືອນ ແມ່ນເງິນທີ່ໄດ້ຮັບ ຫຼັງຈາກການເຮັດວຽກມາເປັນເວລາໜຶ່ງເດືອນ. ປົກກະຕິແລ້ວ ຢູ່ເກົາຫຼີ ແມ່ນມີການຈ່າຍເງິນເດືອນ ໂດຍຜ່ານການໂອນເຂົ້າບັນຊີ ທະນາຄານທີ່ໄດ້ເປີດໄວ້. ການຈ່າຍເງິນເດືອນ ໂດຍການໂອນເຂົ້າ ບັນຊີທະນາຄານນັ້ນ ແມ່ນມີຄວາມປອດໄພຫຼາຍກວ່າ ການໃຫ້ເປັນເງິນສົດ. ນອກຈາກນີ້, ໃນເວລາທີ່ໄດ້ຮັບເງິນເດືອນ ຄວນມີການກວດ ເບິ່ງຢູ່ໃບສະແດງການເບີກຈ່າຍເງິນເດືອນວ່າ ເງິນເດືອນພື້ນຖານ, ລາຍລະອຽດຂອງເງິນພິເສດ ແລະ ເງິນທີ່ຖືກຕັດ ແມ່ນຖືກຕ້ອງແລ້ວບໍ່ ກໍມີຄວາມສຳຄັນ.

## 월급 계산하기 ການຄິດໄລ່ເງິນເດືອນ

급여는 기본급과 수당으로 구성됩니다. 기본급은 최저 임금보다 높게 책정되어야 합니다. 수당은 연장 근로 수당, 야간 근로 수당, 휴일 근로 수당이 있습니다. 각 수당들은 기준 시급의 1.5배에서 2.5배로 계산됩니다. 수당의 기준과 계산식은 대략 다음과 같습니다.

ຄ່າຕອບແທນ ແມ່ນແບ່ງອອກເປັນ ເງິນເດືອນພື້ນຖານ ແລະ ເງິນພິເສດ. ເງິນເດືອນພື້ນຖານ ແມ່ນຕ້ອງສູງກວ່າຄ່າແຮງຂັ້ນຕ່ຳ. ສຳລັບ ເງິນພິເສດແມ່ນມີເງິນພິເສດຈາກການເຮັດວຽກເພີ່ມ, ເງິນພິເສດຈາກການເຮັດວຽກພາກຄ່ຳ ແລະ ເງິນພິເສດຈາກການເຮັດວຽກວັນພັກ. ເງິນພິເສດແຕ່ລະອັນ ແມ່ນມີການຄິດໄລ່ ປະມານ 1.5 ຫາ 2.5ເທົ່າ ຂອງອັດຕາເງິນຄ່າແຮງຕໍ່ຊົ່ວໂມງ. ວິທີການຄິດໄລ່ ແລະ ອັດຕາ ຂອງເງິນພິເສດມີດັ່ງຕໍ່ໄປນີ້.

| 수당<br>ເງິນພິເສດ | 기준<br>ມາດຖານ | 공제 내역<br>ລາຍລະອຽດ ການຕັດເງິນ |
|---|---|---|
| 연장 근로<br>ການເຮັດວຽກເພີ່ມ | 1일 8시간 초과 일할 경우<br>ກໍລະນີ ເຮັດວຽກຫຼາຍກວ່າ 8 ຊົ່ວໂມງ ຕໍ່ມື້ | 기준 시급×근로 시간×1.5배<br>ເງິນຊົ່ວໂມງ ມາດຕະຖານ×ເວລາເຮັດວຽກ×1.5ເທົ່າ |
| 야간 근로<br>ການເຮັດວຽກ ລ່ວງເວລາພາກຄ່ຳ | 밤 10시부터 새벽 6시 사이에 일할 경우<br>ກໍລະນີ ເຮັດວຽກແຕ່ 10 ໂມງຄ່ຳ ຫາ 6ໂມງເຊົ້າ | 기준 시급×근로 시간×2배<br>ເງິນຊົ່ວໂມງ ມາດຕະຖານ×ເວລາເຮັດວຽກ×2ເທົ່າ |
| 휴일 근로<br>ການເຮັດວຽກ ໃນວັນພັກ | 휴일에 일할 경우<br>ກໍລະນີ ເຮັດວຽກໃນວັນພັກ | 기준 시급×근로 시간×1.5배<br>ເງິນຊົ່ວໂມງ ມາດຕະຖານ×ເວລາເຮັດວຽກ×1.5ເທົ່າ |
| 휴일 연장<br>ການເພີ່ມການເຮັດວຽກ ໃນວັນພັກ | 휴일에 8시간 이상 일할 경우<br>ກໍລະນີ ເຮັດວຽກເກີນ 8 ຊົ່ວໂມງ ໃນວັນພັກ | 기준 시급×근로 시간×2배<br>ເງິນຊົ່ວໂມງ ມາດຕະຖານ×ເວລາເຮັດວຽກ×2ເທົ່າ |
| 휴일 야간<br>ການເຮັດວຽກ ໃນວັນພັກຕອນກາງຄືນ | 휴일 밤 10시부터 새벽 6시 사이에 일할 경우<br>ກໍລະນີ ເຮັດວຽກ ໃນວັນພັກ ລະຫວ່າງເວລາ 10ໂມງຄ່ຳ ຫາ 6 ໂມງເຊົ້າ | 기준 시급×근로 시간×2.5배<br>ເງິນຊົ່ວໂມງ ມາດຕະຖານ×ເວລາເຮັດວຽກ×2.5ເທົ່າ |

## 최저 임금제 ຄ່າຈ້າງຂັ້ນຕ່ຳ

근로자들의 생활 안전을 위해 임금의 최저 기준을 법으로 보장하는 제도입니다. 최저 임금은 매년 발표하며, 매년 그 금액이 다릅니다.

ເພື່ອເປັນການຮັບປະກັນ ຄວາມປອດໄພ ຂອງການດຳລົງຊີວິດ ຂອງຜູ້ຖືກຈ້າງ, ຄ່າຈ້າງຂັ້ນຕ່ຳ ແມ່ນຖືກຳນົດໄວ້ໃນກົດໝາຍ. ຄ່າຈ້າງຂັ້ນຕ່ຳ ແມ່ນມີການປະກາດໃນທຸກປີ ແລະ ມີຄວາມແຕກຕ່າງກັນດ້ານຈຳນວນ.

| 구분<br>ປີ | 시간급<br>ຄ່າຈ້າງ<br>ຕໍ່ຊົ່ວໂມງ | 일급<br>(8시간 근무)<br>ຄ່າຈ້າງຕໍ່ມື້<br>(ເຮັດວຽກ 8 ຊົ່ວໂມງ) | 월급 ເງິນເດືອນ | |
|---|---|---|---|---|
| | | | 주 40시간제<br>(5인 이상 사업장)<br>40 ຊົ່ວໂມງຕໍ່ອາທິດ<br>(ທຸລະກິດ ທີ່ມີລູກຈ້າງຫຼາຍກວ່າ 5 ຄົນ) | 주 44시간제<br>(4인 이하 사업장)<br>44 ຊົ່ວໂມງຕໍ່ອາທິດ<br>(ທຸລະກິດ ທີ່ມີລູກຈ້າງຫຼາຍກວ່າ 4 ຄົນ) |
| 2011년 | 4,320원 | 34,560원 | 902,880원 | 976,320원 |
| 2012년 | 4,580원 | 36,640원 | 957,220원 | 1,035,080원 |
| 2013년 | 4,860원 | 38,880원 | 1,015,740원 | 1,098,360원 |
| 2014년 | 5,210원 | 41,680원 | 1,088,890원 | |



# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນການຟັງ ແລ້ວເລືອກເອົາຄຳຕອບວ່າ ແມ່ນບົດສົນທະນາ ກ່ຽວກັບຫຍັງ. ຈົ່ງກວດເບິ່ງຄຳ ສັບໃຫ້ດີກ່ອນຟັງ.

[1~2] 다음을 듣고 무엇에 대한 대화인지 고르십시오.
ຈົ່ງຟັງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ແມ່ນບົດສົນທະນາ ກ່ຽວກັບຫຍັງ.

Track 171

1. ① 상여금 ② 실수령액 ③ 공제 총액 ④ 세금 총액

2. ① 보험 ② 기본급 ③ 보너스 ④ 연장 근로 수당



ຂໍ້ 3 ແລະ 4 ແມ່ນການເລືອກຄຳຕອບ ທີ່ເໝາະສົມ. ຂໍ້ 5 ແມ່ນການຟັງບົດສົນທະນາ ແລ້ວເລືອກເອົາຄຳທີ່ເໝາະສົມກັບຄຳຖາມ. ຈົ່ງກວດເບິ່ງເນື້ອໃນ ຂອງຄຳຕອບໃຫ້ດີກ່ອນຟັງ.

[3~4] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

3. ① 네, 별도로 지급한대요. ② 네, 세금이 공제된 금액이에요.
③ 네, 가불을 신청해 보세요. ④ 네, 월급하고 같이 받으면 돼요.

4. ① 네, 급여 명세서를 보세요. ② 네, 보험료를 다 더해 보세요.
③ 네, 최저 임금을 확인해 보세요. ④ 네, 기본급하고 수당을 더해 보세요.

5. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

여자는 왜 월급을 많이 받았습니까? ເປັນຫຍັງຜູ້ຍິງຈຶ່ງ ໄດ້ເງິນເດືອນຫຼາຍ?

① 세금이 많아져서 ② 수당이 포함돼서
③ 기본급이 올라서 ④ 상여금을 받아서



### 듣기 대본 ເນື້ອໃນບົດຟັງ

1. 남: 이 금액이 제가 받는 월급이지요? ເງິນຈຳນວນນີ້ ແມ່ນເງິນເດືອນ ທີ່ຂ້ອຍໄດ້ຮັບແມ່ນບໍ?

   여: 네, 총액에서 세금을 뺀 금액을 실제로 받게 돼요.
   ເຈົ້າ, ແມ່ນຈຳນວນເງິນ ທີ່ຫັກພາສີ ຈາກຈຳນວນເງິນທັງໝົດແລ້ວ.

2. 여: 이번 달에는 월급이 많네요. ເງິນເດືອນເດືອນນີ້ຫຼາຍເນາະ.

   남: 네, 연장 근무랑 야간 근무가 많았거든요. ເຈົ້າ, ຍ້ອນວ່າວຽກເພີ່ມ ແລະ ເຮັດວຽກພາກຄ່ຳຫຼາຍ.

3. 남: 월급을 미리 받을 수 있어요? ສາມາດເອົາເງິນເດືອນກ່ອນໄດ້ບໍ?

4. 여: 세금이 얼마인지 알아요? ເຈົ້າຮູ້ບໍ່ວ່າ ຄ່າພາສີແມ່ນເທົ່າໃດ?

5. 남: 이번 달에 월급 나왔어요? ເງິນເດືອນນີ້ ອອກແລ້ວບໍ?

   여: 네, 그런데 생각보다 조금 많네요. ເຈົ້າ, ແຕ່ວ່າໄດ້ຫຼາຍກ່ວາ ທີ່ຄິດໜ້ອຍໜຶ່ງ.

   남: 휴일 근로 수당이 같이 들어왔을 거예요. 한번 확인해 보세요.
   ເງິນພິເສດ ສຳລັບການເຮັດວຽກ ໃນວັນພັກ ແມ່ນຄືຈະອອກພ້ອມກັນ. ລອງກວດຄືນອີກເບິ່ງ.

정답 1. ② 2. ④ 3. ③ 4. ① 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ




1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   월급이 많이 나온 이유는 무엇입니까? ເຫດຜົນ ທີ່ໄດ້ເງິນເດືອນຫຼາຍ ແມ່ນຫຍັງ?

   ① 일을 열심히 해서　　② 상여금이 들어와서
   ③ 밤에 일한 돈을 받아서　　④ 주말 근무 수당이 나와서

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 타타 씨, 월급이 들어온 것 같던데 통장 확인해 봤어요?
   ຕ້າຕ້າ, ຄືວ່າເງິນເດືອນອອກແລ້ວ, ໄດ້ລອງກວດເບິ່ງ ບັນຊີທະນາຄານແລ້ວບໍ?

   남: 네, 그런데 생각보다 많이 나온 것 같아요. 지난달에는 야간 근무도 없었고 주말에도 일을 안 했는데요.
   ເຈົ້າ, ແຕ່ວ່າໄດ້ເງິນຫຼາຍກ່ວາທີ່ຄິດ. ເດືອນແລ້ວນີ້ ກໍບໍ່ໄດ້ເຮັດວຽກລ່ວງເວລາກາງຄືນ ແລະ ວັນເສົາ-ທິດກໍບໍ່ໄດ້ເຮັດວຽກຄືກັນ.

   여: 추석 상여금이 있어서 월급이 많은 거예요. ເບິ່ງຄືວ່າ ຍ້ອນເງິນໂບນັສ ປີໃໝ່ ເລີຍໄດ້ເງິນເດືອນຫຼາຍ.

   남: 아, 그래요? 상여금도 받았으니 좀 더 열심히 일해야겠네요.
   ອ່າ, ແມ່ນບໍ? ຍ້ອນໄດ້ຮັບເງິນໂບນັສນຳ, ຕ້ອງຕັ້ງໃຈເຮັດວຽກຕື່ມແລ້ວ.

정답 1. ②



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການເລືອກຄຳສັບທີ່ເໝາະສົມ. ຈົ່ງຄຶດທົບທວນເຖິງຄຳສັບທີ່ໄດ້ຮຽນຜ່ານມາກ່ອນໜ້ານີ້ ແລ້ວຕອບຄຳຖາມລອງເບິ່ງ.

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 1년 이상 근무한 근로자가 회사를 그만둘 때는 __________ 을/를 지급해야 합니다.
ສຳລັບພະນັກງານ ທີ່ເຮັດວຽກຢູ່ບໍລິສັດຫຼາຍກ່ວາ 1 ປີ, ເວລາຈະອອກຈາກວຽກ ແມ່ນຈະຕ້ອງໄດ້ຮັບ ເງິນບຳນານ.

① 상여금 ② 기본급 ③ 보너스 ④ 퇴직금

2. 실수령액은 월급의 총액에서 세금을 __________ 금액입니다.
ຈຳນວນເງິນຈ່າຍສຸດທິ ແມ່ນເງິນທີ່ໄດ້ຕັດຄ່າພາສີອອກ ຈາກຈຳນວນເງິນທັງໝົດ.

① 포함한 ② 가불한 ③ 공제한 ④ 지불한



ຂໍ້ 3 ແລະ 4 ແມ່ນການເລືອກ ເອົາຫົວຂໍ້ຂອງບົດສົນທະນາ. ຂໍ້ 5 ແມ່ນການອ່ານບົດເລື່ອງກ່ຽວກັບເງິນປັ່ງປຸງຄ່າພາສີທ້າຍປີ ແລ້ວຕອບຄຳຖາມ.

[3~5] 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

3. 가: 어젯밤 몇 시까지 일을 했어요? ມື້ຄືນນີ້ ໄດ້ເຮັດວຽກຈົນຮອດຈັກໂມງ?
나: 조금 늦게까지 일을 했지만 10시 전에 퇴근했어요.
ເຖິງວ່າ ເຮັດວຽກຈົນຄ່ຳ ແຕ່ກໍໄດ້ເລີກວຽກກ່ອນ 10 ໂມງແລງ.

두 사람은 무엇에 대해 이야기하고 있습니까? ທັງສອງຄົນ ແມ່ນກຳລັງສົນທະນາ ກ່ຽວກັບຫຍັງ?

① 법적 근로 시간 ② 야간 근로 시간 ③ 연장 근로 시간 ④ 휴일 근로 시간

4. 가: 수당을 계산할 때 왜 6,030원으로 해요? ໃນເວລາທີ່ຄິດໄລ່ເງິນພິເສດ ເປັນຫຍັງຈຶ່ງເປັນ 6,030ວອນ?
나: 그 금액이 법으로 정한 임금의 최소 기준이거든요.
ຍ້ອນວ່າ ຈຳນວນນັ້ນ ແມ່ນມາດຖານຄ່າຈ້າງຂັ້ນຕ່ຳ ທີ່ກຳນົດໄວ້ໃນກົດໝາຍ.

두 사람은 무엇에 대해 이야기하고 있습니까? ຈົ່ງເບິ່ງຮູບພາບ

① 국민연금 ② 고용 보험 ③ 최저 임금 ④ 급여 내역

5. 근로자들은 기본급 이외에 상여금과 수당 등 매월 다른 금액의 급여를 받게 됩니다. 그렇지만 매월 발생하는 근로 소득에 대한 세금을 정확하게 계산하는 것은 굉장히 복잡합니다. 따라서 급여를 지급할 때 간단한 세금 계산표로 세금을 공제하고, 다음해 2월에 실제 부담해야 할 세금을 정확하게 계산합니다. 이것을 _____㉠_____(이)라고 합니다.
ໃນແຕ່ລະເດືອນ ພະນັກງານທັງຫຼາຍແມ່ນໄດ້ຮັບເງິນພິເສດ ແລະ ເງິນໂບນັສ ນອກເໜືອຈາກເງິນເດືອນພື້ນຖານ. ເຖິງຢ່າງໃດກໍຕາມ, ການຄິດໄລ່ພາສີລາຍຮັບ ຈາກການເຮັດວຽກ ທີ່ເກີດຂຶ້ນແຕ່ລະເດືອນ ແມ່ນມີຄວາມສັບສົນຫຼາຍ. ສະນັ້ນ, ໃນເວລາເບີກຈ່າຍເງິນເດືອນແຕ່ລະເດືອນ ແມ່ນພຽງແຕ່ຕັດເງິນຄ່າພາສີ ໂດຍອີງຕາມຕາຕະລາງການຄິດໄລ່ທົ່ວໄປ ແລະ ໃນປີຕໍ່ໄປຂອງເດືອນ 2 ແມ່ນຄິດໄລ່ຄ່າພາ ສີທີ່ຕ້ອງຮັບຜິດຊອບແບບລະອຽດ. ເຊິ່ງນີ້ເອີ້ນວ່າ ㉠ ເງິນຫັກຄ່າພາສີທ້າຍປີ.

㉠에 들어갈 알맞은 말을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ㉠.

① 연말 정산 ② 세금 공제 ③ 보험료 납부 ④ 급여 명세서

정답 1. ④ 2. ③ 3. ② 4. ③ 5. ①



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

월급이 생각보다 적게 들어온 것 같습니다. 급여 명세서를 한번 ______ 봐야겠습니다.

ເບິ່ງຄືວ່າຂ້ອຍ ໄດ້ເງິນເດືອນໜ້ອຍກ່ວາທີ່ຄິດ. ຕ້ອງລອງກວດເບິ່ງໃບສະແດງການຈ່າຍເງິນເດືອນ ຈັກເທື່ອໜຶ່ງກ່ອນ.

① 옮겨　　② 바꿔
③ 취소해　　④ 확인해

2.

급여 명세서를 ________ '실수령액'이라는 것이 있습니다. 이것이 바로 근로자가 실제로 받는 돈입니다.

ຖ້າເບິ່ງໃບສະແດງ ການຈ່າຍເງິນເດືອນ ຈະມີ 'ເງິນເດືອນສຸດທິ'. ນີ້ແມ່ນຈຳນວນເງິນຕົວຈິງທີ່ຜູ້ເຮັດວຽກໄດ້ຮັບ.

① 보면　　② 봐서
③ 적으면　　④ 적어서

3. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

일을 하면 한 달에 한 번 통장으로 월급이 들어옵니다. 보통 한국에서 개설한 통장으로 입금됩니다. 현금으로 받는 것보다는 통장으로 입금되는 것이 안전합니다.

ຖ້າເຮັດວຽກ ແຕ່ລະເດືອນຈະມີເງິນເດືອນ ເຂົ້າບັນຊີທະນາຄານ. ປົກກະຕິ ຢູ່ເກົາຫຼີ ແມ່ນໂອນເຂົ້າບັນຊີ ທະນາຄານທີ່ໄດ້ເປີດໄວ້. ການຈ່າຍເງິນເດືອນ ໂດຍການໂອນເຂົ້າບັນຊີທະນາຄານນັ້ນ ແມ່ນມີຄວາມປອດໄພຫຼາຍກ່ວາ ການໃຫ້ເປັນເງິນສົດ.

① 월급 계산 방법　　② 통장 개설 방법
③ 월급 지급 방법　　④ 통장 사용 방법

정답 1. ④ 2. ① 3. ③



**발음** ການອອກສຽງ  P-31

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນເວລາທີ່ ຄຳທີ່ມາຈາກ ຮັນຈາ ມີຄຳລົງທ້າຍຂອງພະຍາງໜ້າ ແມ່ນ 'ㄹ' ແລະ ຄຳເລີ່ມຕົ້ນຂອງພະຍາງຫຼັງແມ່ນ 'ㄷ, ㅅ, ㅈ', ໃຫ້ອອກສຽງ 'ㄷ, ㅅ, ㅈ' ເປັນ [ㄸ], [ㅆ], [ㅉ].

(1) 발달, 열심, 말살　　(2) 열정, 발전, 실전
(3) 컴퓨터 기술이 발달했어요.　　(3) 저는 한국어를 열심히 공부해요.



# 이번 여름 휴가 계획은 세웠어?

ໃນລະດູຮ້ອນນີ້ ໄດ້ວາງແຜນລາພັກແລ້ວບໍ?

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ຮຽນຮູ້ກ່ຽວກັບການລາພັກ, ການສະເໜີ ລາພັກປິ່ນປົວ |
| □ ກິດຈະກຳ | ທຳຄວາມເຂົ້າໃຈ ກ່ຽວກັບການສະໝັກຂໍລາພັກ |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ການລາພັກ, ການພັກປິ່ນປົວ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ການທຳຄວາມເຂົ້າໃຈກ່ຽວກັບ ມາດຖານການລາພັກ |



## 대화 1 ບົດສົນທະນາ 1






ສອງຄົນກຳລັງສົນທະນາ ກ່ຽວກັບການລາພັກ. ເມື່ອໃດອີບານ ຈຶ່ງຈະສາມາດລາພັກໄດ້? ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມຫຼັງ.

지훈 **이반, 이번 여름 휴가 계획은 세웠어?**
ອີບານ, ໄດ້ວາງແຜນລາພັກລະດູຮ້ອນ ເທື່ອນີ້ແລ້ວບໍ?

이반 **아직 아무도 휴가 얘기를 안 해서 휴가를 써도 될지 눈치를 보는 중이야.**
ຍັງ, ຍັງບໍ່ມີໃຜລາພັກເທື່ອ. ສະນັ້ນ, ຂຽນໃບລາພັກໄດ້ຫຼືບໍ ຍັງກຳລັງສັງເກດເບິ່ງສະຖານະການຢູ່.

> **눈치를 보다**
> ເບິ່ງສາຍຕາ, ຟັງເບິ່ງສະຖານະການ

지훈 **7월 말에는 쉬는 공장이 많으니까 일이 그렇게 많지 않을 거야. 그때쯤 휴가를 신청해 봐.**
ໃນເດືອນ 7 ມີຫຼາຍໂຮງງານທີ່ພັກ ສະນັ້ນ, ຄົງຈະບໍ່ມີວຽກຫຼາຍປານໃດ. ລອງຂຽນໃບລາພັກຕອນນັ້ນເບິ່ງ.

이반 **그래야겠다. 근데 보통 휴가는 얼마나 쓸 수 있어?**
ຄົງຈະຕ້ອງເຮັດແນວນັ້ນແລ້ວ. ແຕ່ວ່າ ປົກກະຕິແລ້ວລາພັກໄດ້ດົນປານໃດ?

지훈 **1년에 연차 15일까지 쓸 수 있는데, 여름 휴가로는 일반적으로 3~4일 정도 쓰는 편이야.**
ພັກໄດ້ 15 ວັນ ແຕ່ໂດຍທົ່ວໄປແລ້ວ ການລາພັກລະດູຮ້ອນຈະລາພັກປະມານ 3~4 ວັນ.

> **일반적으로**
> ໂດຍທົ່ວໄປ



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 이반 씨는 여름 휴가 계획을 세웠어요? ອີບານ ໄດ້ວາງແຜນລາພັກ ໃນລະດູຮ້ອນແລ້ວບໍ?
2. 보통 휴가는 일 년에 얼마나 쓸 수 있어요? ໂດຍທົ່ວໄປແລ້ວປີໜຶ່ງ ສາມາດລາພັກໄດ້ດົນປານໃດ?

정답 1. 아니요, 아직 세우지 못했어요. 2. 일 년에 연차 15일까지 쓸 수 있어요.



## 어휘 1 ຄຳສັບ 1 휴가 ລາພັກ



ການລາພັກ ແຕກຕ່າງກັບ ວັນພັກຕ່າງກັນແນວໃດບໍ? ລອງມາຮຽນຮູ້ ຄຳສັບກ່ຽວກັບວັນພັກ ແລະ ການລາພັກນຳກັນເບິ່ງບໍ?



휴가를 신청하다
ຂຽນໃບລາພັກ



휴가를 내다
ການຍື່ນໃບຂໍລາພັກ



휴가를 받다
ໄດ້ຮັບອະນຸຍາດໃຫ້ລາພັກ



휴가를 쓰다
ໃຊ້ເວລາລາພັກ



유급 휴일
ວັນພັກທີ່ຍັງໄດ້ເງິນ



무급 휴일
ວັນພັກທີ່ຖືກຕັດເງິນ



법정 휴일
ວັນພັກທີ່ກຳນົດໃນກົດໝາຍ



약정 휴일
ລາພັກຕາມສັນຍາ



연차 휴가
ລາພັກປະຈຳປີ



출산 휴가
ການລາພັກເກີດລູກ



### Tip 휴가와 휴일 ການລາພັກ ກັບ ວັນພັກ

휴가와 휴일은 근로자가 쉬는 날이라는 점에서 공통점을 갖습니다. 그러나 휴일이 처음부터 근로 의무가 없는 날인 반면, 휴가는 근로 의무가 있는 날이지만 근로자의 청구나 특별한 사유의 충족으로 인해 이를 면제 받은 날이라는 점에서 차이가 있습니다.

ວັນພັກ ແລະ ການລາພັກ ມີຂໍ້ຄືກັນຢູ່ທີ່ວ່າ ຄົນງານທຸກຄົນໄດ້ພັກທັງໝົດຄືກັນ ແຕ່ວ່າ ວັນພັກ ແມ່ນວັນທີ່ຄົນງານບໍ່ມີພາລະທີ່ຈະຕ້ອງເຮັດວຽກ ແຕ່ກົງກັນຂ້າມ ການລາພັກ ແມ່ນວັນທີຄົນງານມີພາລະທີ່ຈະຕ້ອງເຮັດວຽກ ແຕ່ຍ້ອນ ການຂໍຮ້ອງ ຫຼື ເຫດຜົນສ່ວນຕົວ ນີ້ແມ່ນຄວາມແຕກຕ່າງກັນ.



ຈົ່ງຕອບຄຳຖາມລຸ່ມນີ້ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບ ຂ້າງເທິງນັ້ນ.

**1. 그림을 보고 알맞은 말을 연결하세요.** ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.

① • • ㉠ 무급 휴가

② • • ㉡ 유급 휴가

③ • • ㉢ 연차 휴가

④ • • ㉣ 출산 휴가

**2. 빈칸에 맞는 표현을 골라 대화를 완성하세요.**

ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)

가: 내일은 달력에 빨간 날도 아닌데 쉬네요.
ມື້ອື່ນບໍ່ແມ່ນມື້ສີແດງໃນປະຕິທິນ ແຕ່ວ່າພັກຜ່ອນເນາະ.

나: 네, __________ 휴일이라서 우리 회사는 쉬어요. ເຈົ້າ, ແມ່ນມື້ພັກ ຂອງບໍລິສັດຂອງພວກເຮົາ.

① 법정　　② 약정

2)

가: 연차를 사용하는 기간 동안은 임금이 나오지 않는 거예요?
ການລາພັກປະຈຳປີ ແມ່ນຈະບໍ່ໄດ້ເງິນແມ່ນບໍ?

나: 아니요, __________ 휴일이니까 임금이 지불돼요. ບໍ່, ເປັນມື້ພັກທີ່ຍັງໄດ້ຮັບເງິນ. ສະນັ້ນ ຈຶ່ງຈ່າຍເງິນເດືອນໃຫ້.

① 무급　　② 유급

3)

가: 우리 회사는 __________ 휴가를 얼마나 줘요?
ບໍລິສັດຂອງພວກເຮົາ ອະນຸຍາດໃຫ້ລາພັກເກີດລູກດົນປານໃດ?

나: 아기를 낳기 전후로 3개월 준대요. ກ່ອນ-ຫຼັງເກີດລູກ ອະນຸຍາດໃຫ້ລາພັກ 3 ເດືອນ.

① 연차　　② 출산

4)

가: 이번에 휴가를 __________ 어디에 가고 싶어요?
ຖ້າໄດ້ຮັບອະນຸຍາດ ໃຫ້ລາພັກຄັ້ງນີ້ ຢາກໄປທ່ຽວໃສ?

나: 친구들하고 부산에 가 보려고요. ຈະໄປ ບູຊານ ກັບໝູ່ເພື່ອນ.

① 받으면　　② 신청하면

정답 1. ①㉡ ②㉠ ③㉣ ④㉢ 2. 1) ② 2) ② 3) ② 4) ①



## 대화 2 ບົດສົນທະນາ 2

Track 173



ອີບານ ຈະລາພັກປິ່ນປົວ ເພາະສະນັ້ນ ຈຶ່ງກຳລັງສົນທະນາກັບໝໍ. ຈົ່ງຟັງບົດສົນທະນາສອງຄັ້ງເບິ່ງວ່າ ສອງຄົນກຳລັງສົນທະນາ ກ່ຽວກັບຫຍັງ.

이반 **병가를 신청하고 싶은데요.**
ຢາກຂໍສະໝັກ ລາພັກປິ່ນປົວ.

직원 **네. 병가라면 어디 아프신 거예요?**
ເຈົ້າ, ເວົ້າວ່າ ຢາກຂໍລາພັກປິ່ນປົວ ເຈັບເປັນຢູ່ບ່ອນໃດເນາະ?

이반 **네. 허리가 좀 아파서 병원에 갔는데 수술을 받는 게 좋겠다고 하네요.**
ເຈົ້າ, ເຈັບແອວແລ້ວ ໄປກວດຢູ່ໂຮງໝໍ ທ່ານໝໍບອກວ່າ ຕ້ອງໄດ້ຮັບການຜ່າຕັດຈຶ່ງຈະດີ.

심하다
ໜັກ/ຮຸນແຮງ

직원 **수술이요? 그럼 심한 거 아니에요?**
ຜ່າຕັດບໍ? ບໍ່ແມ່ນເປັນໜັກບໍ?

이반 **간단한 수술이라고 하셨어요. 한 일주일 정도 병가를 쓰면 될 것 같아요.**
ທ່ານໝໍ ບອກວ່າ ຜ່າຕັດນ້ອຍ. ພັກປະມານອາທິດໜຶ່ງ ກໍໜ້າຈະໄດ້ແລ້ວ.




가급적 빨리
ຖ້າເປັນໄປໄດ້/
ໄວເທົ່າທີ່ຈະໄວໄດ້

직원 **네, 알겠습니다. 여기 병가 신청서와 필요한 서류들이에요. 잘 읽어 보시고 가급적 빨리 제출해 주세요.**
ເຈົ້າ, ເຂົ້າໃຈແລ້ວ. ນີ້ແມ່ນໃບຄຳຮ້ອງຂໍລາພັກ ກັບ ເອກະສານຕິດຄັດ. ອ່ານເບິ່ງໃຫ້ດີ ແລ້ວຖ້າເປັນໄປໄດ້ໃຫ້ສົ່ງໄວເດີ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 이반 씨는 왜 병가를 신청하러 왔어요? ເປັນຫຍັງ ອີບານ ຈຶ່ງຂໍລາພັກປິ່ນປົວ?
2. 이반 씨는 얼마 동안 병가를 쓰려고 해요? ອີບານ ຈະລາພັກດົນປານໃດ?

정답 1. 허리가 아파서 수술을 받아야 해요.
2. 일주일 정도 병가를 쓰려고 해요.



## 어휘 2 ຄຳສັບ 2 — 병가 ລາພັກປິ່ນປົວ



ຈະຂຽນຄຳຮ້ອງລາພັກປິ່ນປົວ ໄດ້ແນວໃດ? ມາຮຽນຮູ້ຄຳສັບກ່ຽວກັບ ການລາພັກປິ່ນປົວເບິ່ງບໍ?



병가
ລາພັກປິ່ນປົວ



병가 사유
ສາເຫດ ການລາພັກປິ່ນປົວ



병가 기간
ໄລຍະເວລາລາ ພັກປິ່ນປົວ




소속
ບ່ອນປະຈຳການ



직위
ຕຳແໜ່ງ




비상 연락처
ເບີຕິດຕໍ່ສຸກເສີນ



통원 치료를 하다
ທ່ຽວໄປຮັບການປິ່ນປົວ



입원을 하다
ເຂົ້າໂຮງໝໍ




조퇴하다
ອອກໂຮງໝໍ



결근하다
ຂາດວຽກ



무단결근하다
ຂາດວຽກ ໂດຍບໍ່ລາພັກ



ຈົ່ງຕອບຄຳຖາມລຸ່ມນີ້ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບ ຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요.
ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ ຄຳເວົ້າທີ່ເໝາະສົມ.




정답 1. ①㉡ ②㉠ ③㉣ ④㉢

2. 빈칸에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາສຳນວນ ຫຼື ຄຳສັບທີ່ຖືກຕ້ອງຈາກ < ກອບ > ແລ້ວຕື່ມໃສ່ບ່ອນຫວ່າງ.

| 소속<br>ບ່ອນປະຈຳການ | 전기과 ສາຂາວິຊາໄຟຟ້າ |
|---|---|
| 성명<br>ຊື່ ແລະ ນາມສະກຸນ | 이반 ອີບານ |
| 1) | 사원 ວັດ |
| 2) | 허리통증으로 인한 수술 ຜ່າຕັດ ຍ້ອນອາການເຈັບແອວ |
| 3) | 2015년 4월 6일 ~ 2015년 4월 12일 ( 7 )일간<br>ວັນທີ 6 ເດືອນ 4 ປີ 2015 ຫາ ວັນທີ 12 ເດືອນ 4 ປີ 2015 ເປັນເວລາ 7 ວັນ |
| 1) | 031-777-5678 |

위와 같이 병가를 신청하오니 허락하여 주시기 바랍니다.
ຈະລາພັກປິ່ນປົວດັ່ງ ທີ່ກ່າວມາຂ້າງເທິງນັ້ນ ຫວັງຢ່າງຍິ່ງວ່າ ທ່ານຈະພິຈາລະນາຕາມຄວນດ້ວຍ.

2015년 4월 1일
ວັນທີ 1 ເດືອນ 4ປີ 2015

소속: 전기과 ບ່ອນປະຈຳການ: ສາຂາວິຊາໄຟຟ້າ

성명: 이반 ຊື່ ແລະ ນາມສະກຸນ: ອີບານ

*신청기간이 1주일 이상일 경우 진단서 첨부
ລາພັກ 1 ອາທິດຂຶ້ນໄປ ຕ້ອງມີໃບກວດສຸຂະພາບຕິດຄັດ

보기

기간　　비상 연락처　　직위　　사유

정답 2. 1) 직위 2) 사유 3) 기간 4) 비상 연락처

## 활동 ກິດຈະກຳ

다음을 읽고 질문에 답하세요.
ຈົ່ງອ່ານ ແລ້ວຕອບຄຳຖາມຕໍ່ໄປນີ້.

**휴가 신청서** ໃບຄຳຮ້ອງຂໍລາພັກ

| 결재<br>ຈ່າຍ | |
|---|---|

아래와 같이 허가 신청서를 제출하오니 허락해 주시길 바랍니다
ຂໍພັກດ້ວຍເຫດຜົນດັ່ງລຸ່ມນີ້ ຫວັງຢ່າງຍິ່ງວ່າທ່ານຈະພິຈາລະນາຕາມຄວນດ້ວຍ.

2015년 7월 24일

| 휴가 신청자<br>ຜູ້ຂໍຮ້ອງລາພັກ | 성명<br>ຊື່ ແລະ ນາມສະກຸນ | 박지훈 (확인) | 소속 및 직위<br>ບ່ອນປະຈຳການ ແລະ ຕຳແໜ່ງ | 기계과 대리<br>ຂະແໜ່ງຄຸ້ມຄອງເຄື່ອງຈັກ |
|---|---|---|---|---|
| 휴가 내용<br>ເນື້ອໃນລາຍລະອຽດການລາພັກ | 구분<br>ໄຈ້ແຍກ | 생리 휴가 (　　) ລາພັກເປັນປະຈຳເດືອນ　출산 휴가 (　　) ລາພັກເກີດລູກ<br>병가 (　　) ລາພັກປິ່ນປົວ　연월차휴가 ( ✔ ) ລາພັກປະຈຳເດືອນປີ　기타 (　　) ແລະ ອື່ນໆ | | |
| | 사유 ເຫດຜົນ | 여름 휴가 ລາພັກຮ້ອນ | | |
| | 기간(시간)<br>ໄລຍະເວລາ | 2015년 7월 25일 ~ 2015년 7월 28일<br>ວັນທີ 25 ເດືອນ 7 ປີ 2015 ຫາ ວັນທີ 28 ເດືອນ 7 ປີ 2015 | | |
| 행선지<br>ຈຸດໝາຍປາຍທາງ | 전라남도 순천<br>ເມືອງ ຊຸນຈອນ ແຂວງ ຈອນລານຳໂດ | | | |
| 긴급 연락처<br>ການຕິດຕໍ່ດ່ວນ | 010-234-5678 | | | |

1. 위의 휴가 신청서의 내용과 다른 것을 고르세요.
ຈົ່ງເລືອກເອົາສິ່ງທີ່ຕ່າງຈາກເນື້ອໃນ ຂອງໃບລາພັກຂ້າງເທິງນັ້ນ.

① 연차 휴가를 신청하려고 합니다.
② 여름휴가로 전라남도 순천에 갈 예정입니다.
③ 휴가 기간 3일 전에 휴가 신청서를 제출했습니다.
④ 박지훈 씨는 현재 기계과 대리로 일하고 있습니다.

정답 1. ③

# 휴가에 대한 근로 기준법의 이해

ການທຳຄວາມເຂົ້າໃຈ ກ່ຽວກັບມາດຖານການລາພັກ

## 법정 휴일(휴가) ວັນພັກທາງການ (ວັນພັກ)

「근로 기준법」에 의해 규정된 휴가 또는 휴일을 말합니다. 근로 기준법상 휴일은 제 55조에 의한 '유급 주휴일'(사용자는 근로자에게 1주일 평균 1회 이상의 유급 휴일을 주어야 한다.)과 「근로자의 날 제정에 관한 법률」에 의한 '근로자의 날(매년 5월 1일)'입니다.

ໝາຍເຖິງການລາພັກ ຫຼື ວັນພັກຕາມກົດໝາຍແຮງງານ ທີ່ໄດ້ນິດໄວ້. ວັນພັກຕາມກົດໝາຍແຮງງານ ໄດ້ກຳນົດໃນມາດຕາ 55 ວ່າດ້ວຍ ການພັກ 1 ວັນ/ 1 ອາທິດ ເປັນວັນພັກທີ່ບໍ່ໄດ້ຕັດເງິນເດືອນ. ວັນພັກ ໃນວັນກຳມະກອນ ຕາມກົດໝາຍແຮງງານ ທີ່ກຳນົດໄວ້ຄືທຸກໆປີ ວັນທີ 1 ເດືອນ 5.

## 약정 휴일(휴가) ວັນພັກ (ການຂໍລາພັກ) ຕາມການກຳນົດ

회사의 단체 협약 등에서 정하여 시행하는 휴가 또는 휴일을 말합니다. 약정 휴일에 관해서는 근로 기준법에서 규정하고 있지 않습니다. 약정 휴일에 관하여는 회사의 단체협약 등에서 정하여 시행하고 있으며 단체 협약에서 정해진 사항에 대해서는 노사 당사자가 준수해야 합니다.

ໝາຍເຖິງການຂໍລາພັກ ຫຼື ວັນພັກ ທີ່ປະຕິບັດຕາມການຕົກລົງເຫັນດີ ພາຍໃນບໍລິສັດ. ວັນພັກຕາມການກຳນົດ ຈະບໍ່ໄດ້ກຳນົດຢູ່ໃນກົດໝາຍແຮງງານ, ວັນພັກຕາມການກຳນົດ ຜູ້ທີ່ກ່ຽວຂ້ອງທຸກຄົນຕ້ອງປະຕິບັດຕາມ ເງື່ອນໄຂທີ່ທາງບໍລິສັດໄດ້ກຳນົດໄວ້.

| 구분<br>ໃຈແຍກ | 법정<br>ກົດໝາຍກຳນົດ | 약정<br>ການຕົກລົງເຫັນດີ |
|---|---|---|
| 휴일<br>ວັນພັກ | - **주휴일** ວັນພັກ ໃນໜຶ່ງອາທິດ<br>- **근로자의 날** ວັນກຳມະກອນ | - **공휴일** ວັນພັກທາງການ<br>- **회사 창립일** ວັນສ້າງຕັ້ງບໍລິສັດ<br>- **기타 휴무일** ວັນພັກອື່ນໆ |
| 휴가<br>ການລາພັກ | - **연차 휴가** ການລາພັກ ປະຈຳປີ<br>- **생리 휴가** ການລາພັກ ເປັນປະຈຳເດືອນ<br>- **산전·후 휴가** ການລາພັກ ກ່ອນ- ຫຼັງເກີດລູກ | - **하계휴가** ການລາພັກ ໃນລະດູຮ້ອນ<br>- **경조 휴가**<br>ການລາພັກ ສະແດງຄວາມຍິນດີ ຫຼື ໄຫວ້ອາໄລ |

## 유급 휴일 ການລາພັກ ແບບບໍ່ຕັດເງິນເດືອນ

근로의 의무는 있으나 근로 기준법 등에 의거 근로가 면제되는 날로 유급으로 하고 쉬는 휴일입니다. 1주일에 평균 1회 이상 주어야 하는 임금이 지불되는 휴일을 말합니다(근로 기준법 제 55조). 이와 달리 근로의 의무가 있으나 취업 규칙, 단체 협약 등을 통하여 무급으로 하고 쉬는 휴일을 무급 휴일이라고 합니다.

ການລາພັກແບບບໍ່ຕັດເງິນເດືອນ ແມ່ນວັນພັກທີ່ຕ້ອງໄດ້ເຮັດວຽກ ແຕ່ຍ້ອນອີງຕາມເງື່ອນໄຂທີ່ກົດໝາຍແຮງງານກຳນົດໄວ້ ຈຶ່ງເປັນວັນພັກວຽກ ແຕ່ໄດ້ຮັບເງິນເດືອນຕາມປົກກະຕິ, ໝາຍເຖິງວັນພັກ ທີ່ຕ້ອງໄດ້ຈ່າຍເງິນເດືອນໃຫ້ ເຖິງວ່າຈະມີການຂາດຫຼາຍກວ່າໜຶ່ງເທື່ອ ພາຍໃນໜຶ່ງ (ກົດໝາຍແຮງງານ ມາດຕາ 55). ວັນພັກທີ່ຕ່າງຈາກ ວັນພັກແບບນີ້ ຖ້າຫາກມີວຽກເຮັດ ແຕ່ຕ້ອງການລາພັກ ໂດຍອີງຕາມລະບຽບການເຮັດວຽກ, ການຕົກລົງເຫັນດີຂອງໝູ່ຄະນະ ໃນການອະນຸຍາດໃຫ້ພັກ ແມ່ນບໍ່ໄດ້ຮັບເງິນ ເຊິ່ງເອີ້ນວ່າ ວັນພັກທີ່ຕັດເງິນເດືອນ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການຟັງ ແລ້ວເລືອກວ່າ ແມ່ນບົດສົນທະນານັ້ນ ກ່ຽວກັບຫຍັງ. ກ່ອນຈະຟັງ ຈົ່ງກວດກາເບິ່ງຄໍາສັບກ່ອນ.

[1~2] 다음을 듣고 무엇에 대한 대화인지 고르십시오.
ຈົ່ງຟັງບົດສົນທະນາ ແລ້ວເລືອກວ່າ ສົນທະນານັ້ນ ກ່ຽວກັບຫຍັງ.




1. ① 병가 신청 ② 병가 휴직 ③ 병가 사유 ④ 병가 기간

2. ① 무급 휴일 ② 법정 휴일 ③ 약정 휴일 ④ 유급 휴일



ຂໍ້ 3 ແລະ 4 ແມ່ນເປັນການເລືອກຄໍາຕອບທີ່ເໝາະສົມກັບຄໍາຖາມ. ສໍາລັບ ຂໍ້ 5 ແມ່ນເປັນການຟັງບົດສົນທະນາ ແລ້ວເລືອກຄໍາຕອບທີ່ຖືກຕ້ອງ. ກ່ອນການຟັງ ຈົ່ງອ່ານເນື້ອໃນຂອງຄໍາຕອບໃຫ້ດີກ່ອນ.

[3~4] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄໍາຖາມ ແລ້ວເລືອກຄໍາຕອບທີ່ຖືກຕ້ອງ.

3. ① 네, 휴직을 신청하세요. ② 네, 진단서를 제출하세요.
③ 네, 사유를 이야기하세요. ④ 네, 병가 기간을 확인하세요.

4. ① 연차 휴가를 냈어요. ② 지금 휴가 중이에요.
③ 휴가를 5일 받았어요. ④ 먼저 휴가를 신청하세요.

5. 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄໍາຕອບ ທີ່ເໝາະສົມ ສໍາລັບແຕ່ລະຄໍາຖາມ.

여자는 왜 고향에 가려고 합니까? ເປັນຫຍັງ ແມ່ຍິງຄົນນັ້ນ ຈຶ່ງຢາກຈະກັບບ້ານເກີດ?

① 어머니가 아프셔서 ② 동생이 결혼을 해서
③ 중요한 약속이 있어서 ④ 가족과 휴가를 보내려고



### 듣기 대본 ເນື້ອໃນບົດຟັງ

1. 남: 얼마 동안 병가를 내실 예정이에요? ຈະລາພັກ ດົນປານໃດ?
   여: 5일이면 될 것 같아요. ປະມານ 5 ວັນກໍໄດ້ແລ້ວ.
2. 여: 임금을 받고 쉬는 날이 있다던데요? ໄດ້ຍິນວ່າ ມີວັນທີພັກແລ້ວ ບໍ່ຕັດເງິນບໍ?
   남: 네, 일주일에 하루는 일하지 않아도 임금을 받아요.
   ເຈົ້າ, ໃນໜຶ່ງອາທິດ ແຕ່ບໍ່ໄດ້ເຮັດວຽກ 1 ວັນ ກໍຍັງໄດ້ຮັບເງິນ.
3. 남: 아파서 지난주에 일주일 동안 결근했는데 내야 할 서류가 있어요?
   ອາທິດແລ້ວນີ້ບໍ່ສະບາຍ ສະນັ້ນ ໃນໄລຍະໜຶ່ງອາທິດ ຈຶ່ງຂາດວຽກ; ຕ້ອງໄດ້ຍື່ນເອກະສານຫຍັງບໍ?
4. 여: 올해 쓸 수 있는 휴가가 있어요? ປີນີ້ ມີວັນ ທີ່ຈະສາມາດລາພັກໄດ້ບໍ?
5. 남: 이번 휴가에 고향에 가려고요?
   ລາພັກຄັ້ງນີ້ ຈະກັບບ້ານເກີດບໍ?
   여: 네, 어머니가 몸이 안 좋으셔서 다녀와야 할 것 같아요.
   ເຈົ້າ, ແມ່ບໍ່ສະບາຍ ສະນັ້ນ ຄືງຈະຕ້ອງໄດ້ກັບໄປ.
   남: 걱정이 많겠어요. 조심해서 다녀오세요.
   ຄືງຈະເປັນຫ່ວງຫຼາຍ. ເດີນທາງປອດໄພເດີ.

정답 1. ④ 2. ④ 3. ② 4. ④ 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ



1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자가 고향에 가는 이유는 무엇입니까? ເຫດຜົນທີ່ຜູ້ຍິງຄົນນັ້ນ ກັບໄປບ້ານເກີດ ແມ່ນຫຍັງ?

   ① 어머니가 편찮으셔서　　② 회사를 그만둬야 해서
   ③ 고향에서 일하기 위해서　　④ 연차를 신청하기 위해서

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 리리 씨, 왜 갑자기 고향에 가는 거예요? 무슨 일 있어요?
   ລີລີ, ເປັນຫຍັງຈຶ່ງຈະໄປບ້ານເກີດ ແບບກະທັນຫັນ? ມີວຽກຫຍັງບໍ?
   여: 네, 어머니가 좀 아프셔서 뵙고 오려고요. ເຈົ້າ, ເພາະວ່າ ແມ່ເຈັບ ແລ້ວຢາກເຫັນໜ້າແມ່.
   남: 걱정이 많겠어요. 그런데 출국하려면 준비할 게 많죠?
   ຄືງຈະເປັນຫ່ວງຫຼາຍ, ແຕ່ວ່າ ກຽມຈະອອກນອກປະເທດ ແມ່ນມີອັນກຽມ ຫຼາຍແມ່ນບໍ?
   여: 네, 오늘 연차 신청하고 가족들 선물도 좀 사려고요.
   ເຈົ້າແມ່ນແລ້ວ, ມື້ນີ້ ໄດ້ສະໝັກລາພັກປະຈຳປີ ແລະ ຊື້ຂອງຂວັນເຄື່ອງຝາກ ຈະໃຫ້ຄົນໃນຄອບຄົວ.

정답 1. ①



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການເລືອກເອົາຄຳສັບທີ່ເໝາະສົມ. ຈົ່ງຄິດທົບທວນ ກ່ຽວກັບຄຳສັບ ກ່ອນໜ້ານີ້ ແລ້ວຕອບຄຳຖາມ.

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 올 여름에 회사에서 휴가를 ________ 고향에 다녀올 거예요.
ລະດູຮ້ອນນີ້ ຖ້າໄດ້ຮັບອະນຸຍາດໃຫ້ລາພັກ ແລ້ວຈະກັບບ້ານເກີດ.

① 내면 ② 쓰면 ③ 받으면 ④ 신청하면

2. 가: 안색이 안 좋아요. 일찍 들어가서 쉬는 게 어때요? ສີໜ້າບໍ່ດີປານໃດ. ກັບໄປກ່ອນແລ້ວ ໄປພັກຜ່ອນດີບໍ?
나: 네, ________ 먼저 들어가 보겠습니다. ເຈົ້າ, ຈະເລີກວຽກ ແລະ ເຂົ້າໄປເຮືອນກ່ອນເດີ.

① 결근하고 ② 조퇴하고 ③ 신청하고 ④ 휴직하고

ຂໍ້ 3 ແລະ 4 ແມ່ນເປັນການເລືອກຫົວຂໍ້ຂອງບົດສົນທະນາ. ສຳລັບຂໍ້ 5 ແມ່ນເປັນການອ່ານບົດເລື່ອງ ກ່ຽວກັບວັນພັກ ແລ້ວຕອບຄຳຖາມ.

[3~5] 다음 질문에 답하십시오 ຈົ່ງຕອບຄຳຖາມຕໍ່ໄປນີ້.

3. 가: 아기를 낳을 때는 얼마 동안 쉬어요? ເວລາເກີດລູກ ພັກດົນປານໃດ?
나: 3개월 동안 쉴 수 있도록 근로 기준법에 정해져 있어요. ກົດໝາຍແຮງງານ ກຳນົດໃຫ້ພັກ 3 ເດືອນ.

두 사람은 무엇에 대해 이야기하고 있습니까? ທັງສອງຄົນ ກຳລັງສົນທະນາ ກ່ຽວກັບຫຍັງ?

① 무급 휴가 ② 병가 휴가 ③ 연차 휴가 ④ 출산 휴가

4. 가: 그럼 회사에 연락도 없이 출근 안 한 거예요? ບໍ່ໄດ້ອອກໄປວຽກໂດຍບໍ່ໄດ້ຕິດຕໍ່ຫາ ບໍລິສັດບໍ?
나: 그런가 봐요. ຄືຈະເປັນແບບນັ້ນ.

두 사람은 무엇에 대해 이야기하고 있습니까? ສອງຄົນກຳລັງສົນທະນາ ກ່ຽວກັບຫຍັງ?

① 병가 내다 ② 휴직하다 ③ 조퇴하다 ④ 무단결근하다

5. ____㉠____은 법으로 정한 날은 아니지만 회사가 휴일로 정하고 있는 날입니다. 유급으로 할 것인지 무급으로 할 것인지도 회사의 규정에 따라 다릅니다. 근로자의 날은 법정 휴일로 ____㉠____에 포함되지 않습니다.
㉠ ວັນພັກ ທີ່ກຳນົດບໍ່ແມ່ນວັນພັກທາງລັດຖະການ ແມ່ນວັນພັກ ທີ່ທາງບໍລິສັດກຳນົດຂຶ້ນມາ. ຈະພັກແບບຕັດ ຫຼື ບໍ່ຕັດເງິນເດືອນ ກໍແລ້ວແຕ່ລະບຽບການຂອງບໍລິສັດ. ວັນພັກກຳມະກອນ ທີ່ກົດໝາຍກຳນົດໄວ້ ບໍ່ໄດ້ລວມເຂົ້າໃນ ㉠ ວັນພັກທີ່ທາງບໍລິສັດກຳນົດ

㉠에 들어갈 알맞은 말을 고르십시오. ຈົ່ງເລືອກເອົາຄຳເວົ້າ ທີ່ເໝາະສົມ ຕື່ມໃສ່ບ່ອນຫວ່າງ ㉠.

① 무급 휴일 ② 연차 휴일 ③ 약정 휴일 ④ 유급 휴일

정답 1. ③ 2. ② 3. ④ 4. ④ 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

이번 주 토요일부터 휴가라서 고향에 갑니다. 토요일에 ______을 해서 다음 주 금요일에 돌아오려고 합니다.
ເລີ່ມແຕ່ວັນເສົາອາທິດນີ້ ແມ່ນວັນພັກແລ້ວຈະກັບໄປບ້ານເກີດ. ຈະອອກໄປວັນເສົາອາທິດນີ້ ແລ້ວວັນສຸກອາທິດໜ້າ ຈະກັບເຂົ້າມາ.

① 입학　　② 출국
③ 출장　　④ 결근

2.

연차 휴가는 유급 휴가이기 때문에 쉬지 않고 일한 사람한테는 ______을 줍니다.
ເພາະວ່າ ວັນພັກປະຈຳປີ ແມ່ນສາມາດໄດ້ຮັບເງິນເດືອນ ແຕ່ວ່າຜູ້ທີ່ເຮັດວຽກ ແມ່ນມີເງິນເພີ່ມໃຫ້ອີກ.

① 월급　　② 수당
③ 세금　　④ 일당

3. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດເລື່ອງດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດເລື່ອງກ່ຽວກັບຫຍັງ.

몸이 많이 아파서 일을 하기 어려울 때에는 병가를 내야 합니다. 병가를 낼 때는 병가 신청서와 필요한 병원 서류들을 회사에 제출하면 됩니다. 미리 제출할 수 없으면 나중에라도 내야 합니다.
ເພາະວ່າ ສຸຂະພາບຮ່າງກາຍບໍ່ດີ ເຮັດວຽກຍາກລຳບາກຈະຕ້ອງໄດ້ລາປ່ວຍ. ເວລາລາປ່ວຍ ແມ່ນຕ້ອງການໃບລາປ່ວຍ ແລະ ເອກະສານຈາກໂຮງໝໍແລ້ວຍື່ນຕໍ່ບໍລິສັດ. ຖ້າຫາກບໍ່ສາມາດຍື່ນເອກະສານກ່ອນ ໃນຕໍ່ໜ້າ ກໍຕ້ອງໄດ້ຍື່ນຄືກັນ.

① 병가 신청　　② 건강 주의
③ 병원 방문　　④ 회사 생활

정답 1. ② 2. ② 3. ①

### 유용한 표현 ສຳນວນທີ່ສຳຄັນ

한눈 팔면 안 돼요. ຢ່າເບິ່ງຂ້າມ.

가: **한눈 팔면 안 돼요.** 기계를 사용할 때는 위험해요. **ຢ່າເບິ່ງຂ້າມ.** ເວລາໃຊ້ເຄື່ອງຈັກ ມັນອັນຕະລາຍ.
나: 네, 주의할게요. ເຈົ້າ, ຈະລະມັດລະວັງ.



# 사업장을 변경하고 싶은데

## ຂ້ອຍ ຢາກປ່ຽນ ບ່ອນເຮັດວຽກ

**학습 안내**
ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ　ຮຽນຮູ້ກ່ຽວກັບ ຂັ້ນຕອນການປ່ຽນບ່ອນເຮັດວຽກ, ຂັ້ນຕອນການກວດກາ ວັນເວລາການອອກປະເທດຊົ່ວຄາວ.
- □ ກິດຈະກຳ　ຄວາມເຂົ້າໃຈກ່ຽວກັບ ການຂໍອະນຍາດເຂົ້າປະເທດຄືນໃໝ່.
- □ ຄຳສັບ ແລະ ສຳນວນຄຳເວົ້າ　ການປ່ຽນບ່ອນເຮັດວຽກ, ການກັບຄືນປະເທດກ່ອນກຳນົດ ແລະ ອອກປະເທດຊົ່ວຄາວ
- □ ຂໍ້ມູນກ່ຽວກັບວັດທະນາທຳ　ການປ່ຽນບ່ອນເຮັດວຽກ



## 대화 1 ບົດສົນທະນາ 1



Track 175



ອາດິດ ກຳລັງທີ່ຈະຍ້າຍບໍລິສັດ ແລະ ຍື່ນໃບສະໝັກ ປ່ຽນບ່ອນເຮັດວຽກ ຕໍ່ກັບຜູ້ໃຊ້ແຮງງານ. ສອງຄົນນັ້ນ ກຳລັງລົມຫຍັງກັນ. ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນສອງຄັ້ງ ແລ້ວເວົ້າຕາມ.

카림　아딧, 너 회사 옮길 거라며? 무슨 일 있어?
ອາດິດ ເຈົ້າຈະຍ້າຍໄປບໍລິສັດໃໝ່ບໍ? ມີຫຍັງເກີດຂຶ້ນບໍ?

아딧　우리 회사가 사정이 안 좋아서 곧 문을 닫을 것 같아. 그래서 사장님이 사업장 변경 신청서를 내라고 하시더라고.
ບໍລິສັດພວກເຮົາ ສະພາບທາງການເງິນ ບໍ່ດີປານໃດ, ມັນອາດຈະຖືກປິດໃນໄວໆນີ້. ສະນັ້ນ, ປະທານບໍລິສັດຈຶ່ງໄດ້ແຈ້ງບອກໃຫ້ສະໝັກ ປ່ຽນບ່ອນເຮັດວຽກ.

> **사정이 안 좋다**
> ສະຖານະການບໍ່ດີ

카림　그랬구나. 사장님도 힘드실 텐데 널 많이 생각해 주시는 것 같다.
ໂອ, ເປັນແນວນັ້ນເນາະ. ປະທານບໍລິສັດ ຢູ່ໃນຊ່ວງທີ່ຫຍຸ້ງຍາກ ກໍຍັງໃຫ້ຄວາມໃສ່ໃຈເຈົ້າເນາະ.

> **섭섭하다**
> ໂສກເສົ້າ, ເສົ້າໃຈ

아딧　맞아. 같이 일하면서 정이 많이 들었는데 너무 섭섭해. 그래도 난 계속 일을 해야 하니까……. 근데 사업장 변경 신청서는 근로 계약이 끝나고 한 달 이내에 해야 한다면서?
ແມ່ນແລ້ວ. ໃນຂະນະທີ່ເຮັດວຽກຮ່ວມກັນ ພວກເຮົາໄດ້ມີສາຍພົວພັນທີ່ດີ ຍ້ອນແນວນັ້ນ ຈຶ່ງຮູ້ສຶກເສົ້າໃຈຫຼາຍ. ເຖິງແນວໃດກໍຕາມ ຂ້ອຍຕ້ອງໄດ້ເຮັດວຽກຢ່າງຕໍ່ເນື່ອງ. ແຕ່ການທີ່ສະໝັກປ່ຽນບ່ອນເຮັດວຽກນັ້ນຕ້ອງໄດ້ເຮັດກ່ອນໜຶ່ງເດືອນ ກ່ອນທີ່ສັນຍາການຈ້າງງານໝົດແມ່ນບໍ?

> **정이 들다**
> ຜູກພັນ

카림　응, 한 달 안에 고용 센터에 가서 제출해야 돼.
ອໍ, ແມ່ນແລ້ວ. ເຈົ້າຕ້ອງໄດ້ຍື່ນແບບຟອມສະໝັກ ໃຫ້ກັບສູນການຈັດຫາງານພາຍໃນ 1 ເດືອນ.



ໄດ້ຕັ້ງໃຈຟັງໃຫ້ດີ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 아딧 씨는 왜 회사를 옮기려고 해요? ອາດິດ ຢາກຍ້າຍບໍລິສັດ ຍ້ອນເຫດຜົນຫຍັງບໍ?
2. 사업자 변경 신청서는 언제까지 내야 해요? ໃນການສະໝັກ ປ່ຽນບ່ອນເຮັດວຽກນັ້ນ ຕ້ອງໄດ້ສົ່ງເມື່ອໃດ?

정답 1. 회사 사정이 안 좋아서 다닐 수가 없어요. 2. 근로 계약이 끝나고 한 달 이내에 내야 해요.



##  어휘 1 ຄຳສັບ 1 — 사업장 변경 ການປ່ຽນບ່ອນເຮັດວຽກ

ການປ່ຽນບ່ອນເຮັດວຽກນັ້ນ ແມ່ນເຮັດແນວໃດບໍ? ລອງກວດກາເບິ່ງຄຳສັບ ທີ່ກ່ຽວຂ້ອງກັບການປ່ຽນບ່ອນເຮັດວຽກເບິ່ງບໍ?



근로계약이 만료되다
ສັນຍາ ການຈ້າງງານ ໝົດກຳນົດ




근로계약이 해지되다
ສັນຍາ ການຈ້າງງານ ຖືກຍົກເລີກ



계약을 갱신하다
ຕໍ່ສັນຍາການຈ້າງງານ



갱신을 거절하다
ປະຕິເສດ ການຕໍ່ສັນຍາ




사업장 변경 이유
ເຫດຜົນ ທີ່ປ່ຽນບ່ອນເຮັດວຽກ



임금을 체불하다
ເລື່ອນການຈ່າຍເງິນ ຄ່າແຮງງານ




휴업하다
ປິດກິດຈະການ ຊົ່ວຄາວ



폐업하다
ປິດກິດຈະການ




폭언을 하다
ຮ້ອງສຽງດັງໃສ່ (ແຂກໃສ່)



폭행을 하다
ຕີ, ທຳຮ້າຍຮ່າງກາຍ



사업장 변경 신청서

| 국적 등록 번호 | |
| --- | --- |
| 성 명 | |
| 희망취업 조건 | |
| 이력 및 경력 사항 | |

사업장 변경 신청서
ແບບຟອມສະໝັກ ປ່ຽນບ່ອນເຮັດວຽກ



사업장 추가
ເພີ່ມບ່ອນເຮັດວຽກ

### 유용한 표현 ສຳນວນທີ່ສຳຄັນ

**큰일 날 뻔했네요.** ເກືອບກາຍເປັນເລື່ອງໃຫຍ່.

가: 버스 안에서 넘어졌어요. ລົ້ມຢູ່ໃນລົດເມ.
나: **큰일 날 뻔했네요.** 괜찮아요? ເກືອບກາຍເປັນເລື່ອງໃຫຍ່ແລ້ວ, ເປັນຫຍັງຫຼາຍບໍ?



## ຈົ່ງຕອບຄຳຖາມລຸ່ມນີ້ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

### 1. 빈칸에 맞는 표현을 골라 대화를 완성하세요.

ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)

가: 근로계약이 만료되면 어떻게 할 거예요?

ຖ້າຫາກສັນຍາ ການຈ້າງງານໝົດກຳນົດ ຈະເຮັດແນວໃດບໍ?

나: 계약을 ___________ 하려고요. 지금 다니는 회사가 좋은 것 같아서요.

ຂ້ອຍຢາກຕໍ່ສັນຍາ ການຈ້າງງານ. ຂ້ອຍຄິດວ່າ ບໍລິສັດທີ່ຂ້ອຍເຮັດວຽກຢູ່ ແມ່ນດີແລ້ວ.

① 갱신　　② 해지

2)

가: 더 이상 공장은 운영 안 하는 거예요? ໂຮງງານນັ້ນ ຈະບໍ່ດຳເນີນທຸລະກິດເລີຍບໍ?

나: 아니요. 사정이 있어서 지금은 잠시 ___________ 중이에요.

ບໍ່ແມ່ນ. ຍ້ອນໂຮງງານ ມີຄວາມຫຍຸ້ງຍາກບາງຢ່າງ ຈຶ່ງຈະປິດດຳເນີນກິດຈະການ ຊົ່ວຄາວ.

① 휴업　　② 폐업

3)

가: 근무지 ________은 몇 번까지 가능해요? ການປ່ຽນບ່ອນເຮັດວຽກ ສາມາດປ່ຽນໄດ້ຮອດຈັກຄັ້ງ?

나: 3번까지는 바꿀 수 있는 걸로 알고 있어요. ຂ້ອຍຮູ້ວ່າ ສາມາດປ່ຽນໄດ້ຮອດ 3 ຄັ້ງ.

① 신청　　② 변경

4)

가: 근무지를 바꾸고 싶은 이유가 있어요? ເຫດຜົນ ທີ່ຢາກປ່ຽນບ່ອນເຮັດວຽກນັ້ນ ມີບໍ?

나: 몇 달째 임금을 못 받았어요. ___________도 변경 사유가 되지요?

ຍ້ອນບໍ່ໄດ້ຮັບເງິນ ຄ່າແຮງງານ ຫຼາຍເດືອນແລ້ວ. ການເລື່ອນຈ່າຍຄ່າແຮງງານ ສາມາດໃຊ້ເປັນເຫດຜົນໄດ້ແມ່ນບໍ?

① 해고　　② 임금 체불

### 2. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳເວົ້າ ທີ່ເໝາະສົມ.

①　②　③　④

㉠ 폭행을 하다　㉡ 폭언을 하다　㉢ 휴업하다　㉣ 폐업하다

정답 1. ① 2) ① 3) ② 4) ② 2. ①㉡ ②㉠ ③㉣ ④㉢



## 대화 2 ບົດສົນທະນາ 2

Track 176



ອາດິດ ຍ້ອນພໍ່ເຈັບປ່ວຍ ຈຶ່ງຈະຕ້ອງໄດ້ກັບບ້ານເກີດ. ທັງສອງຄົນນັ້ນ ກຳລັງລົມຫຍັງ ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນ 2 ຄັ້ງ.

아딧 아버지가 지난달에 큰 수술을 받으셨어.
ໃນເດືອນຜ່ານມາ ພໍ່ຂ້ອຍໄດ້ຜ່າຕັດໃຫຍ່.

이반 정말? 이제 좀 어떠셔?
ແມ່ນບໍ? ປັດຈຸບັນນີ້ ອາການເປັນແນວໃດແລ້ວ?

아딧 많이 안 좋으신 것 같아. 아무래도 고향에 다녀와야 할 것 같은데…….
ອາການບໍ່ດີປານເລີຍ. ຍ້ອນແນວນັ້ນ ຈຶ່ງຈະຕ້ອງໄດ້ກັບຄືນໄປບ້ານເກີດ.

이반 걱정이 많겠다. 고향에 가게 되면 지금 일은 어떻게 하고?
ຄືຊິເປັນຫ່ວງຫຼາຍ. ຖ້າກັບໄປບ້ານເກີດ ວຽກທີ່ເຮັດຢູ່ດຽວນີ້ ຈະເຮັດແນວໃດບໍ?

아딧 일시 출국했다가 재입국하는 방법이 있다고 들었어. 그런데 회사가 한창 바쁠 때라서 말 꺼내기가 쉽지 않네.
ຂ້ອຍໄດ້ຍິນວ່າ ສາມາດອອກຈາກປະເທດຊົ່ວຄາວ ແລ້ວກັບຄືນມາໃໝ່. ແຕ່ວ່າຢູ່ບ່ອນເຮັດວຽກ ເພື່ອນຮ່ວມງານລ້ວນແຕ່ ມີວຽກຫຼາຍທີ່ສຸດ ມັນບໍ່ງ່າຍປານໃດທີ່ຈະເວົ້າເລື່ອງນີ້.

> 말을 꺼내다
> ເວົ້າກ່ຽວກັບສິ່ງໃດໜຶ່ງ

> 한창
> ຫຼາຍທີ່ສຸດ

이반 그렇겠다. 그래도 사장님께 한번 이야기해 봐.
ຂ້ອຍເຂົ້າໃຈ. ແຕ່ເຈົ້າຕ້ອງລົມ ກັບຫົວໜ້າເຈົ້າລອງເບິ່ງ.



ຄັ້ງນີ້ ຈົ່ງສະແດງບົດບາດເປັນ ອາດິດ ແລະ ອີບານ ແລ້ວເວົ້າຕາມ. ໄດ້ຕັ້ງໃຈຟັງໃຫ້ດີ ແລະ ເວົ້າຕາມແລ້ວບໍ? ສະນັ້ນ, ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 아딧 씨는 왜 고향에 다녀오려고 해요? ຍ້ອນຫຍັງ ອາດິດ ຈຶ່ງຕ້ອງໄດ້ກັບຄືນໄປບ້ານເກີດບໍ?
2. 아딧 씨는 사장님께 왜 일시 출국하고 싶다는 말을 쉽게 얘기하지 못해요?
   ຍ້ອນຫຍັງ ອາດິດ ໃນການບອກກັບຫົວໜ້າວ່າ ຢາກກັບໄປບ້ານເກີດ ຈຶ່ງບໍ່ເປັນເລື່ອງງ່າຍທີ່ຈະເວົ້າອອກມາບໍ?

정답 1. 아버지가 편찮으셔서 고향에 다녀오려고 해요.
2. 회사가 한창 바쁘기 때문에 얘기하기가 쉽지 않아서요.

## 어휘 1 ຄຳສັບ 1

### 조기 귀국과 일시 출국
ການອອກ ຈາກປະເທດກ່ອນກຳນົດ ແລະ ການອອກຈາກປະເທດຊົ່ວຄາວ



ຖ້າຫາກຕ້ອງການອອກຈາກ ປະເທດຊົ່ວຄາວ ດ້ວຍເຫດຜົນສ່ວນຕົວໃດໜຶ່ງ ແມ່ນເຮັດແນວໃດ? ລອງກວດກາເບິ່ງຄຳສັບ ທີ່ກ່ຽວຂ້ອງກັບການກັບຄືນປະເທດ ກ່ອນກຳນົດ ແລະ ການອອກຈາກປະເທດຊົ່ວຄາວເບິ່ງບໍ?



조기 귀국하다
ກັບຄືນປະເທດ ກ່ອນກຳນົດ



일시 출국하다
ອອກຈາກປະເທດ ຊົ່ວຄາວ




재입국하다
ເຂົ້າປະເທດ ຄືນໃໝ່




면제되다
ຍົກເວັ້ນ



개인 사정
ກໍລະນີ ສ່ວນຕົວ



집안 사정
ກໍລະນີ ຂອງຄອບຄົວ



병환
ການເຈັບເປັນ



편찮으시다
ບໍ່ສະບາຍ




재입국 허가 신청서
ຟອມສະໝັກ ເຂົ້າປະເທດຄືນໃໝ່

동의서(허가서)
ຟອມອະນຸຍາດ

출국 예정 신고서
ຟອມລາຍງານ ການອອກຈາກປະເທດ

**Tip 일시 출국** ອອກຈາກ ປະເທດຊົ່ວຄາວ

본인의 결혼이나 부모님의 병환 등과 같은 사정으로 일시적으로 출국하기를 원할 경우, 사업주의 동의를 얻어서 고향에 다녀올 수 있습니다. 출국 전에 미리 재입국 허가 신청서를 제출하면 재입국 시 재입국 허가가 면제됩니다.

ໃນກໍລະນີທີ່ ການແຕ່ງງານ, ການເຈັບເປັນຂອງພໍ່ແມ່ ຫຼື ສະຖານະການອື່ນໆ ເຮັດໃຫ້ຕ້ອງໄດ້ອອກຈາກປະເທດຊົ່ວຄາວ ດ້ວຍຄວາມເຫັນດີຂອງຜູ້ໃຊ້ແຮງງານ ແຮງງານຕ່າງດ້າວ ສາມາດກັບຄືນໄປຢາມບ້ານເກີດໄດ້. ກ່ອນການອອກຈາກປະເທດ ແມ່ນສາມາດຍື່ນຟອມສະໝັກກັບຄືນ ປະເທດລ່ວງໜ້າໄດ້ ແລ້ວແຕ່ຄວາມສະດວກຂອງຜູ້ກ່ຽວ.



## ຈົ່ງຕອບຄຳຖາມລຸ່ມນີ້ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

**1. 그림에 맞는 표현을 〈보기〉에서 골라 넣으세요.**

ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.

1) ______ → 2) ______ → 3) ______ → 4) ______

**보기**

퇴사하다    조기 귀국하다    출국 예정 신고서를 제출하다    개인 사정이 생기다

**2. 빈칸에 맞는 표현을 골라 대화를 완성하세요.**

ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)

가: 개인적인 사정이 생겨서 고향에 잠시 다녀오게 됐어요.
ຂ້ອຍໄດ້ກັບໄປຢາມບ້ານເກີດ ຍ້ອນບັນຫາສ່ວນຕົວ.

나: 네, 반장님께 들었어요. ____________ 신청서는 제출했어요?
ເຈົ້າ, ຂ້ອຍໄດ້ຍິນຈາກຫົວໜ້າເວົ້າໃຫ້ຟັງແລ້ວ. ຟອມຂໍອະນຸຍາດເຂົ້າປະເທດຄືນ ໄດ້ຍື່ນແລ້ວບໍ?

① 사업장 변경     ② 재입국 허가

2)

가: 이렇게 빨리 고향에 돌아가는 거예요? ຈະຕ້ອງກັບໄປບ້ານເກີດໄວຄືແນວນີ້ບໍ?

나: 네, 어머니가 편찮으셔서 ____________하게 됐어요.
ເຈົ້າ, ແມ່ຂອງຂ້ອຍບໍ່ສະບາຍ ຈະຕ້ອງໄດ້ກັບປະເທດ ກ່ອນກຳນົດ.

① 재입국     ② 조기 귀국

3)

가: 이번 주까지 근무하고 다음 주 출국이죠?
ເຮັດວຽກຮອດອາທິດນີ້ ແລ້ວອາທິດໜ້າ ກັບຄືນປະເທດ ແມ່ນບໍ?

나: 네, 금요일에 ____________ 나면 출국 준비하려고요.
ເຈົ້າ, ຮອດວັນສຸກກໍເລີກວຽກ ແລ້ວກໍຈະກະກຽມ ອອກຈາກປະເທດເລີຍ.

① 신고하고     ② 퇴사하고

4)

가: 재입국 허가 신청서를 제출하고 일시 출국했다가 입국하면 다시 허가를 받아야 해요?
ຍື່ນແບບຟອມ ສະໝັກເຂົ້າປະເທດຄືນແລ້ວ ຖ້າອອກຈາກປະເທດຊົ່ວຄາວ ແລ້ວເວລາທີ່ກັບຄືນມາປະເທດ ຕ້ອງໄດ້ຮັບການອະນຸຍາດຄືນບໍ?

나: 아니요, 이 경우에는 재입국 허가가 ____________.
ບໍ່. ໃນກໍລະນີນີ້ ເວລາເຂົ້າປະເທດຄືນແມ່ນຍົກເວັ້ນ.

① 가능해요     ② 면제돼요

**정답** 1. 1) 개인 사정이 생기다 2) 출국 예정 신고서를 제출하다 3) 퇴사하다 4) 조기 귀국하다 2. 1) ② 2) ② 3) ② 4) ②

## 활동 ກິດຈະກຳ

재입국 허가 동의서입니다. 읽고 질문에 답하세요.
ຕໍ່ໄປນີ້ແມ່ນແບບຟອມ ສະໝັກເຂົ້າປະເທດຄືນ. ຈົ່ງອ່ານ ແລ້ວຕອບຄຳຖາມ.

### 재입국 허가 동의서
ແບບຟອມ ສະໝັກເຂົ້າປະເທດຄືນ

- 업체명 ຊື່ບໍລິສັດ : 고려식품
- 주소 ບ່ອນຢູ່ : 충남 아산시 사장길 29 ☎(041) 541-4567
- 연수생 인적 사항 ຂໍ້ມູນທົ່ວໄປຂອງຜູ້ສະໝັກ

| 성명<br>ຊື່ | 성별<br>ເພດ | 외국인 등록번호<br>ເລກບັດຕ່າງດ້າວ | 여권 번호<br>ເລກໜັງສືຜ່ານແດນ |
|---|---|---|---|
| 칸 | 남 | 890726-******* | E0246890 |

- 재입국 사유 ເຫດຜົນທີ່ ເຂົ້າປະເທດຄືນໃໝ່ :

  부모님 병환으로 일시 출국합니다. ພໍ່ແມ່ເຈັບປ່ວຍ ຕ້ອງໄດ້ອອກຈາກປະເທດຊົ່ວຄາວ.

- 재입국 기간 ຊ່ວງໄລຍະເວລາ ເຂົ້າປະເທດຄືນໃໝ່ :

  출국 예정일 ວັນທີເດືອນປີຄາດຈະອອກຈາກປະເທດ (2015. 05. 03)
  허가 기간 ໄລຍະເວລາ ທີ່ໄດ້ຮັບອະນຸຍາດ (2015. 05. 03 ~ 2015. 05. 17)

대표자 : 김철수 

1. 위의 재입국 허가 신청서의 내용과 다른 것을 고르세요.
ຈົ່ງເລືອກເອົາຄຳຕອບ ທີ່ບໍ່ແມ່ນເນື້ອໃນຂອງແບບຟອມ ສະໝັກເຂົ້າປະເທດຄືນໃໝ່ຂ້າງເທິງນັ້ນ.

① 칸 씨는 김철수 씨와 함께 출국을 해야 합니다.
② 칸 씨는 부모님의 건강 문제로 일시 출국을 합니다.
③ 칸 씨는 충남에 있는 고려식품에서 일하고 있습니다.
④ 칸 씨는 5월 3일부터 5월 17일까지 고향에 다녀올 수 있습니다.

2. 재입국 허가 동의서에 대한 내용으로 맞으면 ○, 틀리면 X에 표시하세요.
ຈົ່ງໝາຍ O ໃສ່ເນື້ອໃນທີ່ຖືກຕ້ອງກັບແບບຟອມ ສະໝັກເຂົ້າປະເທດຄືນໃໝ່ນັ້ນ ແລະ ໝາຍ X ໃສ່ເນື້ອໃນທີ່ຜິດ.

| | | |
|---|---|---|
| 1) 허가 기간을 알 수 있습니다. | ○ | X |
| 2) 근무지와 근로자의 정보를 적습니다. | ○ | X |
| 3) 출국해서 가려는 장소의 주소를 밝힙니다. | ○ | X |
| 4) 근무하는 업체 대표의 확인이 필요합니다. | ○ | X |

정답 1. ① 2. 1) O 2) O 3) × 4) O





# 사업장 변경

### ການປ່ຽນບ່ອນເຮັດວຽກ

## 사업장 변경이란 ຄວາມໝາຍ ຂອງການປ່ຽນບ່ອນເຮັດວຽກ

사업장 변경이란 일하고 있는 근무지를 바꾸는 것을 말합니다. 외국인 근로자는 최초의 근로 개시를 한 사업장에서 계속 근무하는 것이 원칙입니다. 다만, 정상적인 근로 관계 지속이 어렵다고 인정되는 경우에 한해 외국인 근로자의 기본적인 인권 보장을 위해 예외적으로 사업장 이동을 최대 3회까지 허용합니다.

ການປ່ຽນບ່ອນເຮັດວຽກ ໝາຍຄວາມວ່າ ການປ່ຽນບ່ອນທີ່ກຳລັງເຮັດວຽກຢູ່ນັ້ນ. ໂດຍພື້ນຖານແລ້ວ ແຮງງານຕ່າງດ້າວ ຕ້ອງໄດ້ເຮັດວຽກຢູ່ບ່ອນເຮັດວຽກທີ່ຈັດໃຫ້ ຕາມທີ່ໄດ້ຂໍອະນຸຍາດເຂົ້າປະເທດເກົາຫຼີ. ເຖິງແນວໃດກໍຕາມ, ເມື່ອມີເຫດຜົນທີ່ເໝາະສົມ ໃນການຍົກເລີກສັນຍາການຈ້າງງານ ກໍສາມາດອະນຸຍາດ ໃຫ້ປ່ຽນບ່ອນເຮັດວຽກໄດ້ ເພື່ອຄ້ຳປະກັນສິດທິມະນຸດຂັ້ນພື້ນຖານ ແຕ່ການປ່ຽນບ່ອນເຮັດວຽກນັ້ນ ສູງສຸດແມ່ນສາມາດປ່ຽນໄດ້ 3 ຄັ້ງ.

## 사업장 변경 사유 ເຫດຜົນ ທີ່ປ່ຽນບ່ອນເຮັດວຽກ

1. 사용자가 정당한 사유로 근로계약 기간 중 근로계약을 해지하려고 하거나 근로계약이 만료된 후 갱신을 거절한 경우

   ກໍລະນີ ຜູ້ໃຊ້ແຮງງານຍົກເລີກສັນຍາກ່ອນກຳນົດ ດ້ວຍເຫດຜົນທີ່ສົມເຫດສົມຜົນ ໃນຊ່ວງໄລຍະເວລາສັນຍາການຈ້າງງານ ຫຼື ປະຕິເສດການຕໍ່ສັນຍາການຈ້າງງານ

2. 외국인 근로자의 책임이 아닌 사유로 사회 통념상 그 사업 또는 사업장에 근로를 계속할 수 없게 되었다고 인정하고 고용노동부 장관이 고시한 경우

   ໃນກໍລະນີ ດ້ວຍເຫດຜົນຄວາມຮັບຜິດຊອບ ຫຼື ລະບຽບຫຼັກການທາງສັງຄົມ ແຮງງານຕ່າງດ້າວບໍ່ສາມາດທີ່ຈະສືບຕໍ່ເຮັດວຽກ ໃນບ່ອນເຮັດວຽກເດີມຕໍ່ໄປໄດ້ ຫຼື ດ້ວຍເຫດຜົນ ທີ່ບໍ່ສອດຄ່ອງຕາມ ທີ່ພາກສ່ວນກະຊວງການຈັດຫາງານໄດ້ກຳນົດໄວ້

3. 상해 등으로 외국인 근로자가 해당 사업장에서 계속 근무하기는 부적합하나 다른 사업 또는 사업장에서 근무하는 것은 가능하다고 인정되는 경우

   ກໍລະນີ ທີ່ຜູ້ອອກແຮງງານຕ່າງດ້າວ ບໍ່ສາມາດສືບຕໍ່ເຮັດວຽກໃນບ່ອນເຮັດວຽກເດີມໄດ້ ຍ້ອນໄດ້ຮັບບາດເຈັບ ຫຼື ສຸຂະພາບ ແຕ່ໄດ້ຮັບການຮັບຮອງຈາກບ່ອນເຮັດວຽກອື່ນ ສາມາດເຮັດວຽກໄດ້

〈참고: 사업장 변경 허용 사유(외국인 고용법 제25조 제1항, 시행령 제30조)〉

<ຂໍ້ມູນຈາກ: ການອະນຸຍາດປ່ຽນບ່ອນເຮັດວຽກ (ພາກທີ 1 ມາດຕາ 25 ກົດໝາຍວ່າດ້ວຍ ແຮງງານຕ່າງດ້າວ, ດຳລັດປະກາດໃຊ້ກົດໝາຍດັ່ງກ່າວ ມາດຕາ 30)>

## 사업장 변경 절차 ຂັ້ນຕອນ ການປ່ຽນບ່ອນເຮັດວຽກ

사업장 변경 사유가 발생한 외국인 근로자는 사용자와 근로계약을 종료한 후 1개월 이내 사업장 소재지 관할 고용 센터에 사업장 변경 신청서를 제출하여야 합니다. 3개월 이내에 재취업을 하면 됩니다.

ຜູ້ອອກແຮງງານຕ່າງດ້າວ ທີ່ມີຈຸດປະສົງຢາກປ່ຽນບ່ອນເຮັດວຽກ ດ້ວຍເຫດຜົນ ທີ່ໜ້າເຊື່ອຖືສົມເຫດສົມຜົນ ຕ້ອງໄດ້ຍື່ນແບບຟອມສະໝັກປ່ຽນບ່ອນເຮັດວຽກ ໃຫ້ກັບສູນຈັດຫາງານ ຢູ່ຂອບເຂດພື້ນທີ່ໃກ້ຄຽງ ບ່ອນເຮັດວຽກນັ້ນ ພາຍໃນ 1 ເດືອນ ຫຼັງຈາກທີ່ສິ້ນສຸດສັນຍາການຈ້າງງານກັບຜູ້ໃຊ້ແຮງງານແລ້ວ. ແຕ່ຜູ້ອອກງານຕ່າງດ້າວນັ້ນ ຕ້ອງໄດ້ຖືກຮັບເຂົ້າເຮັດວຽກພາຍໃນ 3 ເດືອນ.





## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນການຟັງ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ. ກ່ອນການຟັງ ຈົ່ງກວດກາເບິ່ງເນື້ອໃນຄຳຖາມໃຫ້ດີກ່ອນ.

[1~2] 이야기를 듣고 질문에 알맞은 대답을 고르십시오.

ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.




1. 여자는 지금 무엇을 하고 있습니까? ແມ່ຍິງຄົນນັ້ນ ດຽວນີ້ ກຳລັງເຮັດຫຍັງ?

① 근로계약 갱신　　② 근무지 변경 사유
③ 근로계약 만료　　④ 근무지 변경 신청

2. 남자는 무엇에 대해 이야기를 하고 있습니까? ຜູ້ຊາຍຄົນນັ້ນ ກຳລັງເວົ້າກ່ຽວກັບຫຍັງ?

① 휴업　　② 폐업
③ 폭언　　④ 폭행



ຂໍ້ 3 ແມ່ນເປັນການເລືອກເອົາຄຳຕອບທີ່ເໝາະສົມ ກັບຄຳຖາມ. ຂໍ້ 4 ແລະ 5 ແມ່ນເປັນການຟັງບົດສົນທະນາ ແລ້ວເລືອກເອົາຄຳເວົ້າທີ່ເໝາະສົມກັບຄຳຖາມ. ກ່ອນການຟັງ ຈົ່ງກວດກາ ເບິ່ງເນື້ອໃນຂອງຄຳຕອບໃຫ້ດີກ່ອນ.

3. 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກຄຳຕອບ ທີ່ເໝາະສົມ.

① 네, 사유를 이야기하세요.　　② 네, 표준 근로계약서를 내세요.
③ 네, 사증 발급 신청서를 내세요.　　④ 네, 재입국 허가 신청서를 내세요.

[4~5] 이야기를 듣고 질문에 알맞은 대답을 고르십시오.

ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

4. 남자는 무엇을 이야기하고 있습니까? ຜູ້ຊາຍຄົນນັ້ນ ກຳລັງເວົ້າກ່ຽວກັບຫຍັງ?

① 근무 조건　　② 일시 출국
③ 조기 귀국　　④ 사업장 변경

5. 남자는 왜 근무지를 옮겼습니까? ຜູ້ຊາຍຄົນນັ້ນ ຍ້ອນຫຍັງຈຶ່ງໄດ້ຍ້າຍບ່ອນເຮັດວຽກ?

① 폭행 때문에　　② 폭언 때문에
③ 폐업 때문에　　④ 임금 체불 때문에



### 듣기 대본 ເນື້ອໃນບົດຟັງ

1. 여: 근무지를 바꾸고 싶은데요. ຢາກຂໍປ່ຽນບ່ອນເຮັດວຽກໃໝ່.
   남: 네, 서류는 이쪽에 제출하세요. ເຈົ້າ, ກະລຸນາຍື່ນເອກະສານເບື້ອງນີ້ເດີ.
2. 남: 회사가 사정이 있어서 작업을 일시적으로 중단했어요.
   ຍ້ອນສະພາບການ ຂອງບໍລິສັດບໍ່ຄ່ອຍດີ ບໍລິສັດຈຶ່ງຢຸດດຳເນີນກິດຈະການຊົ່ວຄາວ.
3. 여: 개인 사정으로 일시 출국할 때 미리 제출할 서류가 있어요?
   ຕ້ອງໄດ້ອອກປະເທດກ່ອນກຳນົດ ຍ້ອນເຫດຜົນສ່ວນຕົວ ມີເອກະສານຍື່ນກ່ອນລວງໜ້າບໍ?

4-5.
   남: 지난달에 근무지를 옮겼어요. ເດືອນທີ່ຜ່ານມາ ແມ່ນໄດ້ຍ້າຍບ່ອນເຮັດວຽກ.
   여: 계약 기간이 끝나서 옮긴 거예요? ສັນຍາການຈ້າງງານ ສິ້ນສຸດແລ້ວ ຈະຍ້າຍບ່ອນເຮັດວຽກບໍ?
   남: 아니요. 회사 사정이 안 좋아서 문을 닫았어요.
   ບໍ່. ສະພາບການ ຂອງບໍລິສັດບໍ່ດີ, ສະນັ້ນ ບໍລິສັດຈຶ່ງປິດກິດຈະການ.

정답 1. ④ 2. ① 3. ④ 4. ④ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

L-57

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자가 남자를 찾아온 이유는 무엇입니까? ເຫດຜົນ ທີ່ແມ່ຍິງຄົນນັ້ນ ມາຫາຜູ້ຊາຍຄົນນັ້ນ ແມ່ນຫຍັງ?

   ① 신분증을 찾고 싶어서
   ② 출입국사무소에 가고 싶어서
   ③ 신분증 분실 신고를 하고 싶어서
   ④ 신분증 재발급 방법을 알고 싶어서

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 아딧 씨, 외국인 등록증을 재발급 받아야 하는데 어떻게 해야 돼요?
   ອາດິດ, ຢາກຈະຕໍ່ບັດປະຈຳຕົວ ຄົນຕ່າງດ້າວ ຕ້ອງເຮັດແນວໃດ?
   남: 출입국사무소에 가서 신청하면 돼요. 저도 다시 발급받은 적이 있어요.
   ໄປຫ້ອງການກວດຄົນເຂົ້າ-ອອກເມືອງ ແລ້ວສະໝັກ ກໍໄດ້ແລ້ວ. ຂ້ອຍກໍຄືກັນ ກໍເຄີຍຕໍ່ຄືນໃໝ່ແລ້ວ.
   여: 신분증이 없으니까 정말 불편한데 신청하면 바로 나와요?
   ຍ້ອນບໍ່ມີ ບັດປະຈຳຕົວ ຈຶ່ງຮູ້ສຶກບໍ່ສະດວກສະບາຍປານໃດ ຫຼັງຈາກສະໝັກແລ້ວ ອອກໃຫ້ເລີຍບໍ?
   남: 아니요, 신청을 하고 며칠 기다려야 돼요. 빨리 가서 신청하세요.
   ບໍ່. ສະໝັກແລ້ວ ກໍຕ້ອງໄດ້ລໍຖ້າຫຼາຍມື້ສົມຄວນ. ຈົ່ງຜ້າວໄປສະໝັກໄວໆ.

정답 1. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 4 ແມ່ນເປັນການເລືອກ ເອົາຄໍາສັບທີ່ເໝາະສົມ. ຈົ່ງຄິດທົບທວນກ່ຽວກັບຄໍາສັບທີ່ຮຽນກ່ອນໜ້ານີ້ ເພື່ອຕອບຄໍາຖາມ.

[1~4] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄໍາຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 사업주와 근로계약 종료 후 한 달 안에 ___________을/를 신청해야 합니다.
ພາຍຫຼັງສິ້ນສຸດສັນຍາ ການຈ້າງງານກັບຜູ້ໃຊ້ແຮງງານແລ້ວ ຕ້ອງໄດ້ສະໝັກປ່ຽນບ່ອນເຮັດວຽກ ພາຍໃນເວລາໜຶ່ງເດືອນ.

① 계약 갱신　② 계약 만료
③ 근로계약　④ 사업장 변경

2. 개인 사정으로 ___________을 할 때 재입국 허가 신청서에 사업자의 동의서를 첨부하여 제출합니다.
ໃນເມື່ອຕ້ອງອອກຈາກປະເທດ ຍ້ອນເຫດຜົນຫຍຸ້ງຍາກສ່ວນຕົວ ຕ້ອງໄດ້ຄັດຕິດໃບຍັ້ງຢືນເຫັນດີ ຈາກຜູ້ໃຊ້ແຮງງານ ພ້ອມກັບແບບຟອມສະໝັກ ເຂົ້າປະເທດຄືນໃໝ່.

① 재입국　② 일시 출국
③ 조기 귀국　④ 근무지 변경

3. 사업장 변경 ___________에는 근로계약의 만료나 해지, 일하던 사업장의 휴업이나 폐업, 근로자의 상해 등이 있습니다.
ເຫດຜົນໃນການປ່ຽນບ່ອນເຮັດວຽກນັ້ນ ແມ່ນປະກອບມີ ການສິ້ນສຸດຂອງສັນຍາການຈ້າງງານ, ປິດກິດຈະການຊົ່ວຄາວ, ປິດການດໍາເນີນທຸລະກິດ ຫຼື ຜູ້ອອກແຮງງານໄດ້ຮັບບາດເຈັບ.

① 기간　② 사유
③ 신고　④ 신청

4. 가: 일시 출국 전에 허가를 받으면 다시 입국할 때 재입국 허가가 ___________.
ຖ້າຫາກໄດ້ຮັບອະນຸຍາດອອກຈາກປະເທດຊົ່ວຄາວແລ້ວ ເວລາເຂົ້າປະເທດຄືນໃໝ່ ແມ່ນບໍ່ຈໍາເປັນຂໍອະນຸຍາດ ເຂົ້າປະເທດຄືນອີກ.
나: 재입국 허가를 안 받아도 되니까 훨씬 편하겠네요.
ຍ້ອນບໍ່ຈໍາເປັນຕ້ອງ ຂໍອະນຸຍາດເຂົ້າປະເທດຄືນໃໝ່ ແມ່ນສະດວກຫຼາຍແລ້ວເດເນາະ.

① 등록돼요　② 면제돼요
③ 신고해요　④ 제출돼요





ຂໍ້ 5 ແມ່ນເປັນການອ່ານບົດເລື່ອງກ່ຽວກັບ ການອອກຈາກປະເທດ ກ່ອນກຳນົດ ແລ້ວຕອບຄຳຖາມ.

5. 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

> 한국에서 일을 하다가 본인의 결혼이나 부모님의 병환 등 개인 사정이 생겨서 일시 출국을 할 때는 미리 신고를 해야 합니다. 신고를 할 때는 재입국 허가 신청서를 작성하고, 사업주의 동의서를 함께 받아서 출입국 관리소에 제출하면 됩니다.
>
> ໃນຂະນະທີ່ເຮັດວຽກຢູ່ເກົາຫຼີ ໄດ້ມີກໍລະນີຕ້ອງການແຕ່ງງານ, ພໍ່ແມ່ເຈັບເປັນ ຫຼື ເຫດຈຳເປັນອື່ນໆ ເກີດຂຶ້ນ ແລ້ວຕ້ອງໄດ້ກັບປະເທດກ່ອນກຳນົດນັ້ນ ຈຳເປັນຕ້ອງໄດ້ແຈ້ງລ່ວງໜ້າ. ໃນເວລາແຈ້ງລ່ວງໜ້ານັ້ນ ຕ້ອງໄດ້ຕື່ມແບບຟອມຂໍອະນຸຍາດ ເຂົ້າປະເທດຄືນໃໝ່ ພ້ອມກັບຄັດຕິດແບບຟອມຢັ້ງຢືນຈາກຜູ້ໃຊ້ແຮງງານ ແລ້ວຍື່ນໃຫ້ກັບພາກສ່ວນຄຸ້ມຄອງການເຂົ້າ-ອອກເມືອງ.

재입국 허가 신청서를 제출할 때 주의해야 할 것은 무엇입니까?
ເວລາທີ່ຍື່ນແບບຟອມ ຂໍອະນຸນາດ ເຂົ້າປະເທດຄືນໃໝ່ ສິ່ງທີ່ຕ້ອງໄດ້ເອົາໃຈໃສ່ນັ້ນ ແມ່ນຫຍັງ?

① 사업주의 동의서를 받아야 합니다.
② 자신의 건강 상태를 확인해야 합니다.
③ 한국에 다시 돌아올 때 제출해야 합니다.
④ 결혼한 사람은 혼인 신고서를 내야 합니다.

정답 1. ④ 2. ② 3. ② 4. ② 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

> 한국에 온 지 벌써 일 년이 지났습니다. 처음에는 한국 생활이 힘들었지만 지금은 ________ 지낼 만합니다.
> ມາເກົາຫຼີໄດ້ ໜຶ່ງປີຜ່ານໄປແລ້ວ. ຕອນມາຮອດເກົາຫຼີທຳອິດຫຍຸ້ງຍາກ ແຕ່ດຽວນີ້ ຍ້ອນຄຸ້ຍເຄີຍແລ້ວ ກໍໃຊ້ຊີວິດແບບສະບາຍ.

① 익숙하도록 ② 익숙하다가 ③ 익숙해져서 ④ 익숙해지자

2.

> 사정이 생겨서 고향에 잠시 다녀와야 합니다. 오늘 재입국 허가 신청서를 ________ 출입국 관리소에 제출했습니다.
> ຍ້ອນມີຄວາມຫຍຸ້ງຍາກເກີດຂຶ້ນ ຈຶ່ງຈະຕ້ອງໄດ້ກັບ ບ້ານເກີດຊົ່ວຄາວ. ມື້ນີ້ ໄດ້ຂຽນແບບຟອມສະໝັກ ຂໍອະນຸຍາດເຂົ້າປະເທດຄືນໃໝ່ແລ້ວ ໄດ້ໄປຍື່ນຟອມດັ່ງກ່າວ ຢູ່ຫ້ອງການກວດກາຄົນເຂົ້າ-ອອກເມືອງແລ້ວ.

① 써서 ② 쓰지 ③ 쓰게 ④ 써도

정답 1. ③ 2. ①




# 체류 기간을 연장한 후에 꼭 신고해야 해

ຕ້ອງລາຍງານຫຼັງຈາກ ການຕໍ່ໄລຍະເວລາພັກເຊົາ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| ☐ ຈຸດປະສົງໃນການຮຽນ | ຮູ້ກ່ຽວກັບການຕໍ່ ໄລຍະເວລາພັກເຊົາ, ທຳຄວາມເຂົ້າໃຈກ່ຽວກັບການປ່ຽນສະຖານະພາບການພັກເຊົາ |
| ☐ ກິດຈະກຳ | ການຂຽນແບບຟອມສະໝັກ ເພື່ອຕໍ່ໄລຍະເວລາການພັກເຊົາ |
| ☐ ຄຳສັບ ແລະ ສຳນວນຄຳເວົ້າ | ການຕໍ່ໄລຍະເວລາ ພັກເຊົາ, ສະຖານະຂອງການພັກເຊົາ |
| ☐ ຂໍ້ມູນກ່ຽວກັບວັດທະນາທຳ | ການສະໝັກ ເພື່ອຕໍ່ໄລຍະເວລາ ການພັກເຊົາ |



## 대화 1 ບົດສົນທະນາ 1






ຕອນນີ້ ທັງສອງຄົນກຳລັງ ສົນທະນາກ່ຽວກັບ ການຕໍ່ໄລຍະເວລາການພັກເຊົາ. ຖ້າເຈົ້າຕໍ່ສັນຍາໃໝ່ ແລ້ວໄລຍະເວລາ ການພັກເຊົາກໍຈະຕໍ່ ແບບອັດຕະໂນມັດບໍ? ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນສອງ ຄັ້ງ ແລ້ວເວົ້າຕາມ.

리한 투안 씨, 계약 연장했어요?
ຕວນ, ໄດ້ຕໍ່ສັນຍາແລ້ວບໍ?

투안 네, 지난달에 계약 기간이 끝나서 재계약했어요.
ເຈົ້າ, ສັນຍາໝົດເດືອນກ່ອນນີ້ ກໍເລີຍໄດ້ຕໍ່ສັນຍາແລ້ວ.

**자동으로**
ແບບອັດຕະໂນມັດ

리한 그래요? 재계약을 하면 체류 기간은 자동으로 연장되는 거예요?
ແມ່ນບໍ? ຖ້າເຈົ້າຕໍ່ສັນຍາໃໝ່ ແລ້ວໄລຍະເວລາ ການພັກເຊົາກໍຈະຕໍ່ແບບ ອັດຕະໂນມັດບໍ?

투안 그건 아니래요. 따로 체류 기간 연장 허가를 받아야 해요.
ເພິ່ນວ່າບໍ່ແມ່ນແນວນັ້ນໃດ໋. ຕ້ອງໄດ້ຮັບການອະນຸຍາດຕໍ່ໄລຍະເວລາ ພັກເຊົາຕ່າງຫາກ.

리한 그렇군요. 그럼 연장 허가는 아직 안 받은 거예요?
ແມ່ນແນວນັ້ນເນາະ. ຄັນຊັ້ນ ເຈົ້າຍັງບໍ່ໄດ້ຮັບອະນຸຍາດ ຕໍ່ໄລຍະເວລາພັກເຊົາບໍ?

투안 네, 체류 기간 만료 전까지만 받으면 돼요. 저는 한국에 온 지 3년이 되기 때문에 따로 준비해야 하는 서류가 좀 있더라고요. 그래서 오늘 고용 지원 센터에 가 보려고 해요.
ເຈົ້າ, ຖ້າໄດ້ຮັບກ່ອນວັນໝົດອາຍ ກໍບໍ່ເປັນຫຍັງ. ຍ້ອນວ່າຂ້ອຍມາເກົາຫຼີໄດ້ 3 ປີແລ້ວ ກໍເລີຍມີເອກະສານ ທີ່ຕ້ອງກະກຽມຕ່າງຫາກນຳ. ສະນັ້ນ ມື້ນີ້ ຂ້ອຍເລີຍຈະໄປສູນ ການຊ່ວຍເຫຼືອການຈ້າງງານເບິ່ງ.

**따로**
ແຍກ, ຕ່າງຫາກ



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 계약 기간이 끝나서 어떻게 했어요?
   ໄລຍະເວລາສັນຍາຂອງ ຕວນ ໝົດແລ້ວໄດ້ເຮັດແນວໃດ?
2. 체류 기간 연장 허가는 언제까지 받아야 해요?
   ຕ້ອງໄດ້ຮັບ ອະນຸຍາດ ການຕໍ່ໄລຍະເວລາ ພັກເຊົາ ຮອດເມື່ອໃດ?

정답 1. 계약을 연장했어요. 2. 체류 기간 만료 전까지 받으면 돼요.



## 어휘 1 ຄຳສັບ 1 — 체류 기간 연장 ການຕໍ່ໄລຍະເວລາພັກເຊົາ



ຖ້າຢາກຕໍ່ໄລຍະເວລາ ພັກເຊົາ ຕ້ອງມີຂັ້ນຕອນ ແລະ ເອກະສານທີ່ຈຳເປັນຫຍັງ? ພວກເຮົາມາລອງເບິ່ງວ່າ ຄຳສັບກ່ຽວກັບ ການຕໍ່ໄລຍະເວລາ ພັກເຊົາມີຫຍັງແດ່.



체류하다
ພັກເຊົາ




체류 기간
ໄລຍະເວລາພັກເຊົາ




체류 가능 기간
ໄລຍະເວລາ ທີ່ສາມາດພັກເຊົາໄດ້




변경 가능 횟수
ຈຳນວນຄັ້ງ ທີ່ສາມາດປ່ຽນໄດ້




연장하다
ຕໍ່/ຂະຫຍາຍ




체류지 입증 서류
ເອກະສານ ຢັ້ງຢືນການພັກເຊົາ



자진 출국 각서
ແບບຟອມ ອອກປະເທດ ແບບສະໝັກໃຈ


부동산임대차계약서

임대차 계약서
ສັນຍາເຊົ່າ


신원보증서

신원 보증서
ໃບຮັບປະກັນ

취업 활동 기간 연장 신청서
ແບບຟອມສະໝັກ ສຳລັບການຕໍ່ໄລຍະ ການເຮັດວຽກ


구직등록필증

| | |
|---|---|
| 구직등록번호 | 243014-125 |
| 구직등록유효기간 | 2019. 11. 24 |
| 상담담당자 | 최 복 희 |

2014 년 6월 2일

직업안정기관장 중소기업청

구직등록필증
ໃບຢັ້ງຢືນ ການລົງທະບຽນ ຊອກຫາວຽກ



**ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງຄຳສັບ ທີ່ຮຽນມາຂ້າງເທິງ.**

**1. 그림을 보고 알맞은 말을 연결하세요.** ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳເວົ້າ ທີ່ເໝາະສົມ.

① •　　　　• ㉠ 체류하다

② •　　　　• ㉡ 연장하다

③ •　　　　• ㉢ 신원보증서

④ •　　　　• ㉣ 체류지 입증 서류

**2. 빈칸에 맞는 표현을 골라 대화를 완성하세요.**
ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)
가: 체류 가능 ____________은 어디에 나와 있어요?
ໄລຍະເວລາທີ່ສາມາດພັກເຊົາໄດ້ ແມ່ນເບິ່ງໄດ້ຢູ່ໃສ?
나: 외국인 등록증 뒷면에 날짜가 적혀 있어요. ວັນທີ ແມ່ນຂຽນໄວ້ ຢູ່ດ້ານຫຼັງຂອງບັດຄົນຕ່າງດ້າວ.

① 기간　　　　② 대상

2)
가: ____________ 기간을 연장하려는 사람이 따로 신청을 해요?
ຜູ້ທີ່ຕ້ອງການຕໍ່ສັນຍາ ແມ່ນສະໝັກຕ່າງຫາກບໍ?
나: 아니요, 그건 일하는 근무지의 사업주가 신청해요.
ບໍ່, ສຳລັບອັນນັ້ນແມ່ນ ຜູ້ຈ້າງ ທີ່ຢູ່ບ່ອນເຮັດວຽກຈະສະໝັກໃຫ້.

3)
가: 체류 기간 ____________ 신청은 어디에서 해요?
ການສະໝັກຕໍ່ໄລຍະເວລາ ການພັກເຊົາແມ່ນເຮັດຢູ່ໃສ?
나: 출입국 관리소에서 해요. ເຮັດຢູ່ ສຳນັກງານກວດຄົນເຂົ້າ-ອອກເມືອງ.

① 연장　　　　② 취업

4)
가: 체류지 입증 서류에는 어떤 것들이 있어요?
ຢູ່ໃນເອກະສານຢັ້ງຢືນການພັກເຊົາ ແມ່ນມີຫຍັງແດ່?
나: 거주하고 있음을 증빙하는 ____________ 등이 필요해요.
ເຈົ້າຕ້ອງມີ ສັນຍາເຊົ່າ ເພື່ອຢັ້ງຢືນການພັກເຊົາຂອງເຈົ້າ.

① 임대차 계약서　　　　② 자진 출국 각서

정답 1. ① ㉢ ② ㉠ ③ ㉣ ④ ㉡ 2. 1) ① 2) ① 3) ① 4) ①



## 대화 2 ບົດສົນທະນາ 2






ທັງສອງຄົນແມ່ນກຳລັງສົນທະນາ ກັນກ່ຽວກັບຂ່າວຂອງເຮືອງ. ຈົ່ງຟັງບົດສົນທະນາສອງເທື່ອເບິ່ງວ່າ ພວກເຂົາສົນທະນາກ່ຽວກັບຫຍັງ?

투안 흐엉 씨 이야기 들었어요?
ໄດ້ຍິນເລື່ອງກ່ຽວກັບ ເຮືອງບໍ?

리한 아니요, 무슨 일 있어요? 오늘 작업장에서 안 보이던데요.
ບໍ່, ມີເລື່ອງຫຍັງ? ມື້ນີ້ ຄືວ່າບໍ່ເຫັນລາວຢູ່ບ່ອນເຮັດວຽກ.

투안 체류 자격이 문제가 돼서 이것저것 알아보고 다니나 봐요.
ຄືຊິແມ່ນລາວໄປຖາມເບິ່ງ ອັນນັ້ນອັນນີ້ ຍ້ອນວ່າ ລາວມີບັນຫາກ່ຽວກັບໄລຍະເວລາການພັກເຊົາ.

> 문제가 되다
> ເປັນບັນຫາ/ມີບັນຫາ

> 이것저것
> ນັ້ນນີ້/ອັນນັ້ນອັນນີ້

리한 정말이요? 지난달에 계약 갱신하지 않았어요?
ແມ່ນແທ້ບໍ? ເດືອນແລ້ວນີ້ ລາວບໍ່ໄດ້ຕໍ່ສັນຍາບໍ?

투안 네, 계약은 했는데 체류 연장 신청을 따로 안 해서 불법 체류가 됐대요.
ແມ່ນ, ເຮັດສັນຍາແລ້ວ ແຕ່ວ່າບໍ່ໄດ້ສະໝັກຕໍ່ເວລາ ການພັກເຊົາຕ່າງຫາກ ຈຶ່ງເວົ້າວ່າເປັນການພັກເຊົາ ທີ່ຜິດກົດໝາຍ.

리한한 그럼, 흐엉 씨는 귀국해야 하는 거예요?
ດັ່ງນັ້ນ, ເຮືອງ ຕ້ອງກັບປະເທດບໍ?

투안 그건 아니고 벌금을 좀 내야 할 것 같다고 해요.
ບໍ່ແມ່ນແບບນັ້ນ ແຕ່ມີຄົນເວົ້າວ່າ ຕ້ອງໄດ້ເສຍຄ່າປັບໄໝໜ້ອຍໜຶ່ງ.



ຕອນນີ້ ລອງເປັນຕວນ ແລະ ຣີຮັນ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງໃຈຟັງໃຫ້ດີ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 흐엉 씨는 왜 불법 체류자가 되었어요? ເປັນຫຍັງ ເຮືອງ ຈຶ່ງກາຍເປັນຜູ້ພັກເຊົາ ທີ່ຜິດກົດໝາຍ?
2. 흐엉 씨는 체류 자격이 문제가 돼서 귀국해야 해요?
   ເຮືອງ ຕ້ອງກັບປະເທດ ຍ້ອນວ່າໄລຍະເວລາ ການພັກເຊົາມີບັນຫາບໍ?

정답 1. 체류 연장 신청을 따로 안 했어요. 2. 아니요, 벌금을 좀 내야 해요.



## 어휘 2 ຄຳສັບ 2 체류 자격 ສະຖານະການພັກເຊົາ



ພວກເຮົາສາມາດໄດ້ຮັບ ສະຖານະການພັກເຊົາ ແນວໃດ? ເຮົາລອງມາເບິ່ງວ່າ ຄຳສັບກ່ຽວກັບ ສະຖານະການພັກເຊົາວ່າ ມີຫຍັງແດ່?



체류 자격
ສະຖານະ ການພັກເຊົາ



합법 체류
ການຢູ່ອາໄສ ແບບຖືກກົດໝາຍ



불법 체류
ການຢູ່ອາໄສ ແບບຜິດກົດໝາຍ



체류 자격 외 활동
ກິດຈະກຳ ທີ່ນອກເໜືອຈາກ ສະຖານະການພັກເຊົາ




자격을 부여하다
ໃຫ້ສະຖານະ ການພັກເຊົາ



자격을 획득하다
ໄດ້ສະຖານະ ການພັກເຊົາ/ ໄດ້ມາເຊິ່ງສະຖານະ ການພັກເຊົາ



자격을 변경하다
ປ່ຽນສະຖານະ



추방되다
ຖືກເນລະເທດ ອອກຈາກປະເທດ




벌금을 내다
ເສຍຄ່າປັບໃໝ



강제 출국을 당하다
ຖືກບັງຄັບ ໃຫ້ອອກຈາກປະເທດ




자진 출국하다
ອອກຈາກປະເທດ ໂດຍສະໝັກໃຈ

### Tip 체류 기간 연장 ການຕໍ່ໄລຍະເວລາ ການພັກເຊົາ

**체류 기간 연장이란?** ຕໍ່ໄລຍະເວລາ ການພັກເຊົາ ແມ່ນຫຍັງ?

이전에 허가 받은 체류 기간을 초과하여 계속 대한민국에 체류하고자 하는 외국인은 체류 기간 연장 허가를 받아야 합니다.
ຄົນຕ່າງດ້າວ ທີ່ຕ້ອງການອາໄສຕໍ່ ຢູ່ເກົາຫຼີ ຫຼັງຈາກໄລຍະເວລາ ການພັກເຊົາ ໄດ້ໝົດໄປແລ້ວ ແມ່ນຕ້ອງໄດ້ຮັບອະນຸຍາດ ເພື່ອຕໍ່ໄລຍະເວລາການພັກເຊົາ.

**체류 연장 가능 기간** ໄລຍະເວລາ ທີ່ສາມາດຕໍ່ ການພັກເຊົາ

고용 노동부에서 재고용 확인서를 받아오면 4년 10개월을 초과하지 않는 범위내에서 체류 연장이 가능합니다.
ຖ້າຜູ້ສະໝັກໄດ້ຮັບໃບອະນຸຍາດ ການຈ້າງງານຄືນອີກ ຈາກກະຊວງແຮງງານ ແລະ ການຈ້າງງານ, ຜູ້ກ່ຽວສາມາດຕໍ່ໄລຍະເວລາພັກເຊົາໄດ້ ຈົນເຖິງ 4 ປີ 10 ເດືອນ.



จ็งตอบคำถาม โดยที่บ่เบิ่ง พาภส่วนคำสับที่ธฐนมาข้างเทิง.

1. 그림을 보고 알맞은 말을 연결하세요. จ็งเบิ่งธูบพาบ แล้วຂີດເຊື່ອມຕໍ່ໃສ່ຄຳເວົ້າ ທີ່ເໝາະສົມ.

| | |
|---|---|
| ① | ㉠ 추방되다 |
| ② | ㉡ 벌금을 내다 |
| ③ | ㉢ 자진 출국하다 |
| ④ | ㉣ 강제 출국을 당하다 |

2. 빈칸에 맞는 표현을 골라 대화를 완성하세요.

ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກສຳນວນທີ່ຖືກຕ້ອງ ຕື່ມໃສ່ບ່ອນຫວ່າງ.

1)

가: 체류 연장 신고를 어서 해야 하는데. 통 시간이 안 나네요.
ຂ້ອຍຕ້ອງຮີບລາຍງານ ການຕໍ່ການພັກເຊົາ, ແຕ່ວ່າບໍ່ມີເວລາເລີຍ.

나: 어서 하세요. 체류 기간이 만료되면 __________ 체류가 돼요.
ພ້າວເຮັດໄວໆເດີ້. ຖ້າສິ້ນສຸດໄລຍະເວລາການພັກເຊົາ ແມ່ນຖືວ່າເປັນ ການພັກເຊົາແບບຜິດກົດໝາຍ.

① 불법　　② 합법

2)

가: 취업하신 거죠? 증명 서류를 제출해 주세요.
ເຈົ້າໄດ້ວຽກເຮັດແລ້ວແມ່ນບໍ? ກະລຸນາຍື່ນ ເອກະສານຢັ້ງຢືນ.

나: 취업 __________를 제출하면 될까요? ຖ້າວ່າຍື່ນໃບຢັ້ງຢືນການຈ້າງງານກໍໄດ້ບໍ?

① 신청서　　② 확인서

3)

가: 스스로 신고한 거예요? ເຈົ້າລາຍງານດ້ວຍຕົວເອງບໍ?

나: 네, __________ 출국을 하면 재입국할 때 도움이 된다고 해서요.
ເຈົ້າ, ເພິ່ນເວົ້າວ່າ ຖ້າອອກປະເທດແບບສະໝັກໃຈ ມັນຈະຊ່ວຍເວລາທີ່ຈະກັບເຂົ້າມາອີກ.

① 강제　　② 자진

4)

가: 신청 __________이 지나서 신고를 하면 벌금을 내요.
ຖ້າກາຍໄລຍະເວລາການສະໝັກ ແລ້ວຈຶ່ງລາຍງານ ແມ່ນໄດ້ເສຍຄ່າປັບໃໝ.

나: 네, 날짜를 기억해야겠네요. ເຈົ້າ, ຂ້ອຍຕ້ອງໄດ້ຈື່ວັນທີໄວ້ແລ້ວ.

① 기간　　② 대상

정답 1. ① ㉡ ② ㉠ ③ ㉣ ④ ㉢ 2. 1) ① 2) ② 3) ② 4) ①



## 활동 ກິດຈະກຳ

투안 씨의 체류 연장 허가 신청서입니다. 잘 읽고 질문에 답하세요.

ນີ້ແມ່ນໃບສະໝັກ ຂໍອະນຸຍາດຕໍ່ການພັກເຊົາຂອງຕວນ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

### 신 청 서 (신 고 서)

ແບບຟອມສະໝັກ (ແບບຟອມລາຍງານ)

출입국·외국인 정 책 본 부 KOREA IMMIGRATION SERVICE

| 업 무 선 택 ເລືອກການສະໝັກ | |
|---|---|
| ① 외국인 등록 ການລົງທະບຽນຄົນ ຕ່າງປະເທດ | ☐ |
| ② 등록증 재발급 ອອກໃບທະບຽນຄົນ ຕ່າງປະເທດໃໝ່ | ☐ |
| ③ 체류기간 연장 허가 ການຂໍອະນຸຍາດຕໍ່ໄລຍະເວລາການພັກເຊົາ | ☑ |
| ④ 체류기간 변경 허가 ການອະນຸຍາດປ່ຽນ ໄລຍະເວລາການພັກເຊົາ | ☐ |
| ⑤ 체류자격 부여 ໃຫ້ສະຖານະ ການພັກເຊົາ | ☐ |
| 신청기간 ໄລຍະເວລາການສະໝັກ | 2015년 3월 21일 |

| 공용란 ສຳລັບເຈົ້າໜ້າທີ່ | | | | | | | | |
|---|---|---|---|---|---|---|---|---|
| 기본사항 ຂໍ້ມູນທົ່ວໄປ | 최초 입국일 ວັນທີເຂົ້າ ປະເທດທຳອິດ | 2012. 4. 1 | 체류 자격 ສະຖານະ ການພັກເຊົາ | E-9 비전문취업 ວຽກທີ່ບໍ່ແມ່ນວິຊາການ (E-9) | 체류 기간 ໄລຍະເວລາ ການພັກເຊົາ | 2013. 4. 1 – 2015. 3. 27 | | |
| 접수사항 ການສະໝັກ | 접수 일자 ວັນທີສະໝັກ | 2015. 3. 21 | 접수 번호 ເລກທີສະໝັກ | 201511010 | 비고 ໝາຍເຫດ | | | |
| 허가사항 ການອະນຸຍາດ | 허가 일자 ວັນທີອະນຸຍາດ | 2015. 3. 22 | 허가 번호 ເລກທີອະນຸຍາດ | 310125226 | 체류 자격 ສະຖານະ ການພັກເຊົາ | E-9 | 체류 기간 ໄລຍະເວລາ ການພັກເຊົາ | 1년 10개월 1 ປີ 10 ເດືອນ |

| 결제 ການເຊັນຢັ້ງຢືນ | 담당 ຜູ້ຮັບຜິດຊອບ | 계장 ຫົວໜ້າຂະແໜງ | 과장 ຜູ້ຈັດການ | 국장 ຜູ້ຈັດການທົ່ວໄປ | 소장 ປະທານ | |
|---|---|---|---|---|---|---|
| | | | | | (가) · 부 | |

1. 위 신청서에 대한 설명으로 맞지 <u>않는</u> 것을 고르세요.
   ຈົ່ງເລືອກເອົາຄຳຕອບ ທີ່ບໍ່ຖືກຕ້ອງກັບ ການອະທິບາຍກ່ຽວກັບ ແບບຟອມສະໝັກຂ້າງເທິງ.

   ① 투안 씨는 체류 기간을 연장하려고 합니다.
   ② 투안 씨는 비전문 취업 비자를 받았습니다.
   ③ 투안 씨는 2015년 4월에 고향에 돌아가야 합니다.
   ④ 투안 씨는 2012년 4월에 한국에 처음 들어왔습니다.

정답 1. ③

# 체류 기간 연장 신청

## ການສະໝັກ ເພື່ອຕໍ່ໄລຍະເວລາການພັກເຊົາ

### 체류 기간 연장 허가 절차도 ຂັ້ນຕອນ ການສະໝັກຂໍອະນຸຍາດ ຕໍ່ໄລຍະເວລາການພັກເຊົາ




<table>
<tr><th colspan="2">ຜູ້ສະໝັກ</th><th>ເວລາລົງທະບຽນ</th></tr>
<tr><td colspan="2">ລົງທະບຽນສະໝັກ ເພື່ອຕໍ່ໄລຍະເວລາການພັກເຊົາ<br>ສຳນັກງານກວດຄົນເຂົ້າ-ອອກເມືອງ ຫຼື ສຳນັກງານສາຂາ</td><td>ກ່ອນວັນໝົດກຳນົດ ໄລຍະເວລາການພັກເຊົາ</td></tr>
<tr><th colspan="2">ການປະເມີນ</th><th>ເອກະສານຕິດຂັດ</th></tr>
<tr><th>ອະນຸຍາດ</th><th>ບໍ່ອະນຸຍາດ</th><td rowspan="2">- ແບບຟອມສະໝັກ ການອະນຸຍາດ ຕໍ່ການພັກເຊົາ<br>- ໜັງສືຜ່ານແດນ<br>- ບັດທະບຽນຄົນຕ່າງດ້າວ (ຜູ້ທີ່ກ່ຽວຂ້ອງ)<br>- ເອກະສານຕິດຂັດ ສຳລັບແຕ່ລະສະຖານະ ການພັກເຊົາ<br>- ຄ່າທຳນຽມ</td></tr>
<tr><td>- ປ່ຽນສະຖານະບ່ອນເຮັດວຽກ ຢູ່ປຶ້ມຜ່ານແດນ<br>- ສະແດງການອະນຸຍາດ ຢູ່ບັດທະບຽນຄົນຕ່າງດ້າວ</td><td>ແຈ້ງເຫດຜົນທີ່ບໍ່ອະນຸຍາດ</td></tr>
</table>

### 체류 기간 연장 허가 신청 기간 ໄລຍະເວລາການສະໝັກ ຂໍອະນຸຍາດ ຕໍ່ໄລຍະເວລາພັກເຊົາ

현재의 체류 기간이 만료하기 전 2개월부터 만료 당일까지 신청하여야 합니다. 체류 기간 만료일이 지난 후 체류 기간 연장 허가를 신청하면 범칙금이 부과됩니다.

ນັບຕັ້ງແຕ່ 2 ເດືອນ ເປັນຕົ້ນໄປ ຈົນເຖິງວັນໝົດອາຍຸຂອງ ໄລຍະເວລາການພັກເຊົາປະຈຸບັນ ແມ່ນຕ້ອງສະໝັກ. ຖ້າກາຍວັນໝົດອາຍຸ ຂອງໄລຍະເວລາການພັກເຊົາ ແລ້ວຈຶ່ງສະໝັກການຂໍອະນຸຍາດ ຕໍ່ເວລາພັກເຊົາ ແມ່ນຈະຖືກປັບໃໝ.

### 체류 기간 연장 허가 신청 방법 ວິທີການສະໝັກ ໃບອະນຸຍາດຕໍ່ໄລຍະເວລາ ພັກເຊົາ

본인 또는 대리인이 주소지 관할 출입국 사무소에 필요한 서류를 준비하셔서 신청하시면 됩니다. 단, 신청 당일 본인이 국내에 체류하고 있는 경우 신청이 가능합니다.

ສະໝັກໄດ້ດ້ວຍຕົວເອງ ຫຼື ຜູ້ຕາງໜ້າກໍໄດ້, ໂດຍການກຽມເອກະສານ ທີ່ຈຳເປັນ ໄປຍື່ນຢູ່ ຫ້ອງການກວດຄົນເຂົ້າ-ອອກເມືອງຢູ່ທ້ອງຖິ່ນ. ໃນມື້ທີ່ຍື່ນເອກະສານສະໝັກ, ຜູ້ກ່ຽວຕ້ອງອາໄສຢູ່ໃນເກົາຫຼີເທົ່ານັ້ນ.



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແມ່ນການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ຂໍ້ 2 ແລະ 3 ແມ່ນການເລືອກເອົາວ່າແມ່ນເນື້ອໃນກ່ຽວກັບຫຍັງ. ຈົ່ງກວດເບິ່ງຄຳສັບໃຫ້ດີກ່ອນຟັງ.

**1. 이야기를 듣고 질문에 알맞은 대답을 고르십시오.**
ຈົ່ງຟັງການບັນຍາຍ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມ ສຳລັບແຕ່ລະຄຳຖາມ.

Track 180

여자는 지금 무엇을 하고 있습니까? ຕອນນີ້ ຜູ້ຍິງກຳລັງເຮັດຫຍັງຢູ່?

① 외국인 등록　　② 체류 기간 연장
③ 사업장 변경 신청　　④ 재입국 허가 신청

**[2~3] 다음을 듣고 무엇에 대한 대화인지 고르십시오.**
ຈົ່ງຟັງຕໍ່ໄປນີ້ ແລ້ວເລືອກເອົາວ່າແມ່ນບົດສົນທະນາ ກ່ຽວກັບຫຍັງ.

2. ① 신청 기간　　② 신청 대상
③ 체류 기간　　④ 취업 기간

3. ① 강제 출국　　② 불법 체류
③ 자진 출국　　④ 합법 체류



ຂໍ້ 4 ແລະ 5 ແມ່ນການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ຈົ່ງກວດເບິ່ງເນື້ອໃນຄຳຕອບໃຫ້ດີ ກ່ອນຟັງ.

**[4~5] 하나의 이야기를 듣고 두 개의 질문에 대답하십시오.**
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມສອງຂໍ້.

4. 체류 기간을 연장하려면 어디로 가야 합니까?
ຖ້າຕ້ອງການຕໍ່ໄລຍະເວລາພັກອາໄສ ແມ່ນຕ້ອງໄປບ່ອນໃດ?

① 공항　　② 고용센터
③ 현지 사무소　　④ 출입국 관리사무소

5. 여자가 이야기하지 않은 것은 무엇입니까?
ສິ່ງທີ່ຜູ້ຍິງບໍ່ໄດ້ເວົ້າແມ່ນຫຍັງ?

① 취업 기간 연장 신청서를 접수해야 해요.
② 허가를 안 받고 일하면 불법 체류가 돼요.
③ 체류 기간을 연장하려면 허가를 받아야 해요.
④ 체류 기간이 만료된 후에도 신청할 수 있어요.



### 듣기 대본 ເນື້ອໃນບົດຟັງ

1. 여: 여기 체류 기간 연장 허가 신청서하고 여권, 외국인 등록증입니다.
   ນີ້ແມ່ນໃບສະໝັກ ຂໍອະນຸຍາດຕໍ່ໄລຍະເວລາພັກເຊົາ, ໜັງສືຜ່ານແດນ ແລະ ບັດຄົນຕ່າງດ້າວ.
   남: (서류 넘기는 소리, 잠시 후) 네, 접수되셨고요. 심사 후에 연락드리겠습니다.
   (ສຽງເປີດເອກະສານ, ຕໍ່ມາອີກໜ້ອຍໜຶ່ງ) ເຈົ້າ, ລົງທະບຽນຮຽບຮ້ອຍແລ້ວ. ຫຼັງຈາກ ກວດກາແລ້ວຈະຕິດຕໍ່ຫາ.

2. 남: 외국인 근로자의 경우 국내에 머무를 수 있는 기간이 3년에서 최대 5년입니다.
   ກໍລະນີຂອງແຮງງານຕ່າງປະເທດ, ໄລຍະເວລາການພັກເຊົາໃນ ເກົາຫຼີ ແມ່ນນັບແຕ່ 3ປີ ເຖິງ 5ປີ.
3. 여: 체류 기간이 만료하는 등 체류 자격이 없이 머무르고 있는 상태를 이야기합니다.
   ສິ່ງນີ້ສະແດງວ່າ ຜູ້ກ່ຽວບໍ່ມີສະຖານະພັກເຊົາ ຍ້ອນວ່າ ໝົດກຳນົດໄລຍະເວລາພັກເຊົາ ແລະ ອື່ນໆ.

4-5. 남: 체류 기간을 연장하고 싶은데요. ຂ້ອຍຕ້ອງການຕໍ່ ໄລຍະເວລາການພັກເຊົາ.
   여: 출입국 관리소에서 신고를 해서 허가를 받아야 해요. 취업 기간 연장 신청서를 접수하고 심사를 받으세요. 체류 연장 허가를 안 받고 일하면 불법 체류가 돼서 강제 출국을 당하게 돼요.
   ຕ້ອງສະໝັກຂໍການອະນຸຍາດຢູ່ ສຳນັກງານກວດຄົນເຂົ້າ-ອອກເມືອງ. ລົງທະບຽນໃບສະໝັກຕໍ່ ໄລຍະເວລາເຮັດວຽກ ແລ້ວກໍຮັບການພິຈາລະນາ. ຖ້າເຮັດວຽກໂດຍທີ່ບໍ່ໄດ້ຮັບອະນຸຍາດການການຕໍ່ໄລຍະເວລາພັກເຊົາ ຖືວ່າເປັນການພັກເຊົາ ທີ່ຜິດກົດໝາຍ ເຊິ່ງຈະຖືກບັງຄັບໃຫ້ອອກຈາກປະເທດໄດ້.

정답 1. ② 2. ③ 3. ② 4. ④ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

L-58

1. 대화를 듣고 질문에 알맞은 것을 고르십시오. ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자가 남자를 찾아온 이유는 무엇입니까? ເຫດຜົນທີ່ຜູ້ຍິງໄປຫາຜູ້ຊາຍແມ່ນຫຍັງ?

   ① 체류 기간을 몰라서 ② 여권을 발급받으려고
   ③ 한국에 더 체류하려고 ④ 외국인 등록증이 필요해서

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 여: 안녕하세요? 체류 기간을 연장하려고 왔는데요. ສະບາຍດີ? ຂ້ອຍຕ້ອງການ ຕໍ່ໄລຍະເວລາພັກເຊົາ.
   남: 체류 기간 연장 신청서하고 여권, 외국인 등록증 가지고 오셨어요?
   ໄດ້ເອົາ ແບບຟອມສະໝັກ ເພື່ອຕໍ່ໄລຍະເວລາການພັກເຊົາ, ໜັງສືຜ່ານແດນ ແລະ ບັດຄົນຕ່າງດ້າວ ມານຳບໍ?
   여: 여기 있어요. ຢູ່ນີ້.
   남: 네, 접수됐습니다. 심사가 끝나면 연락드리겠습니다.
   ເຈົ້າ, ໄດ້ລົງທະບຽນແລ້ວ. ຖ້າພິຈາລະນາແລ້ວ ຈະຕິດຕໍ່ຫາ.

정답 1. ③



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແມ່ນການເບິ່ງຮູບພາບ ແລ້ວເລືອກເອົາສຳນວນທີ່ເໝາະສົມ. ສ່ວນຂໍ້ 2 ແລະ 3 ແມ່ນການເລືອກເອົາຄຳສັບ ທີ່ເໝາະສົມ. ຈົ່ງຄິດທົບທວນເຖິງຄຳສັບ ທີ່ໄດ້ຮຽນຜ່ານມາກ່ອນໜ້ານີ້ ແລ້ວຕອບຄຳຖາມລອງເບິ່ງ.

1. 다음 그림을 보고 맞는 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ.



① 추방됐어요. ② 벌금을 냈어요.
③ 자진 출국했어요. ④ 자격을 변경했어요.

[2~3] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

2. 외국인 근로자는 체류 자격 외 __________을 하기 전에 반드시 신고를 해야 합니다.
ສຳລັບແຮງງານຕ່າງປະເທດ, ກ່ອນຈະເຮັດ ກິດຈະກຳ ທີ່ນອກຈາກການອາໃສ ແມ່ນຕ້ອງລາຍງານກ່ອນ.

① 고용 ② 신청 ③ 연장 ④ 활동

3. 체류 기간을 __________ 출입국 관리 사무소에 가야합니다.
ຖ້າຕ້ອງການຕໍ່ ໄລຍະເວລາການພັກເຊົາ ແມ່ນຕ້ອງໄປສຳນັກງານກວດຄົນເຂົ້າ-ອອກເມືອງ.

① 연장하려면 ② 심사하려면 ③ 허가하려면 ④ 추방되려면



ຂໍ້ 4 ແລະ 5 ແມ່ນການອ່ານບົດເລື່ອງກ່ຽວກັບ ການຕໍ່ໄລຍະເວລາພັກເຊົາ ແລ້ວຕອບຄຳຖາມ.

[4~5] 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

4. 출입국 사무소에 가면 신청서를 작성, 접수하고 심사를 받습니다. 허가가 되면 외국인 등록증에 허가 사항을 적어 줍니다.
ຖ້າໄປສຳນັກງານກວດຄົນເຂົ້າ-ອອກເມືອງ ແລ້ວຂຽນໃບສະໝັກ, ລົງທະບຽນ ແລະ ຮັບການພິຈາລະນາ. ຖ້າໄດ້ຮັບອະນຸຍາດ ແມ່ນຈະຂຽນລາຍລະອຽດ ການອະນຸຍາດໃສ່ບັດຄົນຕ່າງດ້າວ.

체류 연장 절차가 아닌 것을 고르십시오. ຈົ່ງເລືອກເອົາສິ່ງທີ່ບໍ່ ແມ່ນຂັ້ນຕອນ ຂອງການຕໍ່ການພັກເຊົາ.

① 심사를 받아요. ② 신청서를 작성해요.
③ 신청서를 접수해요. ④ 등록증 허가를 받아요.

5. 체류 기간을 연장하려면 체류 기간 만료일 전까지 체류 기간 연장 허가 신청서, 여권, 외국인 등록증, 수수료를 준비해서 가야 합니다.
ຖ້າຕ້ອງການຕໍ່ໄລຍະເວລາພັກເຊົາ ຕ້ອງກະກຽມ ໃບສະໝັກຂໍອະນຸຍາດຕໍ່ການພັກເຊົາ, ໜັງສືຜ່ານແດນ, ບັດຄົນຕ່າງດ້າວ, ຄ່າລົງທະບຽນ ແລ້ວໄປສະໝັກກ່ອນ ວັນໝົດກຳນົດການພັກເຊົາ.

위의 내용과 맞지 않는 것을 고르십시오. ຈົ່ງເລືອກເອົາສິ່ງທີ່ ບໍ່ຖືກກັບເນື້ອໃນຂ້າງເທິງ.

① 수수료가 듭니다. ② 외국인 등록증이 필요합니다.
③ 체류 기간 연장에 대한 설명입니다. ④ 신청 기간은 만료일 다음날까지입니다.


1. ① 2. ④ 3. ① 4. ④ 5. ④



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 회사에 일이 많아져서 일할 사람이 더 필요합니다. 그래서 새 ______을/를 뽑기로 했습니다.

ວຽກຢູ່ບໍລິສັດ ແມ່ນຫຼາຍຂຶ້ນ ຈຶ່ງຕ້ອງການຄົນເຮັດວຽກຫຼາຍຂຶ້ນ. ດັ່ງນັ້ນ, ພວກເຮົາຈຶ່ງຕັດສິນໃຈວ່າຈະເລືອກເອົາພະນັກງານໃໝ່.

① 사장 ② 친척
③ 직원 ④ 친구

2. 일을 하다가 ________ 모르는 것이 있으면 반장님께 물어보면 됩니다. 그러면 반장님께서 잘 가르쳐 주실 겁니다.

ຖ້າວ່າເຮັດວຽກ ແລ້ວມີສິ່ງທີ່ບໍ່ຮູ້ ແມ່ນໃຫ້ຖາມຫົວໜ້າຫ້ອງໄດ້. ແລ້ວຫົວໜ້າຫ້ອງກໍຈະຊ່ວຍບອກສອນໄດ້ເປັນຢ່າງດີ.

① 어서 ② 별로
③ 혹시 ④ 설마

3. 외국인 근로자가 한국에 잘 정착할 수 있도록 지원하는 교육 프로그램이 있습니다. 신청하면 ________ 누구나 교육을 받을 수 있습니다.

ມີໂປຣແກຣມການເຝິກອົບຮົມສຳລັບ ທີ່ຊ່ວຍໃຫ້ແຮງງານຕ່າງປະເທດ ສາມາດຕັ້ງຫຼັກຢູ່ ເກົາຫຼີ ໄດ້ດີ. ຖ້າສະໝັກ, ຜູ້ໃດກໍສາມາດຮັບການເຝິກອົບຮົມໄດ້ ໃນໄລຍະເວລາທີ່ພັກເຊົາຢູ່.

① 체류하지만 ② 체류하는 동안
③ 계획하지만 ④ 계획하는 동안

4. 체류 기간을 연장하려면 출입국 사무소에 체류 기간 연장 허가 신청서를 내면 됩니다. 그런데 체류 기간 만료일이 지나기 전에 신청을 ________ .

ຖ້າຕ້ອງການຕໍ່ໄລຍະເວລາພັກເຊົາ ແມ່ນໃຫ້ຍື່ນໃບສະໝັກຂໍອະນຸຍາດຕໍ່ໄລຍະເວລາພັກເຊົາ ຢູ່ຫ້ອງການກວດຄົນເຂົ້າ-ອອກເມືອງ. ແຕ່ວ່າ ຕ້ອງສະໝັກ ກ່ອນທີ່ໄລຍະເວລາການພັກເຊົາ ຈະໝົດກຳນົດ.

① 해야 합니다 ② 하고 있습니다
③ 받아야 합니다 ④ 받고 있습니다

정답 1. ③ 2. ③ 3. ② 4. ①



# 산업 안전 I

ຄວາມປອດໄພ ໃນອຸດສະຫາກຳ I



**학습 안내**
ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ — ການທຳຄວາມຄຸ້ນເຄີຍກັບປ້າຍເຕືອນ ຄວາມປອດໄພ ໃນອຸດສະຫາກຳ, ການທຳຄວາມເຂົ້າໃຈກ່ຽວກັບລະບຽບ ເພື່ອຄວາມປອດໄພໃນອຸດສະກຳການຜະລິດ.
- □ ຄຳສັບ ແລະ ສຳນວນຄຳເວົ້າ — ປ້າຍເຕືອນຄວາມປອດໄພ ໃນອຸດສະຫາກຳ, ລະບຽບປ້ອງກັນຄວາມປອດໄພ ໃນອຸດສະກຳການຜະລິດ
- □ ຂໍ້ມູນກ່ຽວກັບວັດທະນາທຳ — ພະຍາດທີ່ເກີດຈາກອາຊີບ

## 어휘 1 ຄຳສັບ 1

### 산업 안전 표지 ປ້າຍເຕືອນ ຄວາມປອດໄພ ໃນອຸດສະຫາກຳ

ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ປ້າຍເຕືອນຄວາມປອດໄພ ໃນບ່ອນເຮັດວຽກ. ລອງມາຮຽນຮູ້ນຳກັນເບິ່ງວ່າ ມີຫຍັງແດ່ບໍ?


출입금지
ຫ້າມເຂົ້າອອກ


보행금지
ຫ້າມຍ່າງໄປ


금연
ຫ້າມສູບຢາ


화기금지
ຫ້າມຕິດໄຟ


인화성 물질 경고
ເຕືອນວັດຖຸໄວໄຟ


산화성 물질 경고
ເຕືອນສານທີ່ກໍໃຫ້ເກີດໄຟ


폭발성 물질 경고
ເຕືອນວັດຖຸລະເບີດ


급성독 물질 경고
ເຕືອນວັດຖຸອັນຕະລາຍສູງ


방사성 물질 경고
ເຕືອນວັດຖຸມີລັງສີ


고압 전기 경고
ເຕືອນໄຟຟ້າແຮງສູງ


매달린 물체 경고
ເຕືອນມີວັດຖຸແຂວນຢູ່ເທິງ


낙하물 경고
ເຕືອນມີວັດຖຸຕົກລົງມາ


고온 경고
ເຕືອນອຸນນະພູມສູງ


저온 경고
ເຕືອນອຸນຫະພູມຕ່ຳ


몸균형 상실 경고
ເຕືອນການສູນເສຍຄວາມຊົງຕົວ (ລະວັງລົ້ມ)


위험 장소 경고
ເຕືອນສະຖານທີ່ ອັນຕະລາຍ



## 어휘 2 ຄຳສັບ 2

## 제조업 관련 안전 수칙
ລະບຽບຄວາມປອດໄພ ໃນອຸດສາຫະກຳການຜະລິດ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ລະບຽບຄວາມປອດໄພ ໃນອຸດສາຫະກຳການຜະລິດ. ລອງມາເບິ່ງນຳກັນວ່າ ມີຫຍັງແດ່ບໍ?

### 끼임 재해 ອຸປະຕິເຫດ ທີ່ເກີດຈາກການໜີບ

(1) 직선운동 중인 설비, 기계 사이에 끼임
ລະວັງອຸປະຕິເຫດ ເກີດຈາກຊ່ອງຫວ່າງໜີບທັບ ລະຫວ່າງອຸປະກອນເຄື່ອງຈັກ ທີ່ກຳລັງໃຊ້ງານໜີບ




(2) 회전부와 고정물체 사이에 끼임
ລະວັງອຸປະຕິເຫດ ຖືກໜີບລະຫວ່າງ ສ່ວນທີ່ໝຸນ ແລະ ວັດຖຸຄົງທີ່




(3) 두 회전체의 물림점에 끼임
ລະວັງອຸປະຕິເຫດ ຖືກໜີບຈາກແຂ້ວເຟືອງ ທີ່ມີສອງເບື້ອງໝູນເຂົ້າຫາກັນ




(4) 회전체 및 돌기부에 감김
ລະວັງອຸປະຕິເຫດ ຖືກປາດ ຫຼື ບາດໃນຂະນະທີ່ເຄື່ອງຈັກກຳລັງເປີດໃຊ້ງານຢູ່






(5) 인력 운반, 취급 중인 물체에 끼임
ລະວັງອຸປະຕິເຫດ ເກີດຈາກການຍົກຂອງໜັກ ຫຼື ວັດຖຸອຸປະກອນທີ່ມີການເຄື່ອນທີ່





## 넘어짐 재해 ຄວາມເສຍຫາຍ ທີ່ເກີດຈາກການລົ້ມ

(1) 계단, 사다리에서 넘어짐 ການຕົກຈາກຂັ້ນໄດທີ່ສູງ (ຂັ້ນໄດຄົງທີ່, ຂັ້ນໄດເຄື່ອນທີ່ (ເວລາເຮັດວຽກ)





(2) 바닥에서 미끄러짐, 바닥의 돌출물 등에 걸려 넘어짐
ພະລາດລົ້ມລົງພື້ນທີ່ໜື່ນ ຫຼື ເຕະສະດຸດ





(3) 운송수단, 설비에서 넘어짐 ລົດປີ້ນ ຫຼື ພະລາດລົ້ມ ຈາກວັດຖຸ ທີ່ອຳນວຍຄວາມສະດວກຕ່າງໆ





(4) 물체의 넘어짐 ການພິກຄວ່ມ ຂອງວັດຖຸອຸປະກອນ





## 부딪힘 재해 ອຸປະຕິເຫດ ທີ່ເກີດຈາກການຕຳກັນ

### (1) 사람에 의한 부딪힘
ການຕຳກັນ ຂອງຄົນງານ



### (2) 고속 회전체 등에 부딪힘
ການຖືກຕຳ ກັບຊິ້ນສ່ວນເຄື່ອງຈັກ ທີ່ໝູນດ້ວຍຄວາມໄວສູງ



### (3) 바닥에서 구르는 물체에 부딪힘
ການຖືກຕຳ ກັບວັດຖຸສິ່ງຂອງ ທີ່ໝຸນເຂົ້າຫາກັນ



### (4) 흔들리는 물체에 부딪힘
ການຖືກຕຳ ກັບວັດຖຸທີ່ຍົກເຄື່ອນທີ່ໄປມາ



### (5) 취급사용 물체에 부딪힘
ການຖືກຕຳ ກັບວັດຖຸທີ່ກຳລັງໃຊ້ງານຢູ່



### (6) 차량 등과의 부딪힘
ການຖືກຕຳ ກັບຍານພາຫະນະ



## 맞음 재해 ອຸປະຕິເຫດ ທີ່ເກີດຈາກການກະເດັນໃສ່

### (1) 중량물 운반 시 맞음 ຖືກທັບໂດຍວັດຖຸ ທີ່ມີນໍ້າໜັກຕົກໃສ່ ໃນຂະນະທີ່ເຄື່ອນຍ້າຍວັດຖຸ





### (2) 연삭기, 선반, 원심기 가공물에 맞음

ຖືກວັດຖຸ ກະເດັນຈາກຊິ້ນສ່ວນເຄື່ອງຈັກ, ເຄື່ອງບົດ, ເຄື່ອງປັ່ນ, ເຄື່ອງກືງ







### (3) 내압을 받는 용기부품에 맞음

ຖືກຊິ້ນສ່ວນຈາກພາຊະນະ ທີ່ມີຄວາມດັນແຮງສູງກະເດັນໃສ່



### (4) 보관된 부품에 맞음



ຖືກວັດຖຸສິ່ງຂອງຫຼົ່ນທັບໃສ່ ຈາກການເກັບມ້ຽນສິ່ງຂອງ



## 기타 재해 ອຸປະຕິເຫດອື່ນໆ

(1) 고온, 고압 물이 비산
ຖືກນ້ຳອຸນຫະພູມສູງ ແລະ ຄວາມດັນສູງຖັ່ງໃສ່

(2) 교류아크용접 작업 중 감전
ຖືກໄຟຟ້າຊ໋ອດ ໃນລະຫວ່າງເຊື່ອມໂລຫະ



(3) 지붕수리 중 떨어짐
ຕົກຈາກຫຼັງຄາ ໃນຂະນະທີ່ແປງຫຼັງຄາ



(4) 저장탱크 주유 중 화재
ເກີດໄຟໄໝ້ ໃນຖັງເກັບນ້ຳມັນ



(5) 에어조끼에 화상
ໄຟໄໝ້ ເກີດຈາກເສື້ອແຈັກເກັດແອ



(6) 연료통 절단 중 폭발
ເກີດລະເບີດ ໃນຂະນະທີ່ຕັດຖັງນ້ຳມັນເຊື້ອໄຟ



ຂໍ້ມູນຈາກເວັບໄຊ້ນີ້ http://www.slideshare.net/iglassbox/safety-education-for-migrant-workers-in-koreaeng

# 직업병

ໂລກພະຍາດ ທີ່ເກີດຈາກການເຮັດວຽກ

## 직업병이란? ພະຍາດອາຊີບ ແມ່ນຫຍັງ?

직업성 질환은 근로자의 질병이 '직업에 의하여 발생한 것'을 말합니다. 직업성 질환은 작업에서 노출되는 유해 인자에 의해 발생되는 전형적인 직업병과 비직업적 요인에 의해서도 발생되지만 직업적 요인에 의해 악화되는 작업 관련성 질환으로 구분됩니다.

ໂລກໄພໄຂ້ເຈັບຂອງອາຊີບ ຫຼື ພະຍາດອາຊີບ ແມ່ນໝາຍເຖິງການເຮັດວຽກຂອງຜູ້ໃຊ້ແຮງງານ ແລ້ວພະຍາດໄດ້ເກີດຂຶ້ນມາ ເນື່ອງຈາກເຮັດວຽກດັ່ງກ່າວນັ້ນ. ໂລກຈາກການເຮັດວຽກງານ ຈະເປັນໂລກທີ່ກ່ຽວຂ້ອງກັບວຽກງານທີ່ຕົນເຮັດຢູ່ໂດຍພື້ນຖານ ແລະ ບໍ່ສະເພາະແຕ່ອາຊີບຂອງຕົນເທົ່ານັ້ນ ມັນຍັງມີຫຼາຍປັດໃຈ ທີ່ມັນກ່ຽວຂ້ອງກັບວຽກງານ.



## 소음성 난청 ປະສາດການຟັງເຊື່ອມ

소음에 계속 노출되는 경우 영구적으로 청력이 손실되는 소음성 난청이 발생할 수도 있습니다. 또한 이명, 스트레스 증가, 면역체계 변화 등이 발생하여 작업 능률이 저하되거나 작업 중 부주의에 의한 사고를 유발할 수도 있습니다.

ການທີ່ເຮົາໄດ້ສຳຜັດກັບສຽງດັງຢ່າງຕໍ່ເນື່ອງເປັນປະຈຳ ຈະເຮັດໃຫ້ເຮົາເກີດການສູນເສຍປະສາດສຳຜັດໃນການຟັງ ແລະ ອາດຈະບໍ່ໄດ້ຍິນແບບຖາວອນ. ນອກຈາກນີ້ ອາການຫອື້ງ, ຄວາມຄຽດທີ່ເກີດຂຶ້ນ ບວກກັບສະພາບການປ່ຽນແປງອື່ນໆ ຂອງຮ່າງກາຍແລ້ວ ອາດຈະເຮັດໃຫ້ປະສິດທິພາບໃນການເຮັດວຽກຂອງເຮົາຫຼຸດລົງ ຫຼື ມີຄວາມຜິດພາດຫຼາຍ ຈາກການປະຕິບັດໜ້າທີ່ວຽກງານ.



## 방사선에 의한 건강 장해

ການແຜ່ສະນັດຕະພາບລັງສີ ທີ່ເຮັດໃຫ້ມີຜົນກະທົບຕໍ່ສຸຂະພາບ

방사선에는 발생 에너지가 물체를 이온화시킬 수 있는 전리 방사선과 에너지 수준은 낮으나 지속적이며 반복적인 노출에 의해 건강상 나쁜 영향을 발생할 수 있는 비전리 방사선이 있습니다. 전리 방사선 노출에 의한 장해로는 백혈병, 갑상선암, 유방암, 폐암, 뼈암, 피부암 등이 있습니다.

ການແຜ່ສະນັດຕະພາບລັງສີ ແມ່ນ ສິ່ງທີ່ເກີດຂຶ້ນ ທີ່ການແຕກຕົວຂອງໄອອອນເປັນພະລັງທີ່ສາມາດເຮັດ ໃຫ້ໄອອອນແຜ່ລັງສີ ແລະ ພະລັງງານທີ່ຕ່ຳ ແຕ່ສາມາດເຮັດໃຫ້ເກີດຜົນເສຍຕໍ່ສຸຂະພາບຂອງເຮົາໄດ້ ຖ້າຫາກເຮົາໄດ້ຮັບການສຳຜັດກັບມັນ ໂດຍກົງ ຜົນຮ້າຍທີ່ຕາມມາຈະເຮັດໃຫ້ເຮົາເປັນພະຍາດມະເຮັງ ໃນເມັດເລືອດຂາວ, ມະເຮັງຕ່ອມໄທ້ຮອຍ, ມະເຮັງເຕົ້ານົມ, ມະເຮັງປອດ, ມະເຮັງກະດູກ ແລະ ມະເຮັງຜິວໜັງ.





# 산업 안전 II

## ຄວາມປອດໄພ ໃນອຸດສາຫະກຳ II

**학습 안내**
ຄຳແນະນຳໃນການຮຽນ

- □ ຈຸດປະສົງໃນການຮຽນ — ສ້າງຄວາມຄຸ້ນເຄີຍກັບ ການເຕືອນຄວາມປອດໄພ ໃນອຸດສາຫະກຳການກໍ່ສ້າງ
- □ ຄຳສັບ ແລະ ສຳນວນຄຳເວົ້າ — ການເຕືອນ ຄວາມປອດໄພ ໃນອຸດສາຫະກຳ ການກໍ່ສ້າງ
- □ ຂໍ້ມູນກ່ຽວກັບວັດທະນາທຳ — ການປ້ອງກັນ ພະຍາດອາຊີບ



### 어휘 1 ຄຳສັບ 1

### 건축업 관련 안전 수칙
ການເຕືອນ ຄວາມປອດໄພ ໃນອຸດສາຫະກຳ ການກໍ່ສ້າງ



ການເຕືອນ ຄວາມປອດໄພ ໃນອຸດສາຫະກຳ ການກໍ່ສ້າງນັ້ນ ມີອັນໃດແດ່ຈະໄດ້ນຳສະເໜີຕໍ່ໄປນີ້. ພວກເຮົາ ລອງໄປກວດການຳກັນເບິ່ງວ່າ ມີການເຕືອນຄວາມປອດໄພອັນໃດແດ່ ທີ່ຕ້ອງໄດ້ສັງເກດ ໃນເວລາເຮັດໂຄງແບບກໍ່ສ້າງ, ຖານການກໍ່ສ້າງ, ການສ້າງໂຄງເສີມຄອນກີດ, ວຽກເທຄອນກີດ, ວຽກໂຄງເຫຼັກ, ວຽກກໍ່-ໂບກ ແລະ ວຽກທາສີ.

**거푸집 작업** ເຮັດໂຄງແບບ ກໍ່ສ້າງ

근로자는 안전대를 올바르게 착용하고 있는가?
ກຳມະກອນ ໄດ້ໃສ່ເຊືອກປ້ອງກັນ ຄວາມປອດໄພ ເປັນຢ່າງດີບໍ່?

안전대 부착 설비 설치 상태는 양호한가?
ເຊືອກ ແລະ ອຸປະກອນປ້ອງກັນ ຄວາມປອດໄພ ແມ່ນໄດ້ຕິດຕັ້ງຢ່າງຖືກຕ້ອງບໍ່?

근로자간 의견 교환은 충분히 이루어지고 있는가?
ມີການສື່ສານ ທີ່ຄົບຖ້ວນບໍ່ ລະຫວ່າງ ກຳມະກອນຜູ້ອອກແຮງງານ?

자재 운반(받아치기) 작업시 추락 방지 조치는 적정한가?
ໂຄງສ້າງໄມ້ຢູ່ພາກສ່ວນເທິງ ຂອງໄມ້ຄ້ຳແບບ ຕ້ອງຮັບນ້ຳໜັກວັດສະດຸເກີນບໍ່?

확인조립도에 따라 조립되고 있는가?
ໄດ້ປະຕິບັດຕາມຄຳແນະນຳ ໃນການປະກອບສ້າງແລ້ວບໍ່?

거푸집 동바리에 대한 구조 검토 및 조립도는 작성되었는가?
ໃນເວລາຍົກວັດສະດຸກໍ່ສ້າງຂຶ້ນ ແມ່ນໄດ້ມີມາດຕະການຄວາມປອດໄພ ທີ່ເໝາະສົມບໍ່?

거푸집 동바리 붕괴 위험은 없는가?
ມີອັນຕະລາຍ ຈາກການລົ້ມຂອງໄມ້ຄ້ຳໂຄງແບບກໍ່ສ້າງບໍ່?

상하부동시에 작업이 진행되고 있지는 않은가?
ບໍ່ມີວຽກທີ່ດຳເນີນ ຢູ່ພາກສ່ວນເບື້ອງເທິງ ແລະ ເບື້ອງລຸ່ມໄປພ້ອມກັນບໍ່?

거푸집 동바리 설치·해체 순서는 준수되고 있는가?
ໃນການຕິດຕັ້ງໄມ້ຄ້ຳແບບກໍ່ສ້າງ ແມ່ນໄດ້ປະຕິບັດຕາມຫຼັກການ ການຕິດຕັ້ງ ແລະ ເຄື່ອນຍ້າຍອອກບໍ່?



## 갱폼 작업 ຖານການກໍ່ສ້າງ

양중기의 인양 능력 대비 갱폼의 중량에 대한 안전성은 사전에 검토되어 있는가?
ການກວດກາຄວາມປອດໄພລ່ວງໜ້າ, ປຽບທຽບຄວາມສາມາດ ໃນການຮັບນ້ຳໜັກ ແລະ ນ້ຳໜັກຂອງໂຄງຖານກໍ່ສ້າງວ່າມີຄວາມປອດໄພບໍ?

갱폼에 대한 구조적인 안정성은 확보되어 있는가?
ການຕິດຕັ້ງ ໂຄງສ້າງຂອງຖານກໍ່ສ້າງ ແມ່ນຮັບປະກັນຄວາມປອດໄພແລ້ວບໍ?

강풍 등 외력에 대하여 충분히 안전한가?
ຖານການກໍ່ສ້າງ ມີຄວາມແຂງແຮງພຽງພໍທີ່ຈະຕ້ານກັບແຮງກະທົບທາງນອກ ເປັນຕົ້ນແມ່ນລົມແລ້ວບໍ?

작업 방법 및 작업 순서는 준수하고 있는가?
ການດຳເນີນວຽກ ແມ່ນໄດ້ປະຕິບັດຕາມວິທີການ ແລະ ລຳດັບຂອງວຽກແລ້ວບໍ?

갱폼 내외부 진·출입 통로는 확보되어 있는가?
ທາງເຂົ້າ-ອອກ ຂອງຖານໂຄງກໍ່ສ້າງ ມີຄວາມປອດໄພແລ້ວບໍ?

신호수는 배치되어 있는가?
ມີຄົນໃຫ້ສັນຍານໃນສະຖານທີ່ກໍ່ສ້າງແລ້ວບໍ?

양중기에 고정시킨 상태에서 설치·해체 작업이 이루어지고 있는가?
ຄວາມໜ້າແໜ້ນຂອງໂຄງສ້າງຖານການກໍ່ສ້າງໝັ້ນຄົງແລ້ວບໍ?

갱폼 안전 조치
- 단부 안전난간 설치
- 수직 보호망 설치
- 진·출입 통로 확보
- 갱폼간 연결 통로 및 수직 사다리 설치

ມາດຕະການຄວາມປອດໄພ ຖານການກໍ່ສ້າງ
-ຕິດຕັ້ງຮາວຄວາມປອດໄພ ຕາມທາງຍ່າງ
-ຕິດຕັ້ງ ຕາໜ່າງປ້ອງກັນຕາມແນວຕັ້ງ
-ເຄື່ອງປ້ອງກັນທາງເຂົ້າ-ອອກ
-ຕິດຕັ້ງທາງເຊື່ອມລະຫວ່າງ ຂັ້ນໄດ່ຂຶ້ນ ແລະ ຖານໂຄງກໍ່ສ້າງ.


철근 작업 ວຽກການສ້າງໂຄງເສີມເຫຼັກ
근로자는 개인보호구를 바르게 착용하고 있는가?
ກຳມະກອນ ໄດ້ໃສ່ເຄື່ອງອຸປະກອນປ້ອງກັນຄວາມປອດໄພ ສ່ວນບຸກຄົນ ລະອຽດແລ້ວບໍ?
작업 발판은 안전한 구조로 견고하게 설치되어 있는가?
- 안전 난간 설치
- 작업 발판 설치
- 발끝막이판 설치 철근의 전도 방지 위험은 없는가?
ຖານໂຄງການກໍ່ສ້າງໄດ້ຮັບການຕິດຕັ້ງແໜ້ນໜາ ແລະ ປອດໄພແລ້ວບໍ?
- ຕິດຕັ້ງຮາວຄວາມປອດໄພ ຕາມທາງຍ່າງ
- ຕິດຕັ້ງພື້ນຍ່ຽບ
- ຕິດຕັ້ງເຄື່ອງປ້ອງກັນຕີນ, ເພື່ອບໍ່ໃຫ້ອັນຕະລາຍເກີດຈາກໂຄງເສີມເຫຼັກ?
작업장 주변의 정리정돈 상태는 양호한가?
ສະຖານທີ່ການກໍ່ສ້າງ ແມ່ນໄດ້ຮັບການຈັດແຈງດີແລ້ວບໍ?
철근의 넘어짐 방지 위험은 없는가?
ມີຄວາມສ່ຽງ ທີ່ຈະກໍໃຫ້ເກີດເຫຼັກເສັ້ນລົ້ມທັບບໍ?
철근에 찔릴 위험은 없는가?
ບໍ່ມີຄວາມສ່ຽງໃດ ທີ່ຈະຖືກແທງດ້ວຍເສັ້ນເຫຼັກແລ້ວບໍ?
작업 발판 없이 철근에 매달려 작업을 하고 있지는 않는가?
ໃນເວລາເຮັດວຽກ ມີຄົນທີ່ຕ້ອງຖືເຫຼັກເສັ້ນໄປໂດຍທີ່ບໍ່ມີຖານໂຄງກໍ່ສ້າງບໍ?
철근 조립 작업 장소까지 철근 운반 방법은 안전한가?
ເຫຼັກເສັ້ນນັ້ນ ຖືກຂົນສົ່ງໄປ ສະຖານທີ່ປະກອບໂຄງເຫຼັກຢ່າງປອດໄພບໍ?
철근 가공 작업 중 철근 절단기 또는 절곡기와 관련하여 재해 위험은 없는가?
ມີຄວາມສ່ຽງ ທີ່ຈະເກີດອຸປະຕິເຫດ ເນື່ອງຈາກການຕັດ ຫຼື ການໂຄ້ງເສັ້ນເຫຼັກບໍ?
작업 발판은 밀실하게 설치되어 있는가?
ຖານໂຄງກໍ່ສ້າງທີ່ຕິດຕັ້ງນັ້ນ ບໍ່ມີບ່ອນເປັນຫວ່າງແລ້ວບໍ?

## 콘크리트 ວຽກເທຄອນກີດ



## 철골 작업 ໜ້າວຽກໂຄງສ້າງເຫຼັກ

철골 부재의 인양 와이어 로프 상태는 양호한가?
ເຊືອກເຫຼັກ ແມ່ນຢູ່ສະພາບ ທີ່ນຳໃຊ້ໄດ້ດີບໍ?

중량물의 중량이 인양 장비의 인양 능력 범위 내에 있는가?
ນ້ຳໜັກຂອງເສັ້ນເຫຼັກທີ່ຍົກຂຶ້ນນັ້ນ ແມ່ນເກີນຄວາມສາມາດການບັນຈຸ ຂອງເຄື່ອງຈັກບໍ?
– 안전율 5 이상
- ລະດັບຄວາມປອດໄພ ແມ່ນ 5 ຫຼື ສູງກວ່າ

근로자는 안전대를 착용하고 부착 설비에 부착하고 있는가?
ກຳມະກອນ ໄດ້ນຳໃຊ້ອຸປະກອນປ້ອງກັນຄວາມປອດໄພ ແລະ ຍຶດຕິດກັບອຸປະກອນຄວາມປອດໄພ ນັ້ນບໍ?

근로자의 이동 통로는 확보되어 있는가?
ມີລ່ານຍ່າງ ທີ່ຄວາມປອດໄພ ສຳລັບກຳມະກອນບໍ?

인양된 철골 부재 가조립 후에 인양 로프를 해체하고 있는가?
ໄດ້ມີການເອົາເຊືອກເຫຼັກ ທີ່ໃຊ້ຍົກໂຄງເຫຼັກອອກບໍ ພາຍຫຼັງທີ່ໄດ້ປະກອບໃສ່ຊົ່ວຄາວເພື່ອຍົກໂຄງສ້າງເຫຼັກ?

낙하물 발생 위험은 없는가?
ມີອານສ່ຽງ ທີ່ຈະມີວັດສະດຸຕົກລົງມາບໍ?

근로자의 떨어짐 방지 조치는 적정한가?
ໄດ້ມີມາດຕະການ ທີ່ພຽງພໍໃນການປ້ອງກັນການຕົກລົງມາຂອງກຳມະກອນບໍ?

승강 설비는 설치되어 있는가?
ໄດ້ມີການຕິດຕັ້ງໂຄງສ້າງ ຂັ້ນໄດ ຂຶ້ນ-ລົງບໍ?

작업장 하부에 다른 작업이 진행되고 있지는 않는가?
ໄດ້ມີການດຳເນີນວຽກອື່ນ ຢູ່ຊັ້ນໃຕ້ຂອງສະຖານທີ່ກໍ່ສ້າງໂຄງເຫຼັກບໍ?

철골 작업장 하부에 높이 10m 이내마다 추락 방지망이 설치되어 있는가?
ໄດ້ມີການຕິດຕັ້ງ ຕາໜ່າງຄວາມປອດໄພ ໃນທຸກ 10 ແມັດທີ່ຫ່າງຈາກພື້ນ ໃນສະຖານທີ່ເຮັດໂຄງສ້າງເຫຼັກບໍ?

## 조정 및 미장(견출) 작업 ວຽກກໍ່ ແລະ ໂບກ





도장 작업 ວຽກທາສີ
근로자의 떨어짐 방지 조치는 적정한가?
- 구명줄 설치
- 안전대 착용
ມີມາດຕະການທີ່ພຽງພໍແລ້ວບໍ ໃນການຮອງຮັບການຕົກລົງມາ ຂອງກຳມະກອນ?
-ຕິດຕັ້ງສາຍກູ້ຊີບ
-ໃສ່ອຸປະກອນປ້ອງກັນ ຄວາມປອດໄພ
달기로프가 풀리거나 파손될 위험은 없는가?
ມີອັນຕະລາຍອັນໃດ ທີ່ຈະເກີດຈາກສາຍເຊືອກ ທີ່ຫ້ອຍລົງມາ ເຊັ່ນ: ເຊືອກທີ່ມີການແປຜ ຫຼື ເຊືອກທີ່ບໍ່ໄດ້ມາດຕະຖານບໍ?
신호수 또는 감시원은 배치되어 있는가?
ໄດ້ມີຜູ້ທີ່ໃຫ້ສັນຍານ ຫຼື ຜູ້ຄຸມງານຢູ່ໃນສະຖານທີ່ບໍ?
작업 공구 및 재료에 의한 맞음 위험은 없는가?
ມີອັນຕະລາຍອັນໃດ ທີ່ອາດຈະເກີດຈາກການຕົກລົງຂອງເຄື່ອງມື ຫຼື ວັດຖຸບໍ?
작업 근로자는 안전대를 올바르게 구명줄에 착용하고 있는가?
ກຳມະກອນທີ່ເຮັດວຽກນັ້ນ ແມ່ນໄດ້ຜູກຕິດເຂັ້ມຄັດ ກັບສາຍກູ້ຊີບນັ້ນບໍ?
위험구역내 외부 근로자의 통제는 적절히 이루어지고 있는가?
ກຳມະກອນ ແມ່ນໄດ້ຖືກຄຸ້ມຄອງຈຳກັດຢ່າງເໝາະສົມ ໃນພື້ນທີ່ອັນຕະລາຍບໍ?
도장재료의 비산대비 하부의 안전 조치는 적절한가?
ມີມາດຕະການ ທີ່ພຽງພໍແລ້ວບໍ ໃນການຮອງຮັບການຕົກລົງຂອງສີ?
달기로프의 길이는 지면까지 닿을 만큼 충분한가?
ສາຍເຊືອກທີ່ໃຊ້ແຄວນລົງມານັ້ນ ຍາວຮອດພື້ນດິນບໍ?



## 정보 ຂໍ້ມູນທົ່ວໄປ

# 직업병 예방

ການປ້ອງກັນພະຍາດອາຊີບ



화학물질을 취급하는 경우 불침투성 고무장갑이나 보호의 등 개인용 보호구를 착용하고, 직접 손으로 만지거나 피부에 닿지 않도록 주의합니다.
ໃນກໍລະນີ ທີ່ຕ້ອງໄດ້ເຮັດວຽກກັບສານເຄມີ ຕ້ອງໄດ້ໃສ່ເຄື່ອງປ້ອງກັນ ເຊັ່ນ: ຖົງມືຢາງ ທີ່ນໍ້າບໍ່ເຂົ້າໄດ້ ຫຼື ເສື້ອປ້ອງກັນ. ພ້ອມນັ້ນ ບໍ່ຄວນສໍາຜັດສານເຄມີນັ້ນ ດ້ວຍມືເປົ່າ ຫຼື ໃຫ້ສານເຄມີເຫຼົ່ານັ້ນ ຖືກກັບຜິວໜັງ.

공기중으로 발생하는 화학 물질의 양을 최소화하도록 환기 장치를 설치하고, 가동한 상태에서 작업합니다.
ເພື່ອເປັນການຫຼຸດປະລິມານສານເຄມີ ໃນອາກາດລົງໃຫ້ໜ້ອຍສຸດ ອຸປະກອນການຄວບຄຸມອາກາດ ຄວນໄດ້ຮັບການຕິດຕັ້ງ.

화학물질의 유해, 위험성과 취급상의 주의사항에 대한 교육을 받은 후 작업을 실시합니다.
ພາຍຫຼັງ ທີ່ໄດ້ຮັບການແນະນໍາກ່ຽວກັບ ອັນຕະລາຍ, ຄວາມສ່ຽງ ແລະ ຂໍ້ຄວນລະວັງຂອງສານເຄມີ ໃນເວລາທີ່ຕ້ອງໄດ້ເຮັດວຽກກັບສານເຄມີໃຫ້ສໍາເລັດແລ້ວ ຈຶ່ງຄວນອະນຸຍາດໃຫ້ເລີ່ມເຮັດວຽກ.

취급하는 화학 물질에 적합한 호흡용 보호구를 착용하고 작업합니다.
ໃນເວລາທີ່ຕ້ອງເຮັດວຽກກັບ ສານເຄມີ ຄວນນໍາໃຊ້ເຄື່ອງປ້ອງກັນ ທີ່ຊ່ວຍໃນການຫາຍໃຈ.

화학 물질 취급 작업장 내부에서 음료 또는 음식물을 섭취하거나 흡연을 하여서는 안 됩니다.
ໃນເວລາເຮັດວຽກ ກັບສານເຄມີ ບໍ່ຄວນຈະສູບຢາ, ກິນອາຫານ ຫຼື ດື່ມເຄື່ອງດື່ມ ພາຍໃນສະຖານທີ່ເຮັດວຽກ.

작업장에 배치되기 전과 후에 건강진단을 받습니다.
ກໍາມະກອນ ຕ້ອງໄດ້ຮັບການກວດສຸຂະພາບ ກ່ອນທີ່ຈະຖືກມອບໝາຍວຽກໃຫ້ ແລະ ຕ້ອງໄດ້ຮັບການກວດສຸຂະພາບເປັນປົກກະຕິ ຫຼັງຈາກນັ້ນ.

작업에 의한 질병으로 의심되는 증상이 생긴 경우 즉시 병원에 가거나 인근 이주 노동자 지원센터에 가서 상담합니다.
ເມື່ອໃດທີ່ໄດ້ສັງເກດເຫັນອາການ ທີ່ອາດຈະເກີດຈາກພະຍາດອາຊີບ ຈຶ່ງໄປພົບທ່ານໝໍໂດຍທັນທີ ຫຼື ສາມາດປຶກສາກັບສູນຊ່ວຍເຫຼືອຜູ້ອອກແຮງງານຕ່າງດ້າວ ຢູ່ໃນຂົງເຂດໃກ້ຄຽງນັ້ນ.

## ㄱ





## ㅅ





## ㅇ

## ㅈ





## ㅊ

## 1. '—' 탈락 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ '—'

| | 번역 ແປ | -ㅂ/습니다 | -아/어요 | -았/었어요 | -고 | -(으)니까 |
|---|---|---|---|---|---|---|
| **아프다** | ເຈັບ, ປວຍ, ໄຂ້ | 아픕니다 | 아파요 | 아팠어요 | 아프고 | 아프니까 |
| **예쁘다** | ງາມ, ສວຍງາມ | 예쁩니다 | 예뻐요 | 예뻤어요 | 예쁘고 | 예쁘니까 |
| **바쁘다** | ຄາວຽກ | 바쁩니다 | 바빠요 | 바빴어요 | 바쁘고 | 바쁘니까 |
| **슬프다** | ໂສກເສົ້າ | 슬픕니다 | 슬퍼요 | 슬펐어요 | 슬프고 | 슬프니까 |
| **고프다** | ຫິວເຂົ້າ | 고픕니다 | 고파요 | 고팠어요 | 고프고 | 고프니까 |
| **크다** | ໃຫຍ່ | 큽니다 | 커요 | 컸어요 | 크고 | 크니까 |
| **쓰다** | ຂົມ | 씁니다 | 써요 | 썼어요 | 쓰고 | 쓰니까 |
| **나쁘다** | ບໍ່ດີ, ຊົ່ວ | 나쁩니다 | 나빠요 | 나빴어요 | 나쁘고 | 나쁘니까 |
| **기쁘다** | ມີຄວາມສຸກ | 기쁩니다 | 기뻐요 | 기뻤어요 | 기쁘고 | 기쁘니까 |
| **잠그다** | ອັດ, ລ່ອກ | 잠급니다 | 잠가요 | 잠갔어요 | 잠그고 | 잠그니까 |
| **쓰다** | ຂຽນ/ ນຸ່ງ, ໃສ່ (ໝວກ) / ໃຊ້ | 씁니다 | 써요 | 썼어요 | 쓰고 | 쓰니까 |
| **끄다** | ປິດ | 끕니다 | 꺼요 | 껐어요 | 끄고 | 끄니까 |



## 2. 'ㄹ' 탈락 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ'ㄹ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)세요 |
|---|---|---|---|---|---|---|
| 살다 | ດຳລົງຊີວິດ, ອາໄສ | 삽니다 | 살아요 | 살고 | 사니까 | 사세요 |
| 팔다 | ຂາຍ | 팝니다 | 팔아요 | 팔고 | 파니까 | 파세요 |
| 만들다 | ສ້າງ, ເຮັດ | 만듭니다 | 만들어요 | 만들고 | 만드니까 | 만드세요 |
| 열다 | ເປີດ | 엽니다 | 열어요 | 열고 | 여니까 | 여세요 |
| 놀다 | ຫຼິ້ນ | 놉니다 | 놀아요 | 놀고 | 노니까 | 노세요 |
| 알다 | ຮູ້, ຮັບຮູ້ | 압니다 | 알아요 | 알고 | 아니까 | 아세요 |
| 울다 | ໄຫ້ | 웁니다 | 울어요 | 울고 | 우니까 | 우세요 |
| 걸다 | ແຂວນ | 겁니다 | 걸어요 | 걸고 | 거니까 | 거세요 |
| 졸다 | ເຫງົານອນ | 좁니다 | 졸아요 | 졸고 | 조니까 | 조세요 |
| 쓸다 | ແກວ່ງ | 씁니다 | 쓸어요 | 쓸고 | 쓰니까 | 쓰세요 |
| 풀다 | ປ່ອຍ, ແກ້ອອກ | 풉니다 | 풀어요 | 풀고 | 푸니까 | 푸세요 |
| 널다 | ຕາກເຄື່ອງ | 넙니다 | 널어요 | 널고 | 너니까 | 너세요 |
| 길다 | ຍາວ | 깁니다 | 길어요 | 길고 | 기니까 | |
| 멀다 | ໄກ | 멉니다 | 멀어요 | 멀고 | 머니까 | |
| 달다 | ຫວານ | 답니다 | 달아요 | 달고 | 다니까 | |

## 3. 'ㅂ' 불규칙 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ'ㅂ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)면 | -(으)ㄹ 거예요 |
|---|---|---|---|---|---|---|
| 덥다 | ຮ້ອນ (ອາກາດ) | 덥습니다 | 더워요 | 덥고 | 더우면 | 더울 거예요 |
| 춥다 | ໜາວ | 춥습니다 | 추워요 | 춥고 | 추우면 | 추울 거예요 |
| 쉽다 | ງ່າຍ | 쉽습니다 | 쉬워요 | 쉽고 | 쉬우면 | 쉬울 거예요 |
| 어렵다 | ຍາກ | 어렵습니다 | 어려워요 | 어렵고 | 어려우면 | 어려울 거예요 |
| 맵다 | ເຜັດ | 맵습니다 | 매워요 | 맵고 | 매우면 | 매울 거예요 |
| 싱겁다 | ຈືດ, ບໍ່ມີລົດຊາດ | 싱겁습니다 | 싱거워요 | 싱겁고 | 싱거우면 | 싱거울 거예요 |
| 가볍다 | ເບົາ | 가볍습니다 | 가벼워요 | 가볍고 | 가벼우면 | 가벼울 거예요 |
| 무겁다 | ໜັກ | 무겁습니다 | 무거워요 | 무겁고 | 무거우면 | 무거울 거예요 |
| 뜨겁다 | ຮ້ອນ (ຄວາມຮ້ອນ, ນ້ຳຮ້ອນ) | 뜨겁습니다 | 뜨거워요 | 뜨겁고 | 뜨거우면 | 뜨거울 거예요 |
| 차갑다 | ໜາວ | 차갑습니다 | 차가워요 | 차갑고 | 차가우면 | 차가울 거예요 |
| 더럽다 | ເປື່ອນ, ເປິເປື່ອນ | 더럽습니다 | 더러워요 | 더럽고 | 더러우면 | 더러울 거예요 |
| 어지럽다 | ວິນ, ວິນວຽນ | 어지럽습니다 | 어지러워요 | 어지럽고 | 어지러우면 | 어지러울 거예요 |
| 시끄럽다 | ນັ່ນ, ເນື່ອງນັ່ນ | 시끄럽습니다 | 시끄러워요 | 시끄럽고 | 시끄러우면 | 시끄러울 거예요 |
| 외롭다 | ໂດດດ່ຽວ | 외롭습니다 | 외로워요 | 외롭고 | 외로우면 | 외로울 거예요 |
| 고맙다 | ຂອບໃຈ | 고맙습니다 | 고마워요 | 고맙고 | 고마우면 | 고마울 거예요 |
| 가깝다 | ໃກ້ | 가깝습니다 | 가까워요 | 가깝고 | 가까우면 | 가까울 거예요 |
| 즐겁다 | ມີຄວາມສຸກ, ມ່ວນ | 즐겁습니다 | 즐거워요 | 즐겁고 | 즐거우면 | 즐거울 거예요 |
| 무섭다 | ຕາຢ້ານ | 무섭습니다 | 무서워요 | 무섭고 | 무서우면 | 무서울 거예요 |
| 아름답다 | ງາມ | 아름답습니다 | 아름다워요 | 아름답고 | 아름다우면 | 아름다울 거예요 |
| 그립다 | ຄິດຮອດ | 그립습니다 | 그리워요 | 그립고 | 그리우면 | 그리울 거예요 |
| 굽다 | ປີ້ງ | 굽습니다 | 구워요 | 굽고 | 구우면 | 구울 거예요 |
| 줍다 | ເກັບ, ເດັດ | 줍습니다 | 주워요 | 줍고 | 주우면 | 주울 거예요 |
| 돕다 | ຊ່ວຍເຫຼືອ | 돕습니다 | 도와요 | 돕고 | 도우면 | 도울 거예요 |
| 입다 | ນຸ່ງ, ໃສ່ | 입습니다 | 입어요 | 입고 | 입으면 | 입을 거예요 |
| 좁다 | ແຄບ | 좁습니다 | 좁아요 | 좁고 | 좁으면 | 좁을 거예요 |



## 4. 'ㄷ' 불규칙 ຄຳສັບອະປົກກະຕິ ທີ່ລົງທ້າຍດ້ວຍ 'ㄷ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **걷다** | ຍ່າງ | 걷습니다 | 걸어요 | 걷고 | 걸으니까 | 걸을 거예요 |
| **듣다** | ຟັງ | 듣습니다 | 들어요 | 듣고 | 들으니까 | 들을 거예요 |
| **묻다** | ຖາມ | 묻습니다 | 물어요 | 묻고 | 물으니까 | 물을 거예요 |
| **싣다** | ບັນຈຸ | 싣습니다 | 실어요 | 싣고 | 실으니까 | 실을 거예요 |
| **깨닫다** | ຮັບຮູ້ | 깨닫습니다 | 깨달아요 | 깨닫고 | 깨달으니까 | 깨달을 거예요 |
| **닫다** | ປິດ | 닫습니다 | 닫아요 | 닫고 | 닫으니까 | 닫을 거예요 |
| **받다** | ເອົາ, ຈັບເອົາ | 받습니다 | 받아요 | 받고 | 받으니까 | 받을 거예요 |
| **믿다** | ເຊື່ອ | 믿습니다 | 믿어요 | 믿고 | 믿으니까 | 믿을 거예요 |
| **묻다** | ຝັງ | 묻습니다 | 묻어요 | 묻고 | 묻으니까 | 묻을 거예요 |

## 5. 'ㄹ' 불규칙 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ 'ㄹ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **빠르다** | ໄວ | 빠릅니다 | 빨라요 | 빠르고 | 빠르니까 | 빠를 거예요 |
| **누르다** | ກົດ | 누릅니다 | 눌러요 | 누르고 | 누르니까 | 누를 거예요 |
| **부르다** | ເອີ້ນ, ຮຽກ | 부릅니다 | 불러요 | 부르고 | 부르니까 | 부를 거예요 |
| **오르다** | ຂຶ້ນ | 오릅니다 | 올라요 | 오르고 | 오르니까 | 오를 거예요 |
| **자르다** | ຕັດ | 자릅니다 | 잘라요 | 자르고 | 자르니까 | 자를 거예요 |
| **서투르다** | ຫຍຸ້ງ, ບ້າ | 서투릅니다 | 서툴러요 | 서투르고 | 서투르니까 | 서투를 거예요 |
| **다르다** | ແຕກຕ່າງ | 다릅니다 | 달라요 | 다르고 | 다르니까 | 다를 거예요 |
| **마르다** | ແຫ້ງ, ຫິວນ້ຳ, ຫຼຸດນ້ຳໜັກ | 마릅니다 | 말라요 | 마르고 | 마르니까 | 마를 거예요 |
| **들르다** | ແວພັກ, ແວ | 들릅니다 | 들러요 | 들르고 | 들르니까 | 들를 거예요 |
| **모르다** | ບໍ່ຮູ້ | 모릅니다 | 몰라요 | 모르고 | 모르니까 | 모를 거예요 |
| **고르다** | ເລືອກ | 고릅니다 | 골라요 | 고르고 | 고르니까 | 고를 거예요 |
| **나르다** | ຫິ້ວ | 나릅니다 | 날라요 | 나르고 | 나르니까 | 나를 거예요 |



## 6. 'ㅅ' 불규칙 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ 'ㅅ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **낫다** | ຟື້ນຟູ | 낫습니다 | 나아요 | 낫고 | 나으니까 | 나을 거예요 |
| **짓다** | ສ້າງ, ກໍ່ສ້າງ | 짓습니다 | 지어요 | 짓고 | 지으니까 | 지을 거예요 |
| **붓다** | ກີ່ນ | 붓습니다 | 부어요 | 붓고 | 부으니까 | 부을 거예요 |
| **잇다** | ເຊື່ອມຕໍ່, ຕໍ່ | 잇습니다 | 이어요 | 잇고 | 이으니까 | 이을 거예요 |
| **씻다** | ລ້າງ | 씻습니다 | 씻어요 | 씻고 | 씻으니까 | 씻을 거예요 |
| **벗다** | ແກ້ອອກ | 벗습니다 | 벗어요 | 벗고 | 벗으니까 | 벗을 거예요 |
| **빗다** | ຫວີ | 빗습니다 | 빗어요 | 빗고 | 빗으니까 | 빗을 거예요 |

## 7. 'ㅎ' 불규칙 'ㅎ' ຄຳກຳມະ ອະປົກກະຕິ

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **파랗다** | ສີຟ້າ | 파랗습니다 | 파래요 | 파랗고 | 파라니까 | 파랄 거예요 |
| **하얗다** | ສີຂາວ | 하얗습니다 | 하얘요 | 하얗고 | 하야니까 | 하얄 거예요 |
| **빨갛다** | ສີແດງ | 빨갛습니다 | 빨개요 | 빨갛고 | 빨가니까 | 빨갈 거예요 |
| **노랗다** | ສີແດງ | 노랗습니다 | 노래요 | 노랗고 | 노라니까 | 노랄 거예요 |
| **까맣다** | ສີດຳ | 까맣습니다 | 까매요 | 까맣고 | 까마니까 | 까말 거예요 |
| **그렇다** | ຄືແນວນັ້ນ | 그렇습니다 | 그래요 | 그렇고 | 그러니까 | 그럴 거예요 |
| **어떻다** | ແນວໃດ | 어떻습니까? | 어때요? | 어떻고 | | |
| **좋다** | ດີ | 좋습니다 | 좋아요 | 좋고 | 좋으니까 | 좋을 거예요 |
| **놓다** | ໃສ່, ເອົາໃສ່ | 놓습니다 | 놓아요 | 놓고 | 놓으니까 | 놓을 거예요 |

**집필** ຂຽນໂດຍ

| | |
|---|---|
| 김선정 KIM Seon Jung | 계명대학교 Keimyung University |
| 김성수 KIM Sung Su | 계명대학교 Keimyung University |
| 강진숙 KANG Chin Suk | 계명대학교 Keimyung University |

**번역** ແປໂດຍ

| | | |
|---|---|---|
| ໂພທອງ ໄຊທິບວົງສາ | Phothong SAITHIBVONGSA | NAPPA, Laos |
| ເພັດນາລອນ ອິນທະວົງ | Phetnalone INTHAVONG | National University of Laos |
| ສົມສະນິດ ສຸວັດມຸງຄູນ | Somsanith SUVATMOUNGKHOUN | Souphanouvong University |
| ເມັດຄຳ ອັກຄະລາດ | Metkham AKHALATH | Pusan National University |
| ຈັນສະໝອນ ຈັນທະວົງ | Chansamone CHANTHAVONG | National University of Laos |

**감수** ກວດແກ້ໂດຍ

| | | |
|---|---|---|
| ໄຊຍະສານ ສຸຄັນທະຄະຕີ | Sayasane SOUKHANTHAKHATY | National University of Laos |
| ໄຂ່ຄຳ ສີສົມພູ | Khaikham SISOMPHOU | National University of Laos |

**라오어 녹음** ອັດສຽງພາສາລາວໂດຍ

| | | |
|---|---|---|
| ເພັດນາລອນ ອິນທະວົງ | Phetnalone INTHAVONG | National University of Laos |

**보조 집필** ຊ່ວຍໃນການຂຽນໂດຍ

| | |
|---|---|
| 안계은 AHN Kye Eun | 계명대학교 Keimyung University |


ປື້ມຕຳລາຮຽນດ້ວຍຕົນເອງ

ສຳລັບຜູ້ທີ່ໃຊ້ພາສາລາວ

라오스인을 위한




ພາສາເກົາຫຼີ 2

| | |
|---|---|
| ຈັດພິມໃນວັນທີ | 08 ພຶດສະພາ 2019 |
| ສະຫງວນລິຂະສິດໂດຍ | HRD Korea |
| ຈັດພິມໂດຍ | HRD Korea |
| ທີ່ຢູ່ | 345 Jongga-ro, Jung-gu, 44538 Ulsan, Republic of Korea |
| ກວດແກ້ ແລະ ອອກແບບໂດຍ | Design maru |

